# ພຣະໄຕຣປິດົກພາສາລາວ

## ເຫຼັ້ມທີ ໘

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໑

## ທີຄະນິກາຍສີລະຂັນທະສູດ



ສະບັບຄົ້ນຄ້ວວັດທາດຫຼວງເໜືອ
ພຸດທະສັກກະຣາດ ໒໕໖໕

# ຄຳປາລົບ

ສືບເນື່ອງ ອາດຕະມາໄດ້ມີໂອກາດມາຊ່ອຍພຣະອາຈານອົງໜຶ່ງເຮັດພຣະໄຕປິດົກສະບັບພາສາບາລີລາວ ອອກມາເປັນເຫຼັ້ມ ຢູ່ທີ່ຫໍທຳມະສະພາ ວັດທາດຫຼວງເໜືອ ໃນປີ ພ.ສ ໒໕໕໕-໒໕໕໗ ເປັນຈຳນວນ ໓໕ ຊຸດ ໑,໕໗໕ ຫົວ ໂດຍມີຍາທ່ານໃຫຍ່ ມະຫາເວດ ມະເສໄນ ເປັນປະທ່ານເກັບກຳຄ່າໃຊ້ຈ່າຍ ຈົນສຳເລັດລົງດ້ວຍດີ ໂດຍມີແຜນການຈັກສືບຕໍ່ແປພຣະໄຕຣປິດົກສະບັບພາສາໄທ ມ.ຈ.ລ. ມາເປັນພາສາລາວ ອາດຕະມາຄຶດເຫັນວ່າເປັນມະຫາບຸນກຸສົນອັນຍິ່ງໃຫຍ່ແກ່ຕົນທີ່ຈະໄດ້ອ່ານ ແລະແປພຣະໄຕຣປິດົກອອກມາເປັນພາສາລາວທັງໝົດ ອັນເປັນໜັງສືທີ່ຮິບໂຮມຄວາມຮູ້ ຄຳສັ່ງສອນຂອງພຣະພຸດທະເຈົ້າທີ່ອາດຕະມາເຄົາລົບ ແລະສັດທາເໜືອສິ່ງອື່ນໃດ ຈຶ່ງໄດ້ຢູ່ສືບຕໍ່ແປໂດຍລຳພັງພຽງອົງດຽວຢູ່ຫໍທຳມະສະພາບ່ອນເກົ່າ ໂດຍມີຄວາມຮູ້ບໍ່ຈົບ ມ ໔ ຄຶດຢ້ານເຮັດຜິດຫຼາຍກວ່າຖືກຢູ່ ແຕ່ອາໃສສັດທາທີ່ມີຢູ່ໃນໂຕ ຈຶ່ງສູ້ຊົນຫາຄວາມຮູ້ເອົາເອງຜ່ານໄປ ໓ ປີ ກໍໄດ້ແປພຣະວິໄນປິດົກສຳເລັດໄດ້ ໗ ເຫຼັ້ມ

ແຕ່ຕໍ່ມາໄດ້ເກີດປັນຫາຂຶ້ນໃນການແປພຣະໄຕຣປິດົກສະບັບ ມ.ຈ.ລ ຂອງຣາດສະອານາຈັກໄທມາເປັນພາສາລາວ ໃນຄັ້ງນີ້ ກຽວກັບໂປຣແກຣມທີ່ໃຊ້ແປຢູ່ບໍ່ສາມາດແປງເອກກະສານຂອງໂປແກຣມເກົ່າໃຫ້ມາເປັນໂປຣແກຣມໃໝ່ໄດ້ ອາດຕະມາຈຶ່ງຕັດໃຈຖິ້ມວຽກທີ່ໄດ້ແປມາ ໗ ເຫຼັ້ມນັ້ນໄປແລ້ວນັບໜຶ່ງໃໝ່ຈົນຜ່ານມາອີກ ໕ ປີ ກໍໄດ້ສຳເລັດລົງໂດຍມີພຣະອາຈານອົງນັ້ນເປັນຜູ້ແກ້ສຳນວນໃຫ້ອີກປີໜຶ່ງ

ຂໍໃຫ້ບຸກຄົນທີ່ຈະນຳເອົາໄປໃຊ້ຮັບຮູ້ໄວ້ວ່າ ເປັນການແປໂດຍສ່ວນບຸກຄົນມີພຽງແຕ່ຄູບາ ໔ ອົງເທົ່ານັ້ນ ໂດຍມີເຈດຕະນາ ກາຍ ຄັດລອກ ໂຄງສ້າງເກົ່າມາແປທັງໝົດ ທັງຫົວຂໍ້ ແລະວັກຄືກັນທັງໝົດ ໔໕ ຫົວ ຕ່າງແຕ່ສາຣະບານ ແລະການຈັດໜ້າ ແລະບໍ່ມີຄຳນຳ

ສະນັ້ນ ອາດຕະມາເອງຜູ້ແປຮູ້ດີວ່າຍັງມີຂໍ້ຜິດພາດຢູ່ຫຼາຍ ບໍ່ວ່າຄຳຜິດ ສຳນວນທີ່ໃຊ້ອ່ອນໄປ ຍ້ອນອາດຕະມາເອງການສຶກສາບໍ່ສູງ ຈຶ່ງຂໍອະໄພໄວ້ໃນທີ່ນີ້ ແລະຂໍແນະນຳໃຫ້ລະມັດລະວັງໃນການນຳໄປໃຊ້ອ້າງອີງ ຫຼື ເຮັດອອກມາເປັນເຫຼັ້ມ ກະລຸນາກວດແກ້ໃໝ່ກ່ອນທັງໝົດ

ສຸດທ້າຍນີ້ ຂໍຂອບໃຈ ລະລຶກຮູ້ບຸນຄຸນຂອງຄະນະຜູ້ແປຕົ້ນສະບັບ ມ.ຈ.ລ ພາສາໄທຍາທ່ານໃຫຍ່ ຖາວອນ ຕາພອນປະເສີດ ເຈົ້າອາທິການວັດທາດຫຼວງເໜືອ ທີ່ອຳນວຍຄວາມສະດວກໃນການເຮັດວຽກ ຄູບາ ບູນ ອົງແນະນຳໃຫ້ໃຊ້ໂປຣແກຣມໃໝ່ເຮັດໃຫ້ແປໄດ້ໄວຂຶ້ນຫຼາຍ ແລະ ພຣະອາຈານຜູ້ຊີ້ນຳເຂົ້າມາເຮັດວຽກແປພຣະໄຕຣປິດົກໃນຄັ້ງນີ້ອີກອົງໜຶ່ງ ເພິ່ນບໍ່ປະສົງອອກນາມຄືອາດຕະມາ ຂໍພຣະສັດທຳຂອງອົງສົມເດັດ ພຣະສຳມາສຳພຸດທະເຈົ້າຈົງເກື້ອກູນແດ່ ເພື່ອນ ເກີດ ແກ່ ເຈັບ ຕາຍ ທຸກຄົນ ທຸກຊັ້ນ ທຸກວັນນະ ທຸກພົບ ທຸກພູມ ເທີ້ນ.

# ສາຣະບານ

# ພຣະໄຕຣປິດົກ

## ເຫຼັ້ມທີ ໙

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໑

## ທີຄະນິກາຍສີລະຂັນທະສູດ

**ຂໍນອມນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ**

## ໑. ພົມຊາລະສູດ

### ວ່າດ້ວຍດາງແຫແຫ່ງພຣະສຳພັນຍຸດຕະຍານອັນປະເສີດ

### ເລື້ອງສຸບປິຍະປະຣິພາຊົກກັບພົມມະທັດມານົບ

[໑] ຂ້າພະເຈົ້າໄດ້ສະດັບມາແບບນີ້ ວ່າ

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າສະເດັດທາງໄກ ລະຫວ່າງເມືອງຣາດຊະຄືກັບເມືອງນາລັນທາ ພ້ອມດ້ວຍພິກຂຸໝູ່ໃຫຍ່ມີປະມານ ໕໐໐ ຮູບ ແມ່ນສຸບປິຍະປະຣິພາຊົກກໍໄດ້ເດີນທາງໄກ ລະຫວ່າງເມືອງຣາດຊະຄືກັບເມືອງນາລັນທາ ພ້ອມດ້ວຍພົມມະທັດມານົບຜູ້ເປັນລູກສິດເຊັ່ນດຽວກັນຮູ້ວ່າ ໃນການເດີນທາງຄັ້ງນັ້ນ ສຸບປິຍະປະຣິພາຊົກກ່າວຕິຕຽນພຣະພຸດ ພຣະທຳ ພຣະສົງ ໂດຍປະການຕ່າງ ໆ ສ່ວນພົມມະທັດມານົບຜູ້ເປັນລູກສິດຂອງເຂົາກັບກ່າວຍ້ອງຍໍພຣະພຸດ ພຣະທຳ ພຣະສົງ ໂດຍປະການຕ່າງ ໆ ອາຈານກັບລູກສິດມີຄຳເວົ້າຂັດແຍ້ງກັນໃນລັກສະນະກົງກັນຂ້າມແບບນີ້ ໃນຂະນະຍ່າງຕາມຫຼັງພຣະຜູ້ມີພຣະພາກເຈົ້າ ແລະ ພິກຂຸສົງໄປ

[໔] ຕໍ່ມາ ພຣະຜູ້ມີພຣະພາກເຈົ້າສະເດັດເຂົ້າປະທັບພັກແຮມໃນພຣະຕຳໜັກຫຼວງໃນພຣະຣາດຊະອຸທະຍານອຳພະລັດຖິກາພ້ອມກັບພິກຂຸສົງ ແມ່ນສຸບປິຍະປະຣິພາຊົກກໍເຂົ້າພັກແຮມໃນພຣະຕຳໜັກຫຼວງໃນພຣະຣາດຊະອຸທະຍານກັບພົມມະທັດມານົບເຊັ່ນດຽວກັນ ໃນບ່ອນນັ້ນເອງ ສຸບປິຍະປະຣິພາຊົກກໍກ່າວຕິຕຽນພຣະພຸດ ພຣະທຳ ພຣະສົງ ໂດຍປະການຕ່າງ ໆ

ສ່ວນພົມມະທັດມານົບຜູ້ເປັນລູກສິດຂອງເຂົາ ກັບກ່າວຍ້ອງຍໍພຣະພຸດ ພຣະທຳ ພຣະສົງ ໂດຍປະການຕ່າງ ໆ ອາຈານກັບລູກສິດມີຄຳເວົ້າອັນຂັດຄ້ານໃນລັກສະນະກົງກັນຂ້າມແນວນີ້ຢູ່

[໓] ເມື່ອເວລາໃກ້ຮຸ່ງແຈ້ງພິກຂຸຫຼາຍອົງລຸກຂຶ້ນນັ່ງສົນທະນາກັນໃນສາລານັ່ງຫຼິ້ນວ່າ "ທ່ານຜູ້ມີອາຍຸ ໜ້າອັດສະຈັນແທ້ ບໍ່ເຄີຍປາກົດ ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ຊົງເຫັນເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຊົງຮູ້ວ່າ ສັດມີອັດທະຍາໄສຕ່າງກັນດັ່ງທີ່ສຸບປິຍະປະຣິພາຊົກຜູ້ນີ້ກ່າວຕິຕຽນ ພຣະພຸດ ພຣະທຳ ພຣະສົງ ໂດຍປະການຕ່າງ ໆ ສ່ວນພົມມະທັດມານົບ ຜູ້ເປັນລູກສິດຂອງເຂົາກັບກ່າວຍ້ອງຍໍພຣະພຸດ ພຣະທຳ ພຣະສົງ ໂດຍປະການຕ່າງ ໆ ອາຈານກັບລູກສິດມີຄຳເວົ້າຂັດແຍ້ງກັນ ໃນລັກສະນະກົງກັນຂ້າມໃນຂະນະທີ່ຍ່າງຕາມຫຼັງພຣະຜູ້ມີພຣະພາກເຈົ້າ ແລະ ພິກຂຸສົງໄປ

[໔] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຮູ້ຄຳທີ່ໄດ້ສົນທະນາກັນຂອງພິກຂຸເຫຼົ່ານັ້ນ ຈຶ່ງສະເດັດໄປທີ່ສາລານັ່ງຫຼິ້ນ ປະທັບນັ່ງເທິງພຣະພຸດອາດທີ່ປູຖວາຍໄວ້ໃຫ້ໄວ້ແລ້ວ ຊົງຕັດຖາມວ່າ ພິກຂຸທັງຫຼາຍ ເວລານີ້ພວກທ່ານນັ່ງສົນທະນາກັນດ້ວຍເລື້ອງຫຍັງ ເວົ້າເລື້ອງຫຍັງຄ້າງໄວ້ບໍ່?

ເມື່ອພຣະຜູ້ມີພຣະພາກເຈົ້າ ຊົງຕັດແນວນີ້ແລ້ວ ພິກຂຸເຫຼົ່ານັ້ນ ຈຶ່ງຂາບທູນວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ເມື່ອພວກຂ້ານ້ອຍຕື່ນລຸກຂຶ້ນມາໃນເວລາໃກ້ຮຸ່ງແຈ້ງ ໄດ້ສົນທະນາກັນໃນສາລານັ່ງຫຼິ້ນ ວ່າ "ທ່ານຜູ້ມີອາຍຸ ໜ້າອັດສະຈັນຈິງແທ້ ບໍ່ເຄີຍປາກົດມີມາກ່ອນ ພຣະຜູ້ມີພຣະພາກເຈົ້າ ຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຊົງຮູ້ວ່າ ສັດມີອັດທະຍາໄສຕ່າງກັນ ດັ່ງທີ່ສຸບປິຍະປະຣິພາຊົກຜູ້ນີ້ກ່າວຕິຕຽນພຣະພຸດ ພຣະທຳ ພຣະສົງ ໂດຍປະການຕ່າງ ໆ ສ່ວນພົມມະທັດມານົບ ຜູ້ເປັນລູກສິດຂອງເຂົາກັບກ່າວຍ້ອງຍໍພຣະພຸດ ພຣະທຳ ພຣະສົງ ໂດຍປະການຕ່າງ ໆ ອາຈານກັບລູກສິດມີຄຳເວົ້າຂັດແຍ້ງໃນລັກສະນະກົງກັນຂ້າມ ໃນຂະນະທີ່ຍ່າງຕາມຫຼັງພຣະຜູ້ມີພຣະພາກເຈົ້າ ແລະ ພິກຂຸສົງໄປ" ເລື້ອງນີ້ແລ ທີ່ພວກຂ້ານ້ອຍກຳລັງສົນທະນາກັນຄ້າງໄວ້ ພໍດີພຣະຜູ້ມີພຣະພາກເຈົ້າສະເດັດມາຮອດ ຂ້ານ້ອຍ

## ວິທີປະຕິບັດເມື່ອມີຄົນຕິຕຽນ ຫຼື ຍ້ອງຍໍພຣະຣັດຕະນະໄຕຣ

[໕] ພຣະຜູ້ມີພຣະພາກເຈົ້າ ຊົງຕັດວ່າ "ພິກຂຸທັງຫຼາຍ ແມ່ນຄົນພວກອື່ນຈະກ່າວຕິຕຽນເຮົາ ກ່າວຕິຕຽນພຣະທຳ ຫຼື ກ່າວຕິຕຽນພຣະສົງກໍຕາມ ພວກທ່ານບໍ່ຄວນຜູກອາຄາດ ແຄ້ນເຄືອງ ຂຸ່ນໃຈໃນຄົນພວກນັ້ນ ຖ້າພວກທ່ານຄຽດ ຫຼື ບໍ່ພໍໃຈພວກເຂົາ ພວກທ່ານກໍຈະປະສົບອັນຕະລາຍເພາະຄວາມຄຽດນັ້ນໄດ້ ອັນໜຶ່ງ ພວກທ່ານຮູ້ແລ້ວ ຫຼື ວ່າທີ່ພວກເຂົາເວົ້ານັ້ນຖືກ ຫຼື ຜິດ?

ພວກພິກຂຸຂາບທູນຕອບວ່າ "ບໍ່ທັນຮູ້ ຂ້ານ້ອຍ?"

ພຣະຜູ້ມີພຣະພາກເຈົ້າ ຊົງຕັດວ່າ "ຄຳຕິຕຽນນັ້ນ ຖ້າເປັນເລື້ອງບໍ່ຈິງພວກທ່ານຄວນຊີ້ແຈງອະທິບາຍໃຫ້ເຫັນຊັດແຈ້ງວ່າ "ເລື້ອງນີ້ ເປັນເລື້ອງບໍ່ຈິງ ບໍ່ສຳຜັດຖືກ ບໍ່ມີ ແລະ ບໍ່ປາກົດມີໃນພວກເຮົາ"

[໖] ພິກຂຸທັງຫຼາຍ ແມ່ນວ່າຄົນພວກອື່ນ ຈະກ່າວຍ້ອງຍໍເຮົາ ກ່າວຍ້ອງຍໍພຣະທຳ ຫຼືກ່າວຍ້ອງຍໍພຣະສົງກໍຕາມ ພວກທ່ານກໍບໍ່ຄວນທຳຄວາມເບີກບານ ດີໃຈ ຫຼື ປະເອີບໃຈຕໍ່ຄົນພວກນັ້ນ ຖ້າພວກທ່ານທຳຄວາມເບີກບານ ດີໃຈ ຫຼື ປະເອີບໃຈຕໍ່ພວກເຂົາ ພວກທ່ານກໍຈະປະສົບອັນຕະລາຍ ເພາະຄວາມເບີກບານດີໃຈນັ້ນໄດ້ຄືກັນ ຄຳຍ້ອງຍໍນັ້ນ ຖ້າເປັນເລື້ອງຈິງພວກທ່ານຄວນຢືນຢັນເປັນພະຍານໃຫ້ເຂົາຮູ້ຊັດແຈ້ງລົງໄປວ່າ "ເລື້ອງນີ້ເປັນເລື້ອງແທ້ຈິງສຳຜັດຖືກມີຢູ່ ແລະປາກົດມີຢູ່ໃນພວກເຮົາ"

## ຈູນລະສີນ

[໗] ພິກຂຸທັງຫຼາຍ ປຸຖຸຊົນ ເມື່ອຈະກ່າວຍ້ອງຍໍຕະຖາຄົດກໍກ່າວດ້ວຍເລື້ອງເລັກໜ້ອຍຕ່ຳຕ້ອຍພຽງເລື້ອງລະດັບສີນເທົ່ານັ້ນມີ ຄື

[໘] ປຸຖຸຊົນເມື່ອກ່າວຍ້ອງຍໍຕະຖາຄົດກໍຈະມັກກ່າວວ່າ

໑. ພຣະສະມະນະໂຄດົມ ຊົງລະ ຊົງເວັ້ນຂາດຈາກການຂ້າສັດ ວາງທັນດາວຸດ ແລະສາດ ຕາວຸດ ມີຄວາມລະອາຍ ມີຄວາມອີດູມຸ້ງຫວັງປະໂຫຍດເກື້ອກູນຕໍ່ສັບພະສັດຢູ່

໒. ພຣະສະມະນະໂຄດົມ ຊົງລະ ຊົງເວັ້ນຂາດຈາກການຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ຮັບເອົາແຕ່ຂອງທີ່ເຂົາໃຫ້ ມຸ້ງຫວັງແຕ່ຂອງທີ່ເຂົາໃຫ້ ບໍ່ຊົງເປັນຂະໂມຍ ເປັນຄົນສະອາດຢູ່

໓. ພຣະສະມະນະໂຄດົມ ຊົງລະພຶດຕິກຳອັນເປັນຂ້າເສິກຕໍ່ພົມມະຈັນ ປະພຶດພົມມະຈັນເວັ້ນຫ່າງໄກຈາກເມຖຸນທຳອັນເປັນເລື້ອງຂອງຊາວບ້ານ

[໙] ໔. ພຣະສະມະນະໂຄດົມ ຊົງລະ ຊົງເວັ້ນຂາດຈາກການເວົ້າຕົວະ ຄື ຊົງຕັດແຕ່ຄຳສັດຈິງ ດຳຣົງໄວ້ເຊິ່ງຄວາມສັດ ຄຳເວົ້າມີຫຼັກຖານ ເຊື່ອຖືໄດ້ ບໍ່ເວົ້າລວງຊາວໂລກ

໕. ພຣະສະມະນະໂຄດົມ ຊົງລະ ຊົງເວັ້ນຂາດຈາກຄຳສັບສໍ່ ຄື ຟັງຄວາມຈາກຝ່າຍນີ້ແລ້ວບໍ່ນຳໄປບອກຝ່າຍນັ້ນ ເພື່ອທຳລາຍຝ່າຍນີ້ ຫຼື ຟັງຄວາມຝ່າຍນັ້ນແລ້ວບໍ່ນຳມາບອກຝ່າຍນີ້ເພື່ອທຳລາຍຝ່າຍນັ້ນ ກ່ຽວກ່ອມຄົນທີ່ແຕກແຍກກັນ ສົ່ງເສີມຄົນທີ່ປອງດອງກັນ ຊື່ນຊົມຍິນດີເພີດເພີນຕໍ່ຜູ້ທີ່ສາມັກຄີກັນ ຕັດແຕ່ຄຳເວົ້າທີ່ສ້າງສັນຄວາມສາມັກຄີ

໖. ພຣະສະມະນະໂຄດົມ ຊົງລະ ຊົງເວັ້ນຂາດຈາກຄຳຫຍາບ ຄື ຊົງຕັດແຕ່ຄຳບໍ່ມີໂທດມ່ວນຫູ ເປັນຕາຮັກ ຈັບໃຈ ເປັນຄຳເວົ້າຂອງຊາວເມືອງອັນຄົນສ່ວນຫຼາຍນິຍົມໃຊ້

໗. ພຣະສະມະນະໂຄດົມ ຊົງລະ ຊົງເວັ້ນຂາດຈາກຄຳໂລເລ ຄື ຕັດຖືກເວລາຕັດຄຳຈິງ ຕັດອີງປະໂຫຍດ ຕັດອີງທຳ ຕັດອີງວິໄນ ຕັດຄຳທີ່ມີຫຼັກຖານມີທີ່ອ້າງອີງ ມີທີ່ກຳນົດ ປະກອບໄປດ້ວຍປະໂຫຍດເໝາະສົມດ້ວຍເວລາ

[໑໐] ໘. ພຣະສະມະນະໂຄດົມຊົງເວັ້ນຂາດຈາກການແຍກພືດຊະຄາມ ແລະ ພູຕະຄາມ

໙. ພຣະສະມະນະໂຄດົມສະເຫວີຍຄາບດຽວ ບໍ່ສະເຫວີຍຕອນກາງຄືນຊົງເວັ້ນຂາດຈາກການສະເຫວີຍໃນເວລາວິການ

໑໐. ພຣະສະມະນະໂຄດົມຊົງເວັ້ນຂາດຈາກການຟ້ອນລຳຂັບຮ້ອງເສບດົນຕີ ແລະເບິ່ງການລະຫຼິ້ນທີ່ເປັນຂ້າເສີກແກ່ກຸສົນ

໑໑. ພຣະສະມະນະໂຄດົມ ຊົງເວັ້ນຂາດຈາກການທັດຊົງປະດັບຕົກແຕ່ງກາຍດ້ວຍພວງດອກໄມ້ຂອງຫອມ ແລະ ເຄື່ອງທາຜິວອັນເປັນລັກສະນະແຫ່ງການແຕ່ງໂຕ

໑໒. ພຣະສະມະນະໂຄດົມ ຊົງເວັ້ນຂາດຈາກບ່ອນນອນສູງໃຫຍ່

໑໓. ພຣະສະມະນະໂຄດົມ ຊົງເວັ້ນຂາດຈາກການຮັບຄຳ ແລະ ເງິນ

໑໔. ພຣະສະມະນະໂຄດົມ ຊົງເວັ້ນຂາດຈາກການຮັບທັນຍາຫານດິບ

໑໕. ພຣະສະມະນະໂຄດົມ ຊົງເວັ້ນຂາດຈາກການຮັບຊີ້ນດິບ

໑໖. ພຣະສະມະນະໂຄດົມ ຊົງເວັ້ນຂາດຈາກການຮັບສະຕີ ແລະ ກຸມາຣີ

໑໗. ພຣະສະມະນະໂຄດົມ ຊົງເວັ້ນຂາດຈາກການຮັບຂ້າທາດຍິງ ແລະ ຂ້າທາດຊາຍ

໑໘. ພຣະສະມະນະໂຄດົມ ຊົງເວັ້ນຂາດຈາກການຮັບແບ້ ແລະ ແກະ

໑໙. ພຣະສະມະນະໂຄດົມ ຊົງເວັ້ນຂາດຈາກການຮັບໄກ່ ແລະ ໝູ

໒໐. ພຣະສະມະນະໂຄດົມ ຊົງເວັ້ນຂາດຈາກການຮັບຊ້າງ ງົວ ມ້າ ແລະ ລາ

໒໑. ພຣະສະມະນະໂຄດົມ ຊົງເວັ້ນຂາດຈາກການຮັບຮົ້ວສວນໄຮ່ນາ ແລະ ທີ່ດິນ

໒໒. ພຣະສະມະນະໂຄດົມ ຊົງເວັ້ນຂາດຈາກການເຮັດໜ້າທີ່ເປັນໂຕແທນແລະຜູ້ສື່ ສານ

໒໓. ພຣະສະມະນະໂຄດົມ ຊົງເວັ້ນຂາດຈາກການຊື້ຂາຍ

໒໔. ພຣະສະມະນະໂຄດົມ ຊົງເວັ້ນຂາດຈາກການໂກງດ້ວຍຊິງ ດ້ວຍຂອງປອມແລະດ້ວຍເຄື່ອງຜອງວັດ

໒໕. ພຣະສະມະນະໂຄດົມ ຊົງເວັ້ນຂາດຈາກການຮັບສິນບົນ ການລໍ່ລວງ ແລະການຕະລົບຕະແລງ ຫຼື

໒໖. ພຣະສະມະນະໂຄດົມ ຊົງເວັ້ນຂາດຈາກການຕັດ (ອະໄວຍະວະ) ການຂ້າການຈອງຈຳ ຍາດຊີງ ການປຸ້ນ ແລະ ຂົ່ມເຫງເອົາຊັບ

**ຈູນລະສີນຈົບ**

## ມັດຊິມະສີນ

[໑໑] ປຸຖຸຊົນ ເມື່ອກ່າວຍ້ອງຍໍຕະຖາຄົດກໍຈະເພິ່ງກ່າວວ່າ

໑. ພຣະສະມະນະໂຄດົມ ຊົງເວັ້ນຂາດຈາກການແຍກພືດຊະຄາມ ແລະ ພູຕະຄາມຢ່າງເຊັ່ນສະມະນະພາມຜູ້ຈະເລີນລາງພວກ ສັນໂພຊະນາຫານທີ່ເຂົາໃຫ້ດ້ວຍສັດທາແລ້ວຍັງແຍກພືດຊະຄາມ ແລະ ພູຕະຄາມເຫຼົ່ານີ້ ຄື ພືດເກີດຈາກເຫງົ້າ ເກີດຈາກລໍາຕົ້ນ ເກີດຈາກຕາ ເກີດຈາກຍອດ ເກີດຈາກເມັດ

[໑໘] ໒. ພຣະສະມະນະໂຄດົມ ຊົງເວັ້ນຂາດຈາກການບໍລິໂພກຂອງທີ່ສະສົມໄວ້ຢ່າງເຊັ່ນສະມະນະພາມຜູ້ຈະເລີນລາງພວກ ສັນໂພຊະນາຫານທີ່ເຂົາໃຫ້ດ້ວຍສັດທາແລ້ວ ຍັງບໍລິໂພກຂອງທີ່ສະສົມໄວ້ເຫຼົ່ານີ້ ຄື ສະສົມເຂົ້າ ນໍ້າ ຜ້າ ຍານ ບ່ອນນອນເຄື່ອງທາຜິວຂອງຫອມ ແລະ ອາມິດ

[໑໓] ໓. ພຣະສະມະນະໂຄດົມ ຊົງເວັ້ນຂາດຈາກການເບິ່ງການລະຫຼິ້ນອັນເປັນຂ້າເສິກຕໍ່ກຸສົນ ຢ່າງເຊັ່ນສະມະນະພາມຜູ້ຈະເລີນລາງພວກ ສັນໂພຊະນາອາຫານທີ່ເຂົາໃຫ້ດ້ວຍສັດທາແລ້ວ ຍັງຂວນຂວາຍເບິ່ງການລະຫຼິ້ນອັນເປັນຂ້າເສິກຕໍ່ກຸສົນແນວນີ້ ຄື ການຟ້ອນການຂັບຮ້ອງການເສບດົນຕີ ການລໍາ ການເລົ່ານິທານ ການຫຼິ້ນຕົບມື ການຫຼິ້ນປຸກຜີ ການຫຼິ້ນຕີກອງ ການສ້າງສາບ້ານເມືອງໃຫ້ງົດງາມ ການລະຫຼິ້ນຂອງຄົນຈັນທານ ການຫຼິ້ນໄມ້ໂຢກເຢກ ການລະຫຼິ້ນງັນສົບ ການຊົນຊ້າງ ການຊ່ວງມ້າ ການຊົນຄວາຍ ການຊົນໂຄ ການຊົນແບ ການຊົນແກະການຊົນໄກ່ ການຕີນົກກະທາ ການຫຼິ້ນລາຍຄ້ອນ ການຊົກມວຍ ມວຍປ້ຳ ການຮົບ ການກວດພົນສວນສະນາມ ການຈັດກະບວນທັບ ການກວດ ກາກອງທັບ

[໑໔] ໔. ພຣະສະມະນະໂຄດົມ ຊົງເວັ້ນຂາດຈາກການຂວນຂວາຍໃນການຫຼິ້ນການພະນັນອັນເປັນເຫດແຫ່ງຄວາມປະໝາດ ຢ່າງເຊັ່ນ ສະມະນະພາມຜູ້ຈະເລີນ ລາງພວກສັນໂພຊະນາອາຫານ ທີ່ເຂົາໃຫ້ດ້ວຍສັດທາແລ້ວ ຍັງຂວນຂວາຍໃນການຫຼິ້ນ ການພະນັນອັນເປັນເຫດແຫ່ງຄວາມປະໝາດແນວນີ້ ຄື ຫຼິ້ນໝາກດ້ານແຖວລະ ໘ ຕາ ຫຼື ໑໐ ຕາ ຫຼິ້ນໝາກເກັບ ຫຼິ້ນດວນ (ເອົາຜ້າມັດຕາ) ຫຼິ້ນໝາກໄຫວ (ຕີຄີ) ຫຼິ້ນໂຢນບ້ວງ ຫຼິ້ນໄມ້ຍູ້ສ້າວ ຫຼິ້ນກໍາຫວາຍ ຫຼິ້ນສະກາ ຫຼິ້ນເປົ່າໃບໄມ້ ຫຼິ້ນໄຖນ້ອຍ ຫຼິ້ນຕີລັງກາ ຫຼິ້ນກັງຫັນ ຫຼິ້ນຜອງຊາຍ ຫຼິ້ນລົດນ້ອຍ ຫຼິ້ນຍິງທະນູນ້ອຍ ຫຼິ້ນຊຽນທວາຍ ຫຼິ້ນທວາຍໃຈ ຫຼິ້ນຮຽນແບບຄົນພິການ

[໑໕] ໕. ພຣະສະມະນະໂຄດົມ ຊົງເວັ້ນຂາດຈາກບ່ອນນອນອັນສູງໃຫຍ່ ຢ່າງເຊັ່ນສະມະນະພາມຜູ້ຈະເລີນລາງພວກ ສັນໂພຊະນາອາຫານທີ່ເຂົາໃຫ້ດ້ວຍສັດທາແລ້ວ ຍັງໃຊ້ບ່ອນນອນສູງໃຫຍ່ແນວນີ້ ຄື ຕຽງມີຂາສູງເກີນຂະໜາດ ຕຽງມີຂາເປັນຮູບສັດຮ້າຍ ພົມຂົນສັດ ເຄື່ອງ

ປູຂົນແກະມີລາຍງົດງາມ ເຄື່ອງປູຂົນແກະສີຂາວ ເຄື່ອງປູມີລາຍຮູບດອກໄມ້ ເຄື່ອງປູຍັດດ້ວຍງິ້ວ ເຄື່ອງປູຂົນແກະງົດງາມດ້ວຍຮູບສັດຮ້າຍມີຮູບສັດຮ້າຍ ເຊັ່ນ ຣາຊະສີ ແລະ ເສືອ ເຄື່ອງປູຂົນແກະມີຂົນ ໔ ຂ້າງ ເຄື່ອງປູຂົນແກະມີຂົນທາງດຽວ ເຄື່ອງປູປັກແສ່ວດ້ວຍໄໝປະດັບດ້ວຍຣັດຕະນະ ເຄື່ອງປູຜ້າໄໝປະດັບດ້ວຍຣັດ ຕະນະ ເຄື່ອງປູຂົນແກະຂະໜາດໃຫຍ່ມີນາງຟ້ອນ ໑໖ ຄົນ ເຄື່ອງປູເທິງຫຼັງຊ້າງ ເຄື່ອງປູເທິງຫຼັງມ້າ ເຄື່ອງປູໃນລົດ ເຄື່ອງປູເຮັດດ້ວຍໜັງເສືອ ເຄື່ອງປູໜັງເຫງັນອົມ ເຄື່ອງປູມີເພດານ ເຄື່ອງປູຖວາຍໄວ້ໃຫ້ມີໝອນ ໔ ຂ້າງ

[໑໖] ຜ. ພຣະສະມະນະໂຄດົມ ຊົງເວັ້ນຂາດຈາກການຂວນຂວາຍໃນການປະດັບຕົກແຕ່ງກາຍ ຢ່າງເຊັ່ນ ສະມະນະພາມຜູ້ຈະເລີນລາງພວກ ສັນໂພຊະນາອາຫານທີ່ເຂົາໃຫ້ດ້ວຍສັດທາແລ້ວ ຍັງຂວນຂວາຍໃນການປະດັບຕົກແຕ່ງກາຍແນວນີ້ ຄື ອົບຜົວ ນວດ ອາບນ້ຳຫອມ ເພາະກາຍ ແຍງແວ່ນ ແຕ້ມຄິ້ວ ທັດດອກໄມ້ ທາຜິວ ຜັດໜ້າ ທາສົບ ໃສ້ກ້ອງແຂນ ໃສ່ສາຍສ້ອຍ ໃຊ້ໄມ້ກ້ານເຖົາ ໃຊ້ກັບຢາ ຖືງ້າວ ຖືຫອກ ໃຊ້ຄັນຮົ່ມ ໃສ່ເກີບງົດງາມ ໃສ່ຂອບໜ້າຜາກ ປັກປິ່ນເກົ້າ ໃຊ້ພັດ ແລະ ໃຊ້ຫວີຂົນຫາງສັດ ນຸ່ງຫົ່ມຜ້າຂາວຫາງຍາວ

[໑໗] ກ. ພຣະສະມະນະໂຄດົມ ຊົງເວັ້ນຂາດຈາກເດຍຣັດສານກະຖາ ຢ່າງເຊັ່ນ ສະມະນະພາມຜູ້ຈະເລີນລາງພວກ ສັນໂພຊະນາອາຫານທີ່ເຂົາໃຫ້ດ້ວຍສັດທາແລ້ວຍັງເວົ້າເດຣັດສານກະຖາແນວນີ້ ຄື ເລື້ອງພຣະຣາຊາ ເລື້ອງໂຈນ ເລື້ອງມະຫາອຳມາດ ເລື້ອງກອງທັບ ເລື້ອງໄພເລື້ອງການສູ່ຮົບ ເລື້ອງເຂົ້າ ເລື້ອງນ້ຳ ເລື້ອງຜ້າ ເລື້ອງບ່ອນນອນ ເລື້ອງພວງດອກໄມ້ ເລື້ອງຂອງຫອມ ເລື້ອງຍາດ ເລື້ອງຍານ ເລື້ອງບ້ານ ເລື້ອງນິຄົມ ເລື້ອງເມືອງ ເລື້ອງຊົນນະບົດ ເລື້ອງສະຕີ ເລື້ອງບຸຣຸດ ເລື້ອງຄົນກ້າຫານ ເລື້ອງຕະລົກ ເລື້ອງທ່ານ້ຳ ເລື້ອງຄົນທີ່ລ່ວງລັບໄປແລ້ວ ເລື້ອງຕ່າງ ໆ ເລື້ອງໂລກ ເລື້ອງທະເລ ເລື້ອງຄວາມຈະເລີນ ແລະ ຄວາມເສື່ອມ

[໑໘] ຕ. ພຣະສະມະນະໂຄດົມ ຊົງເວັ້ນຂາດຈາກການເວົ້າຜິດຖຽງກັນ ແຂ່ງຂັນກັນ ຢ່າງເຊັ່ນ ສະມະນະພາມຜູ້ຈະເລີນລາງພວກ ສັນໂພຊະນາຫານທີ່ເຂົາໃຫ້ດ້ວຍສັດທາແລ້ວຍັງເວົ້າຜິດຖຽງກັນແຂ່ງແຍກກັນແນວນີ້ ຄື ທ່ານບໍ່ຮູ້ທົ່ວເຖິງທຳວິໄນນີ້ ແຕ່ເຮົາຮູ້ທົ່ວເຖິງ ທ່ານຈະຮູ້ທົ່ວເຖິງທຳວິໄນນີ້ໄດ້ຢ່າງໃດ ທ່ານປະຕິບັດຜິດ ແຕ່ເຮົາປະຕິບັດຖືກ ຄຳເວົ້າຂອງເຮົາມີປະໂຫຍດ ແຕ່ຄຳເວົ້າຂອງທ່ານບໍ່ມີປະໂຫຍດ ຄຳທີ່ຄວນເວົ້າກ່ອນ ທ່ານກັບເວົ້າພາຍຫຼັງຄຳທີ່ຄວນເວົ້າພາຍຫຼັງ ທ່ານກັບເວົ້າກ່ອນ ເລື້ອງທີ່ທ່ານເຄີຍລຶງໄດ້ຜັນປ່ຽນໄປແລ້ວ ເຮົາຈັບຜິດຄຳເວົ້າຂອງທ່ານໄດ້ແລ້ວ ເຮົາຂົ່ມທ່ານໄດ້ແລ້ວ ຖ້າທ່ານມີຄວາມສາມາດກໍຈົ່ງຫາທາງແກ້ຄຳເວົ້າ ຫຼື ຖອນຕົນໃຫ້ພົ້ນຜິດໃຫ້ຈົງໄດ້

[໑໙] ຖ. ພຣະສະມະນະໂຄດົມ ຊົງເວັ້ນຂາດຈາກການເຮັດໜ້າທີ່ເປັນໂຕແທນແລະຜູ້ສື່ສານ ຢ່າງເຊັ່ນສະມະນະພາມຜູ້ຈະເລີນລາງພວກ ສັນໂພຊະນາອາຫານທີ່ເຂົາໃຫ້ດ້ວຍສັດທາ

ແລ້ວ ຍັງເຮັດໜ້າທີ່ເປັນໂຕແທນ ແລະ ຜູ້ສື່ສານແນວນີ້ ຄື ຮັບເປັນສື່ໃຫ້ພຣະຣາຊາ ມະຫາອຳມາດ ກະສັດ ພາມ ຄະຫະບໍດີ ແລະກຸມານວ່າ "ທ່ານຈົ່ງໄປບ່ອນນີ້ ຫຼື ໃນບ່ອນນັ້ນທ່ານຈົ່ງນຳເອົາສິ່ງນີ້ໄປຈົ່ງເອົາສິ່ງນີ້ມາຈາກບ່ອນນັ້ນໃຫ້ເຮົາ" ຫຼື

[໔໐] ໑໐. ພຣະສະມະນະໂຄດົມ ຊົງເວັ້ນຂາດຈາກການເວົ້າຫຼອກລວງ ແລະການເວົ້າລຽບຄຽງເພາະຢາກໄດ້ ຢ່າງເຊັ່ນສະມະນະພາມຜູ້ຈະເລີນລາງພວກ ສັນໂພຊະນາອາຫານທີ່ເຂົາໃຫ້ດ້ວຍສັດທາແລ້ວ ຍັງເວົ້າຫຼອກລວງ ລຽບຄຽງ ຫວ່ານລ້ອມ ເວົ້າໂຄສະນາສະແຫວງຫາລາບຕໍ່ລາບ

## ມັດຊິມະສີນຈົບ

## ມະຫາສີນ

[໔໑] ປຸຖຸຊົນ ເມື່ອຈະກ່າວຍ້ອງຍໍຕະຖາຄົດກໍຈະເພິ່ງກ່າວວ່າ

໑. ພຣະສະມະນະໂຄດົມ ຊົງເວັ້ນຂາດຈາກການລ້ຽງຊີບຜິດທາງ ດ້ວຍເດຣັດສານວິຊາ ຢ່າງເຊັ່ນ ສະມະນະພາມຜູ້ຈະເລີນລາງພວກ ສັນໂພຊະນາອາຫານທີ່ເຂົາໃຫ້ດ້ວຍສັດທາແລ້ວ ຍັງລ້ຽງຊີບຜິດທາງດ້ວຍເດຣັດສານວິຊາແນວນີ້ ຄື ທວາຍອະໄວຍະວະ ທວາຍຕຳໜິ ທວາຍໂຊກລາງ ທວາຍຝັນ ທວາຍລັກສະນະ ທວາຍໜູກັດຜ້າ ທຳພິທີບູຊາໄຟ ເຮັດພິທີວຽນທຽນ ພິທີຊັດຫວ່ານຂີ້ແກບບູຊາໄຟ ພິທີຫວ່ານຣຳບູຊາໄຟ ພິທີຫວ່ານເຂົ້າສານບູຊາໄຟ ພິທີຕື່ມນຳມັນເນີຍບູຊາໄຟ ພິທີຕື່ມນ້ຳມັນບູຊາໄຟ ເຮັດພິທີເສກເຄື່ອງບູຊາໄຟ ເຮັດພິທີບະດ້ວຍເລືອດ ເປັນໝໍເບິ່ງອະໄວຍະວະ ເປັນໝໍເບິ່ງພື້ນທີ່ ເປັນໝໍເບິ່ງທວາຍການປົກຄອງ ເປັນໝໍສະເໜ່ ເປັນໝໍເວດມົນໄລ່ຜີ ເປັນໝໍຕັ້ງທຳເທວະດາ ເປັນໝໍງູ ເປັນໝໍພິດ ເປັນໝໍແມງງອດ ເປັນໝໍໜູກັດ ເປັນໝໍທວາຍສຽງນົກ ເປັນໝໍທວາຍສຽງກາ ເປັນໝໍທວາຍອາຍຸ ເປັນໝໍເສກປ້ອງກັນລູກສອນ ເປັນໝໍທວາຍສຽງສັດຮ້ອງ

[໔໔] ໔. ພຣະສະມະນະໂຄດົມ ຊົງເວັ້ນຂາດຈາກການລ້ຽງຊີບຜິດທາງດ້ວຍເດຣັດສານວິຊາ ຢ່າງເຊັ່ນສະມະນະພາມຜູ້ຈະເລີນລາງພວກສັນໂພຊະນາອາຫານ ທີ່ເຂົາໃຫ້ດ້ວຍສັດທາແລ້ວ ຍັງລ້ຽງຊີບຜິດທາງດ້ວຍເດຣັດສານວິຊາແນວນີ້ ຄື ທວາຍລັກສະນະແກ້ວມະນີ ລັກສະນະໄມ້ຄອນຍາວ ລັກສະນະຜ້າ ລັກສະນະສາດຕາ ລັກສະນະດາບ ລັກສະນະລູກສອນ ລັກສະນະທະນູ ລັກສະນະອາວຸດ ລັກສະນະສະຕີ ລັກສະນະບຸຣຸດ ລັກສະນະເດັກຊາຍ ລັກສະນະເດັກຍິງ ລັກສະນະຂ້າທາດຊາຍ ລັກສະນະຂ້າທາດຍິງ ລັກສະນະຊ້າງ ລັກສະນະມ້າ ລັກສະນະຄວາຍ ລັກສະນະງົວອຸສະພະ ລັກສະນະງົວທຳມະດາ ລັກສະນະແບ້ ລັກສະນະແກະ ລັກສະນະໄກ່ ລັກສະນະນົກກະທາ ລັກສະນະແລ່ນ ລັກສະນະຕາງຫູ ລັກສະນະເຕົ່າ ລັກສະນະສັດ

[໔໓] ໓. ພຣະສະມະນະໂຄດົມ ຊົງເວັ້ນຂາດຈາກການລ້ຽງຊີບຜິດທາງ ດ້ວຍເດຣັດສານວິຊາ ຢ່າງເຊັ່ນສະມະນະພາມຜູ້ຈະເລີນລາງພວກສັນໂພຊະນາອາຫານ ທີ່ເຂົາໃຫ້ດ້ວຍສັດທາແລ້ວຍັງລ້ຽງຊີບຜິດທາງ ດ້ວຍເດຣັດສານວິຊາແບບນີ້ ຄື ເບິ່ງຣືກຍົກທັບວ່າພຣະຣາຊາຈັກສະເດັດ ຫຼື ບໍ່ສະເດັດ ພຣະຣາຊາໃນອານາຈັກ ຈັກຊົງຍົກທັບເຂົ້າໃກ້ຊິດຊາຍແດນ ພຣະຣາຊານອກອານາຈັກຈັກຊົງລ່າຖອຍ ພຣະຣາຊານອກອານາຈັກ ຈັກຊົງຍົກທັບມາໃກ້ຊິດຊາຍແດນພຣະຣາຊາໃນອານາຈັກ ຈັກຊົງລ່າຖອຍ ໄຊຊະນະຈັກຕົກເປັນຂອງພຣະຣາຊາໃນອານາຈັກຄວາມພ່າຍແພ້ຈັກມີແກ່ພຣະຣາຊານອກອານາຈັກ ໄຊຊະນະຈັກຕົກເປັນຂອງພຣະຣາຊານອກອານາຈັກ ຄວາມພ່າຍແພ້ຈັກມີແກ່ພຣະຣາຊາໃນອານາຈັກ ພຣະຣາຊາອົງນີ້ຈັກຊົງຊະນະ ພຣະຣາຊາອົງນີ້ຈັກຊົງພ່າຍແພ້

[໔໔] ໔. ພຣະສະມະນະໂຄດົມ ຊົງເວັ້ນຂາດຈາກການລ້ຽງຊີບຜິດທາງດ້ວຍເດຣັດສານວິຊາ ຢ່າງເຊັ່ນ ສະມະນະພາມຜູ້ຈະເລີນລາງພວກ ສັນໂພຊະນາອາຫານທີ່ເຂົາໃຫ້ດ້ວຍສັດທາແລ້ວ ຍັງລ້ຽງຊີບຜິດທາງດ້ວຍເດຣັດສານວິຊາແບບນີ້ ຄື ພະຍາກອນວ່າຈັກມີຈັນທະຄາດ (ກົບກິນເດືອນ) ສຸຣິຍະຄາດ (ກົບກິນຕາເວັນ) ນັກຂັດຕະຄາດ ດວງຈັນ ດວງອາທິດຈັກໂຄຈອນຖືກທາງ ຫຼື ຜິດທາງດາວນັກຂັດຕະຈັກໂຄຈອນຖືກທາງ ຫຼື ຜິດທາງ ຈັກມີອຸກກາບາດ ແລະ ດາວຕົກແຜ່ນດິນໄຫວຟ້າຮ້ອງດວງຈັນດວງອາທິດ ແລະ ດາວນັກຂັດຕະຈັກຂຶ້ນຕົກ ມົວໝອງ ຊັດແຈ້ງກະຈ່າງ ຈັນທະຄາດ ສຸຣິຍະຄາດ ຫຼື ນັກຂັດຕະຄາດຈັກມີຜົນແບບນີ້ ດວງຈັນດວງອາທິດ ຫຼື ດາວນັກຂັດຕະໂຄຈອນຖືກທາງຈັກມີຜົນແບບນີ້ ໂຄຈອນຜິດທາງຈັກມີຜົນແບບນີ້ ອຸກກາບາດ ແລະ ດາວຕົກ ແຜ່ນດິນໄຫວ ຟ້າຮ້ອງຈັກມີຜົນແບບນີ້ ດວງຈັນ ດວງອາທິດ ແລະ ດາວນັກຂັດຕະ ຈະຂຶ້ນ ຕົກ ຫຼື ມົວໝອງ ຊັດແຈ້ງ ກະຈ່າງຈັກມີຜົນແບບນີ້

[໔໕] ໕. ພຣະສະມະນະໂຄດົມ ຊົງເວັ້ນຂາດຈາກການລ້ຽງຊີບຜິດທາງ ດ້ວຍເດຣັດສານວິຊາ ຢ່າງເຊັ່ນ ສະມະນະພາມຜູ້ຈະເລີນລາງພວກ ສັນໂພຊະນາອາຫານທີ່ເຂົາໃຫ້ດ້ວຍສັດທາແລ້ວ ຍັງລ້ຽງຊີບຜິດທາງດ້ວຍເດຣັດສານວິຊາແບບນີ້ ຄື ພະຍາກອນວ່າຝົນຈະດີ ຝົນຈະແລ້ງຈັກອຸດົມສົມບູນດ້ວຍພືກສາຫານຫາໄດ້ງ່າຍ ຈັກອຶດຢາກດ້ວຍພືກສາຫານຫາໄດ້ຍາກ ຈັກມີຄວາມສະຫງົບຮົ່ມເຢັນ ຈັກມີໄພ ຈັກມີໂຣຄາພະຍາດ ຈັກບໍ່ມີໂຣຄາພະຍາດ ການຄຳນວນດ້ວຍວິທີນັບນິ້ວ (ມຸດທາ) ການຄຳນວນດ້ວຍວິທີຄິດໃນໃຈ (ຄະນະນາ) ການຄຳນວນດ້ວຍວິທີຄາດຄະເນກະຕວງດ້ວຍສາຍຕາ (ສັງຂານ) ວິຊາກາບກອນ ແລະ ວິຊາວ່າດ້ວຍພື້ນແຜ່ນໂລກ

[໔໖] ໖. ພຣະສະມະນະໂຄດົມ ຊົງເວັ້ນຂາດຈາກການລ້ຽງຊີບຜິດທາງດ້ວຍເດຣັດສານວິຊາ ຢ່າງເຊັ່ນ ສະມະນະພາມຜູ້ຈະເລີນລາງພວກ ສັນໂພຊະນາຫານທີ່ເຂົາໃຫ້ດ້ວຍສັດທາແລ້ວ ຍັງລ້ຽງຊີບຜິດທາງດ້ວຍເດຣັດສານວິຊາແບບນີ້ ຄື ໃຫ້ຣືກອາວາຫະມຸງຄຸນ (ຊາຍນຳຍິງໄປຢູ່ນຳ) ຣືກວິວາມຸງຄຸນ (ຍິງນຳຊາຍໄປຢູ່ນຳ) ຣືກທົວຮຽກໝອນ (ພິທີສົ່ງເຈົ້າບ່າວສາວເຂົ້າ

ເຮືອນທໍ) ຮີກປະຮ້າງ ຮີກໂຮມຊັບ ຮີກໃຊ້ຈ່າຍຊັບ ເຮັດໃຫ້ໂຊກດີ ເຮັດໃຫ້ເຄາະຮ້າຍ ໃຫ້ຢາລ້ອມລູກ ເປົ່າມົນໃຫ້ລີ້ນແຂງ ເປົ່າມົນໃຫ້ຄາງແຂງ ເປົ່າມົນໃຫ້ມືສັ່ນ ເປົ່າມົນໃຫ້ຄາງສັ່ນ ເປົ່າມົນໃຫ້ຫູອື້ ເປັນໝໍເບິ່ງລູກແກ້ວ ໃຊ້ຍິງສາວເປັນນາງທຽມ ໃຊ້ໝໍທຽມ ບວງສວງດວງອາທິດ ແລະ ບວງສວງທ້າວມະຫາພົມ ເປົ່ນມົນເປົ່າໄຟ ເຮັດພິທີຮຽກຂວັນ

[໔໗] ກ. ພຣະສະມະນະໂຄດົມ ຊົງເວັ້ນຂາດຈາກການລ້ຽງຊີບຜິດທາງ ດ້ວຍເດຣັດສານວິຊາ ຢ່າງເຊັ່ນ ສະມະນະພາມຜູ້ຈະເລີນລາງພວກ ສັນໂພຊະນາອາຫານທີ່ເຂົາໃຫ້ດ້ວຍສັດທາແລ້ວ ຍັງລ້ຽງຊີບຜິດທາງດ້ວຍເດຣັດສານວິຊາແນວນີ້ ຄື ເຮັດພິທີບະ ພິທີແກ້ບະ ເປົ່າມົນຂັບຜີຕັ້ງທໍເທວະດາ ເຮັດກະເທືອຍໃຫ້ເປັນຊາຍ ເຮັດຊາຍໃຫ້ເປັນກະເທືອຍ ເຮັດພິທີປຸກເຮືອນ ເຮັດພິທີບວງສວງເຈົ້າທີ່ ເຈົ້າຖານ ເປົ່ານ້ຳມົນ ທົດນ້ຳມົນ ພິທີບູຊາໄຟ ແຕ່ງຢາໃຫ້ຮາກອອກ ແຕ່ງຢາໃຫ້ຖ່າຍ ແຕ່ງຢາແກ້ໂຣກລົມຕີຂຶ້ນທາງເທິງ ແຕ່ງຢາແກ້ໂຣກລົມຕີຕີລົງເບື້ອງບຸ້ມ ແຕ່ງຢາແກ້ເຈັບຫົວ ແຕ່ງນ້ຳມັນຢອດຫູ ແຕ່ງນ້ຳມັນຢອດຕາ ແຕ່ງຢານັດ ແຕ່ງຢາຢອດຕາ ແຕ່ງຢາທາຕາ ເປັນໝໍປົວຕາ ໝໍຜ່າຕັດ ໝໍຖືຮັກສາເດັກນ້ອຍ (ກຸມາຣະເວດ) ການທ້າຍາພື້ນເມືອງ ແລະໃສ່ຢາລ້າງບາດແຜ

ພິກຂຸທັງຫຼາຍ ທີ່ກ່າວມາທັງໝົດນີ້ຄື ຂໍ້ທີ່ປຸຖຸຊົນ ເມື່ອຈະກ່າວຍ້ອງຍໍຕະຖາຄົດກໍຈະພາກັນກ່າວດ້ວຍເລື້ອງເລັກໜ້ອຍຕ່ຳຕ້ອຍ ພຽງເລື້ອງໃນຂັ້ນລະດັບສິນເທົ່ານັ້ນ.

**ມະຫາສີນ ຈົບ**

## ທິດຖິ ໖໘

## ປຸບພັນທະກັບປີກະອາທະ ໑໘

## ຄວາມເຫັນກຳນົດຂັ້ນໃນອະດີດ

[໔໘] ພິກຂຸທັງຫຼາຍ ຍັງມີທຳເຫຼົ່າອື່ນອີກທີ່ເລິກເຊິ່ງເຫັນໄດ້ຍາກ ຮູ້ນຳໄດ້ຍາກ ສະຫງົບປະນີດ ໃຊ້ເຫດຜົນຄາດຄະເນເອົາບໍ່ໄດ້ ລະອຽດ ຮູ້ໄດ້ສະເພາະບັນດິດ ເຊິ່ງຕະຖາຄົດຮູ້ແຈ້ງໄດ້ເອງແລ້ວ ສັ່ງສອນຜູ້ອື່ນໃຫ້ຮູ້ແຈ້ງນຳ ອັນເປັນເຫດໃຫ້ຄົນກ່າວຍ້ອງຍໍຕະຖາຄົດສຳຜັດຖືກ ຕາມຄວາມເປັນຈິງ ກໍທຳທີ່ເລິກເຊິ່ງເຫັນໄດ້ຍາກ ຮູ້ນຳໄດ້ຍາກ ຯລຯ ອັນເປັນເຫດໃຫ້ຄົນກ່າວຍ້ອງຍໍຕະຖາຄົດຕາມຄວາມເປັນຈິງມີຫຍັງແດ່

[໔໙] ພິກຂຸທັງຫຼາຍ ມີສະມະນະພາມ ໔ ພວກ ພວກໜຶ່ງສາມາດກຳນົດຂັນສ່ວນໃນອະດີດໄດ້ ມີຄວາມເຫັນໄປຕາມຂັນໃນສ່ວນທີ່ເປັນອະດີດ ປາຣົບຂັນທີ່ເປັນອະດີດປະກາດວາທະສະແດງທິດຖິຕ່າງ ໆ ດ້ວຍມູນເຫດ ໑໘ ຢ່າງ ກໍສະມະນະພາມຜູ້ຈະເລີນເຫຼົ່ານັ້ນ ອາໄສຫຍັງປາຣົບຫຍັງ ຈຶ່ງກຳນົດຂັນສ່ວນທີ່ເປັນອະດີດໄດ້ ມີຄວາມເຫັນໄປຕາມຂັນທີ່ເປັນອະດີດ ປາຣົບຂັນທີ່ເປັນອະດີດ ປະກາດວາທະສະແດງທິດຖິຕ່າງ ໆ ດ້ວຍມູນເຫດ ໑໘ ຢ່າງນັ້ນ

## ສັດສະຕະວາທະ ໔

## ເຫັນວ່າອັດຕາແລະໂລກທ່ຽງ

[໓໐] ພິກຂຸທັງຫຼາຍ ມີສະມະນະພາມພວກໜຶ່ງ ມີວາທະວ່າທ່ຽງ ບັນຍັດອັດຕາ ແລະໂລກວ່າທ່ຽງ ດ້ວຍມູນເຫດ ໔ ຢ່າງ ກໍສະມະນະພາມຜູ້ຈະເລີນເຫຼົ່ານັ້ນ ອາໄສຫຍັງ ປາຣົບຫຍັງ ຈຶ່ງມີວາທະວ່າທ່ຽງ ບັນຍັດອັດຕາ ແລະ ໂລກວ່າທ່ຽງ ດ້ວຍມູນເຫດ ໔ ຢ່າງນັ້ນ

## ມູນເຫດທີ ໑

[໓໑] ໑. ສະມະນະ ຫຼື ພາມລາງຄົນໃນໂລກນີ້ ອາໄສຄວາມພຽນເຄື່ອງເຜົາກິເລດຄວາມ ພຽນທີ່ຕັ້ງໝັ້ນຢູ່ ຄວາມໝັ້ນປະກອບຄວາມບໍ່ປະໝາດ ແລະ ອາໄສການໃຊ້ຄວາມຄິດຢ່າງຖືກວິທີບັນລຸເຈໂຕສະມາທິ ໑ ທີ່ເປັນເຫດທຳຈິດໃຫ້ຕັ້ງໝັ້ນຢູ່ (ບໍລິສຸດຜຸດຜ່ອງ ບໍ່ມີກິເລດຍົວະຍວນ  ປາສະຈາກຄວາມເສົ້າໝອງ) ລະລຶກຊາດກ່ອນໄດ້ຫຼາຍຊາດຄື ໑ ຊາດແດ່ ກໍມີ ໒ ຊາດແດ່ ກໍມີ ໓ ຊາດແດ່ ກໍມີ ໔ ຊາດແດ່ ກໍມີ ໕ ຊາດແດ່ ກໍມີ ໑໐ ຊາດແດ່ ກໍມີ ໒໐ ຊາດແດ່ ກໍມີ ໓໐ ຊາດແດ່ ກໍມີ ໔໐ ຊາດແດ່ ກໍມີ ໕໐ ຊາດແດ່ ກໍມີ ໑໐໐ ຊາດແດ່ ກໍມີ ໑,໐໐໐ ຊາດແດ່ ກໍມີ ໑໐໐,໐໐໐ ຊາດແດ່ ກໍມີ ຫຼາຍຮ້ອຍຊາດແດ່ ກໍມີ ຫຼາຍພັນຊາດແດ່ ກໍມີ ຫຼາຍແສນຊາດແດ່ ກໍມີ ວ່າ "ໃນພົບນັ້ນ ໆ ເຮົາມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກ ທຸກ ແລະ ມີອາຍຸເທົ່ານັ້ນ ຈຸຕິ (ເຄື່ອນ) ຈາກພົບນັ້ນແລ້ວໄປເກີດໃນພົບນັ້ນ ແມ່ນໃນພົບນັ້ນເຮົາກໍໄດ້ມີຊື່ຢ່າງນັ້ນ ມີຕະກູນມີວັນນະ ມີອາຫານ ສະເຫວີຍສຸກ ທຸກ ແລະມີອາຍຸເທົ່ານັ້ນ ຈຸຕິຈາກພົບນັ້ນແລ້ວ ຈຶ່ງມາເກີດໃນພົບນີ້ " ເຂົາລະລຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປ ແລະ ຊີວະປະຫວັດແນວນີ້ແລ້ວ

ເຂົາຈຶ່ງເວົ້າຂຶ້ນແນວນີ້ວ່າ  "ອັດຕາ ແລະ ໂລກທ່ຽງ ຍັ້ງຍືນ ຕັ້ງໝັ້ນຢູ່ ຄື ຈອມພູ ຄືເສົາພະ ນຽດ ສ່ວນສັດເຫຼົ່ານັ້ນ ຍ່ອມແລ່ນໄປ ທ່ອງທ່ຽວໄປ ຈຸຕິ ແລະ ເກີດ ແຕ່ມີສິ່ງທີ່ທ່ຽງແທ້ຢູ່ ຍ້ອນເຫດຫຍັງ ຍ້ອນວ່າເຮົາອາໄສຄວາມພຽນເຄື່ອງເຜົາກິເລດ ຄວາມພຽນທີ່ຕັ້ງໝັ້ນຢູ່ ຄວາມໝັ້ນປະກອບ ຄວາມບໍ່ປະໝາດ ແລະ ອາໄສການໃຊ້ຄວາມຄິດຢ່າງຖືກວິທີບັນລຸເຈໂຕສະ

ມາທິ ທີ່ເປັນເຫດທຳຈິດໃຫ້ຕັ້ງໝັ້ນຢູ່ ລະລຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ຊາດແດ່ ກໍມີ ໓ ຊາດແດ່ ກໍມີ ໔ ຊາດແດ່ ກໍມີ ໕ຊາດແດ່ ກໍມີ ໑໐ ຊາດແດ່ ກໍມີ ໒໐ຊາດແດ່ ໓໐ຊາດ ແດ່ ກໍມີ ໔໐ຊາດແດ່ ກໍມີ ໕໐ ຊາດແດ່ ກໍມີ ໑໐໐ ຊາດແດ່ ກໍມີ ໑,໐໐໐ ຊາດແດ່ ກໍມີ ໑໐໐, ໐໐໐ ຊາດແດ່ ກໍມີ ຫຼາຍຮ້ອຍຊາດແດ່ ກໍມີ ຫຼາຍພັນຊາດແດ່ ກໍມີ ຫຼາຍແສນຊາດແດ່ ກໍມີ ວ່າ "ໃນພົບນັ້ນເຮົາມີຊື່ແນວນັ້ນ ມີຕະກູນມີວັນນະ ມີອາຫານ ສະເຫວີຍສຸກ ທຸກ ແລະ ມີອາຍຸແນວ ນັ້ນ ໆ ຈຸຕິຈາກພົບນັ້ນ ກໍໄປເກີດໃນພົບນັ້ນ ແມ່ນໃນພົບນັ້ນ ເຮົາກໍໄດ້ມີຊື່ແນວນັ້ນ ມີຕະກູນ ມີ ວັນນະມີ ອາຫານ ສະເຫວີຍສຸກ ທຸກ ແລະ ມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນ ຈຶ່ງມາເກີດໃນ ພົບນີ້ ເຮົາລະລຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປ ແລະ ຊີວະປະຫວັດແນວນີ້ ເພາະການໄດ້ບັນລຸຄຸນວິເສດນີ້ເຮົາຈຶ່ງຮູ້ອາການທີ່ ອັດຕາ ແລະ ໂລກທ່ຽງຍັ້ງຍືນ ຕັ້ງໝັ້ນຢູ່ ຄື ຈອມພູ ຄື ເສົາພະນຽດສ່ວນສັດເຫຼົ່ານັ້ນ ຍ່ອມແລ່ນໄປ ທ່ອງທ່ຽວໄປ ຈຸຕິ ແລະ ເກີດ ແຕ່ມີສິ່ງ ທີ່ທ່ຽງຢູ່ແທ້"

ພິກຂຸທັງຫຼາຍນີ້ເປັນມູນເຫດທີ ໑ ເຊິ່ງສະມະນະພາມພວກໜຶ່ງອາໄສແລ້ວປາຣົບແລ້ວ ຈຶ່ງມີວາທະວ່າທ່ຽງບັນຍັດອັດຕາແລະໂລກວ່າທ່ຽງ

## ມູນເຫດທີ ໒

[໓໒] ໒. ອັນໜຶ່ງ ໃນມູນເຫດທີ ໒ ສະມະນະພາມຜູ້ຈະເລີນ ອາໄສຫຍັງ ປາຣົບຫຍັງ ຈຶ່ງມີວາທະວ່າ ທ່ຽງ ບັນຍັດ ອັດຕາ ແລະ ໂລກ ວ່າ ທ່ຽງ

ສະມະນະ ຫຼື ພາມລາງຄົນໃນໂລກນີ້ ອາໄສຄວາມພຽນເຄື່ອງເຜົາກິເລດ ຄວາມພຽນທີ່ ປະພຶດຢູ່ ຄວາມໝັ່ນປະກອບ ຄວາມບໍ່ປະໝາດ ແລະ ອາໄສການໃຊ້ຄວາມຄິດຢ່າງຖືກວິທີ ແລ້ວບັນລຸເຈໂຕສະມາທິ ທີ່ເປັນເຫດທຳຈິດໃຫ້ຕັ້ງໝັ້ນຢູ່ ລະລຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ສັງວັດຕະກັບແດ່ ແລະວິວັດຕະກັບແດ່ ໒ ສັງວັດຕະກັບ ແລະ ວິວັດຕະກັບແດ່ ໓ ສັງວັດຕະ ກັບ ແລະ ວິວັດຕະກັບແດ່ ໔ ສັງວັດຕະກັບ ແລະ ວິວັດຕະກັບແດ່ ໕ ສັງວັດຕະກັບ ແລະວິ ວັດຕະກັບແດ່ ໑໐ ສັງວັດຕະກັບແລະວິວັດຕະກັບແດ່ ວ່າ "ໃນພົບນັ້ນເຮົາມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນ ກໍໄປເກີດໃນ ພົບນັ້ນ ແມ່ນໃນພົບນັ້ນເຮົາກໍໄດ້ມີຊື່ແນວນັ້ນ ມີຕະກູນມີວັນນະມີອາຫານ ສະເຫວີຍສຸກທຸກ ແລະ ມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນແລ້ວຈຶ່ງມາເກີດໃນພົບນີ້" ເຂົາລະລຶກຊາດກ່ອນໄດ້ ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປ ແລະຊີວະປະຫວັດແນວນີ້ແລ້ວ

ເຂົາຈຶ່ງເວົ້າຂຶ້ນແນວນີ້ວ່າ "ອັດຕາ ແລະ ໂລກທ່ຽງ ຍັ້ງຍືນ ຕັ້ງໝັ້ນຢູ່ ຄື ຈອມພູ ຄື ເສົາພະ ນຽດ ສ່ວນສັດເຫຼົ່ານັ້ນຍ່ອມແລນໄປ ທ່ອງທ່ຽວໄປ ຈຸຕິແລະເກີດ ແຕ່ມີສິ່ງທີ່ທ່ຽງຢູ່ແນ່

ຍ້ອນເຫດຫຍັງ ຍ້ອນວ່າເຮົາອາໄສຄວາມພຽນ ເຄື່ອງເຜົາກິເລດ ຄວາມພຽນທີ່ຕັ້ງໝັ້ນ ຄວາມໝັ້ນປະກອບ ຄວາມບໍ່ປະໝາດ ແລະອາໄສການໃຊ້ຄວາມຄິດຢ່າງຖືກວິທີແລ້ວ ບັນລຸເຈໂຕສະມາທິທີ່ເປັນເຫດທຳຈິດໃຫ້ຕັ້ງໝັ້ນຢູ່ ລະລຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ສັງວັດຕະກັບ ແລະວິວັດຕະກັບແດ່ ໒ ສັງວັດຕະກັບ ແລະ ວິວັດຕະກັບແດ່ ໓ ສັງວັດຕະກັບ ແລະ ວິວັດຕະກັບແດ່ ໔ ສັງວັດຕະກັບ ແລະ ວິວັດຕະກັບແດ່ ໕ ສັງວັດຕະກັບ ແລະ ວິວັດຕະກັບແດ່ ໑໐ ສັງວັດຕະກັບແລະວິວັດຕະກັບແດ່ ວ່າ "ໃນພົບນັ້ນເຮົາມີຊື່ແນວນັ້ນ ມີຕະກູນມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະ ມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນກໍໄປເກີດໃນພົບນັ້ນ ແມ່ນໃນພົບນັ້ນເຮົາກໍໄດ້ມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະ ມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນແລ້ວ ຈຶ່ງມາເກີດໃນພົບນີ້" ເຮົາລະລຶກເຖິງຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປ ແລະ ຊີວະປະຫວັດແນວນີ້ ເພາະການໄດ້ບັນລຸຄຸນວິເສດນີ້ ເຮົາຈຶ່ງຮູ້ອາການທີ່ອັດຕາ ແລະ ໂລກທ່ຽງ ຍັງຍືນ ຕັ້ງໝັ້ນຢູ່ ຄື ຈອມພູ ຄື ເສົາພະນຽດ ສ່ວນສັດເຫຼົ່ານັ້ນຍ່ອມແລ່ນໄປ ທ່ອງທ່ຽວໄປ ຈຸຕິ ແລະ ເກີດ ແຕ່ມີສິ່ງທີ່ທ່ຽງຢູ່ແທ້"

ພິກຂຸທັງຫຼາຍ ນີ້ເປັນມູນເຫດທີ ໒ ເຊິ່ງສະມະນະພາມພວກໜຶ່ງ ອາໄສແລ້ວປາລົບແລ້ວຈຶ່ງມີວາທະວ່າ ທ່ຽງ ບັນຍັດ ອັດຕາ ແລະ ໂລກວ່າ ທ່ຽງ.

## ມູນເຫດທີ ໓

[໓໓] ໓. ອັນໜຶ່ງ ໃນມູນເຫດທີ ໓ ສະມະນະພາມ ຜູ້ຈະເລີນອາໄສຫຍັງ ປາລົບຫຍັງຈຶ່ງມີວາທະວ່າທ່ຽງ ບັນຍັດອັດຕາ ແລະ ໂລກ ວ່າທ່ຽງ

ສະມະນະ ຫຼື ພາມລາງຄົນໃນໂລກນີ້ ອາໄສຄວາມພຽນເຄື່ອງເຜົາກິເລດ ຄວາມພຽນທີ່ຕັ້ງໝັ້ນຢູ່ ຄວາມໝັ້ນປະກອບ ຄວາມບໍ່ປະໝາດ ແລະ ອາໄສການໃຊ້ຄວາມຄິດຢ່າງຖືກວິທີແລ້ວບັນລຸເຈໂຕສະມາທິ ທີ່ເປັນເຫດທຳຈິດໃຫ້ຕັ້ງໝັ້ນຢູ່ ລະລຶກຊາດກ່ອນໄດ້ຫຼາຍຊາດ ຄື ໑໐ ສັງວັດຕະກັບແລະວິວັດຕະກັບແດ່ ໒໐ ສັງວັດຕະກັບ ແລະ ວິວັດຕະກັບແດ່ ໓໐ ສັງວັດຕະກັບ ແລະ ວິວັດຕະກັບແດ່ ໔໐ ສັງວັດຕະກັບ ແລະ ວິວັດຕະກັບແດ່ ວ່າ "ໃນພົບນັ້ນເຮົາມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາ ຫານ ສະເຫວີຍສຸກທຸກ ແລະ ມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນກໍໄປເກີດໃນພົບນັ້ນ ແມ່ນໃນພົບນັ້ນເຮົາກໍໄດ້ມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນແລ້ວ ຈຶ່ງມາເກີດໃນພົບນີ້" ເຂົາລະລຶກເຖິງຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປ ແລະ ຊີວະປະຫວັດແນວນີ້

ເຂົາຈຶ່ງເວົ້າແນວນີ້ວ່າ "ອັດຕາ ແລະ ໂລກທ່ຽງ ຍັງຍືນ ຕັ້ງໝັ້ນຢູ່ ຄື ຈອມພູຄືເສົາພະນຽດ ສ່ວນສັດເຫຼົ່ານັ້ນ ຍ່ອມແລ່ນໄປທ່ອງທ່ຽວໄປ ຈຸຕິ ແລະ ເກີດ ແຕ່ມີສິ່ງທີ່ທ່ຽງຢູ່ແນ່

ຍ້ອນເຫດຫຍັງ? ຍ້ອນວ່າເຮົາອາໄສຄວາມພຽນເຄື່ອງເຜົາກິເລດ ຄວາມພຽນທີ່ຕັ້ງໝັ້ນຄວາມໝັ່ນປະກອບ ຄວາມບໍ່ປະໝາດ ແລະອາໄສການໃຊ້ຄວາມຄິດຢ່າງຖືກວິທີ ແລ້ວບັນລຸເຈໂຕສະມາທິທີ່ເປັນເຫດທຳຈິດໃຫ້ຕັ້ງໝັ້ນຢູ່ ລະລຶກເຖິງຊາດກ່ອນໄດ້ຫຼາຍຊາດ ຄື ໑໐ ສັງວັດຕະກັບ ແລະວິວັດຕະກັບແດ່ ໒໐ ສັງວັດຕະກັບ ແລະ ວິວັດຕະກັບແດ່ ໓໐ ສັງວັດຕະກັບ ແລະ ວິວັດຕະກັບແດ່ ໔໐ ສັງວັດຕະກັບແລະ ວິວັດຕະກັບແດ່ ວ່າ "ໃນພົບນັ້ນ ເຮົາມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະ ມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນແລ້ວກໍໄປເກີດໃນພົບນັ້ນ ແມ່ນໃນພົບນັ້ນເຮົາກໍໄດ້ມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນແລ້ວຈຶ່ງມາເກີດໃນພົບນີ້" ເຂົາລະລຶກເຖິງຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປ ແລະຊີວະປະຫວັດແນວນີ້ ເພາະການໄດ້ບັນລຸຄຸນວິເສດນີ້ ເຮົາຈຶ່ງຮູ້ອາການທີ່ອັດຕາ ແລະ ໂລກທ່ຽງຍັ້ງຍືນ ຕັ້ງໝັ້ນຢູ່ ຄື ຈອມພູ ຄື ເສົາພະນຽດ ສ່ວນສັດເຫຼົ່ານັ້ນຍ່ອມແລ່ນໄປ ທ່ອງທ່ຽວໄປ ຈຸຕິ ແລະເກີດ ແຕ່ມີສິ່ງທີ່ທ່ຽງຢູ່ແທ້"

ພິກຂຸທັງຫຼາຍ ນີ້ເປັນມູນເຫດທີ ໓ ເຊິ່ງສະມະນະພາມພວກໜຶ່ງອາໄສແລ້ວ ປາຣົບແລ້ວຈຶ່ງມີວາທະວ່າ ທ່ຽງ ບັນຍັດ ອັດຕາ ແລະ ໂລກ ວ່າທ່ຽງ

## ມູນເຫດທີ ໔

[໓໔] ໔. ອັນໜຶ່ງ ໃນມູນເຫດທີ ໔ ສະມະນະພາມຜູ້ຈະເລີນ ອາໄສຫຍັງ ປາຣົບຫຍັງຈຶ່ງມີວາທະວ່າທ່ຽງ ບັນຍັດອັດຕາ ແລະ ໂລກວ່າທ່ຽງ

ສະມະນະ ຫຼື ພາມລາງຄົນໃນໂລກນີ້ເປັນນັກຕັກກະ ເປັນນັກອະພິປັດຊະຍາ ສະແດງທັດສະ ນະຂອງຕົນຕາມຫຼັກເຫດຜົນ ແລະ ການຄາດຄະເນຄວາມຈິງແນວນີ້ ວ່າ "ອັດຕາ ແລະໂລກທ່ຽງ ຍັ້ງຍືນ ຕັ້ງໝັ້ນຢູ່ ຄື ຈອມພູ ຄື ເສົາພະນຽດ ສ່ວນສັດເຫຼົ່ານັ້ນ ຍ່ອມແລ່ນໄປທ່ອງທ່ຽວໄປ ຈຸຕິແລະ ເກີດ ແຕ່ມີສິ່ງທີ່ທ່ຽງຢູ່ແທ້"

ພິກຂຸທັງຫຼາຍ ນີ້ເປັນມູນເຫດທີ ໔ ເຊິ່ງສະມະນະພາມພວກໜຶ່ງ ອາໄສແລ້ວປາຣົບແລ້ວຈຶ່ງມີວາທະວ່າທ່ຽງ ບັນຍັດອັດຕາແລະໂລກວ່າທ່ຽງ

## ສະຫຼຸບສັດສະຕະວາທະ

[໓໕] ພິກຂຸທັງຫຼາຍ ສະມະນະພາມເຫຼົ່ານັ້ນ ມີວາທະວ່າທ່ຽງ ບັນຍັດອັດຕາ ແລະ ໂລກວ່າທ່ຽງ ດ້ວຍມູນເຫດ ໔ ແນວນີ້ແລ ກໍສະມະນະພາມເຫຼົ່ານັ້ນ ທຸກຈຶ່ພວກມີວາທະວ່າທ່ຽງບັນຍັດອັດຕາ ແລະ ໂລກວ່າທ່ຽງ ດ້ວຍມູນເຫດທັງ ໔ ແນວນີ້ ຫຼື ດ້ວຍມູນເຫດຢ່າງໃດຢ່າງໜຶ່ງໃນ ໔ ແນວນີ້ ບໍ່ນອກເໜືອໄປຈາກນີ້

[໓໖] ພິກຂຸທັງຫຼາຍ ເລື້ອງນີ້ຕະຖາຄົດຮູ້ຊັດແຈ້ງແລ້ວວ່າ ມູນເຫດແຫ່ງທິດຖິເຫຼົ່ານີ້ທີ່ບຸກຄົນຢຶດຖືແບວນີ້ແລ້ວ ຍ່ອມມີຄະຕິ ແລະ ພົບໜ້າແນວນັ້ນ ໆ ຕະຖາຄົດຮູ້ມູນເຫດນັ້ນຊັດແຈ້ງ ແລະ ຫຍັງຮູ້ຊັດແຈ້ງຍິ່ງຂື້ນໄປກວ່ານັ້ນອີກ ຈຶ່ງບໍ່ຢຶດໝັ້ນ ເມື່ອບໍ່ຢຶດໝັ້ນ ຈຶ່ງຮູ້ຄວາມດັບດ້ວຍຕົນເອງ ຮູ້ຄວາມເກີດ ຄວາມດັບຄຸນ ໂທດ ແລະ ອຸບາຍເຄື່ອງກຳຈັດເວທະນາອອກຕາມຄວາມເປັນຈິງ ຕະຖາຄົດຈຶ່ງຫຼຸດພົ້ນເພາະບໍ່ຢຶດໝັ້ນຖືໝັ້ນນີ້ເອງ

[໓໗] ພິກຂຸທັງຫຼາຍ ທຳເຫຼົ່ານີ້ແລ ເລິກເຊິ່ງເຫັນໄດ້ຍາກ ຮູ້ນຳໄດ້ຍາກ ສະຫງົບປະນີດໃຊ້ເຫດຜົນຄາດຄະເນເອົາບໍ່ໄດ້ ລະອຽດຮູ້ໄດ້ສະເພາະບັນດິດ ເຊິ່ງຕະຖາຄົດຮູ້ແຈ້ງໄດ້ເອງແລ້ວສັ່ງສອນຜູ້ອື່ນໃຫ້ຮູ້ແຈ້ງຕາມ ອັນເປັນເຫດໃຫ້ຄົນກ່າວຍ້ອງຍໍ ຕະຖາຄົນຖືກຕ້ອງຕາມຄວາມເປັນຈິງ.

**ພານະວານທີ ໑ ຈົບ**

## ເອກັດຈະສັດສະຕະວາທະ ໔

## ເຫັນວ່າອັດຕາແລະໂລກທ່ຽງບາງຢ່າງ

[໓໘] ພິກຂຸທັງຫຼາຍ ມີສະມະນະພາມພວກໜຶ່ງ ມີວາທະວ່າບາງຢ່າງທ່ຽງບາງຢ່າງບໍ່ທ່ຽງບັນຍັດອັດຕາ ແລະ ໂລກ ວ່າບາງຢ່າງທ່ຽງ ບາງຢ່າງບໍ່ທ່ຽງ ດ້ວຍມູນເຫດ ໔ ຢ່າງ ກໍສະມະນະພາມຜູ້ຈະເລີນເຫຼົ່ານັ້ນ ອາໄສຫຍັງ ປາຣົບຫຍັງ ຈຶ່ງມີວາທະວ່າ ບາງຢ່າງທ່ຽງບາງຢ່າງບໍ່ທ່ຽງ ບັນຍັດອັດຕາ ແລະ ໂລກ ວ່າບາງຢ່າງທ່ຽງ ບາງຢ່າງບໍ່ທ່ຽງ ດ້ວຍມູນເຫດ ໔ ຢ່າງນັ້ນ

[໓໙] ພິກຂຸທັງຫຼາຍ ສະໄໝໜຶ່ງ ເມື່ອລ່ວງການຜ່ານເວລາມາດົນນານແລ້ວໂລກນີ້ພິນາດໄປ ເມື່ອໂລກກຳລັງພິນາດຢູ່ ເຫຼົ່າສັດສ່ວນຫຼາຍພາກັນໄປເກີດເທິງອາພັດສະຣະພົມມະໂລກຈະນຶກ ຈະຄິດຫຍັງ ກໍສຳເລັດໄດ້ຕາມຄວາມປາດຖະໜາ ມີປີຕິເປັນອາຫານ ມີຣັດສະໝີແຜ່ອອກຈາກຮ່າງກາຍ ທ່ຽວສັນຈອນໄປໃນອາກາດ ຢູ່ໃນວິມານອັນງົດງາມສະຖິດຢູ່ແນວນັ້ນສັ່ງງການລະນານ

[໔໐] ສະໄໝຕໍ່ມາ ເມື່ອລ່ວງການຜ່ານເວລາໄປດົນນານ ໂລກນີ້ກັບຟື້ນຂື້ນມາອີກ ເມື່ອໂລກກຳລັງຟື້ນໂຕຂື້ນມາ ໃນວິມານຂອງພົມປາກົດວ່າວ່າງປ່າວຢູ່ ເວລານັ້ນສັດຜູ້ຈຸຕິຈາກຊັ້ນອາພັດສະຣະພົມມະໂລກເພາະສິ້ນອາຍຸໄຂ ຫຼື ເບິດບຸນ ໄດ້ພາກັນມາເກີດໃນວິມານພົມອັນວ່າງປ່າວ ຈະນຶກ ຈະຄິດຫຍັງ ກໍສຳເລັດໄດ້ຕາມຄວາມປາດຖະໜາ ມີປີຕິເປັນອາຫານ ມີຣັດສະໝີແຜ່ອອກຈາກຮ່າງກາຍ ທ່ຽວສັນຈອນໄປໃນອາກາດ ຢູ່ໃນວິມານອັນງົດງາມ ສະຖິດຢູ່ສັ່ງງການລະນານ

[໔໑] ເພາະການທີ່ສັດເຫຼົ່ານັ້ນ ໄດ້ຢູ່ໃນວິມານແຕ່ຜູ້ດຽວເປັນເວລາດົນນານ ຈຶ່ງເກີດເບື່ອໜ່າຍວ່າ ໂອໜໍ ແມ່ນສັດເຫຼົ່າອື່ນ ເພິ່ງມາເປັນແບບນີ້ແດ່ເຖີ້ນ ຕໍ່ມາສັດເຫຼົ່າອື່ນກໍມາຈຸຕິຈາກຊັ້ນອາພັດສະຣະພົມມະໂລກ ເພາະສິ້ນອາຍຸ ຫຼື ສິ້ນບຸນ ພາກັນມາເກີດໃນວິມານພົມເປັນຜູ້ຢູ່ຮ່ວມກັບສັດນັ້ນ ແມ່ນສັດພວກນັ້ນ ກໍນຶກຄິດຫຍັງກໍສຳເລັດໄດ້ຕາມຄວາມປາດຖະໜາ ມີປີຕິເປັນອາຫານ ມີຣັດສະໝີແຜ່ອອກຈາກຮ່າງກາຍ ທ່ຽວສັນຈອນໄປໃນອາກາດ ຢູ່ໃນວິມານອັນງົດງາມສະຖິດຢູ່ສັງງການລະນານ

[໔໘] ພິກຂຸທັງຫຼາຍ ບັນດາສັດຈຳພວກນັ້ນ ຜູ້ເກີດກ່ອນມີຄວາມຄິດເກີດຂຶ້ນແບບນີ້ວ່າ ເຮົາເປັນພົມ ເປັນທ້າວມະຫາພົມຜູ້ຍິ່ງໃຫຍ່ ບໍ່ມີໃຜຂົ່ມເຫັງໄດ້ ເຫັນຊັດແຈ້ງເປັນຜູ້ກຸມອຳນາດເປັນອິດສະຫຼະ ເປັນຜູ້ສ້າງຜູ້ບັນດານ ຜູ້ປະເສີດ ຜູ້ບົງການ ຜູ້ຊົງອຳນາດ ເປັນບິດາຂອງສັດຜູ້ເກີດມາແລ້ວ ແລະ ກຳລັງຈະໄປເກີດອີກ ເຮົາບັນດານສັດເຫຼົ່ານີ້ຂຶ້ນມາ ຍ້ອນເຫດໃດ? ຍ້ອນວ່າ ເຮົາເຄີຍມີຄວາມຄິດມາກ່ອນວ່າ ໂອໜໍ ແມ່ນສັດເຫຼົ່າອື່ນເພິ່ງມາເປັນແບບນີ້ແດ່ ເຮົາມີຄວາມຕັ້ງໃຈແບບນີ້ ແລະສັດເຫຼົ່ານີ້ ກໍໄດ້ມາເປັນແບບນີ້ຕາມນັ້ນແລ້ວ

ແມ່ນພວກສັດທີ່ເກີດພາຍຫຼັງ ກໍມີຄວາມຄິດແບບນີ້ວ່າ ທ່ານຜູ້ຈະເລີນນີ້ເປັນພຣະພົມເປັນທ້າວມະຫາພົມຜູ້ຍິ່ງໃຫຍ່ ບໍ່ມີໃຜຂົ່ມເຫັງໄດ້ ເຫັນຊັດແຈ້ງເປັນຜູ້ກຸມອຳນາດ ເປັນອິດສະຫຼະເປັນຜູ້ສ້າງຜູ້ບັນດານ ຜູ້ປະເສີດ ຜູ້ບົງການ ຜູ້ຊົງອຳນາດ ເປັນບິດາຂອງສັດຜູ້ເກີດມາແລ້ວແລະ ກຳລັງຈະເກີດຢູ່ ພຣະພົມຜູ້ຈະເລີນບັນດານພວກເຮົາຂຶ້ນມາ ຍ້ອນເຫດໃດ? ຍ້ອນວ່າພວກເຮົາໄດ້ເຫັນພຣະພົມອົງນີ້ ເກີດໃນບ່ອນນີ້ກ່ອນ ສ່ວນພວກເຮົາເກີດຂຶ້ນມາພາຍຫຼັງ

[໔໙] ພິກຂຸທັງຫຼາຍ ບັນດາສັດພວກນັ້ນ ຜູ້ເກີດກ່ອນ ມີອາຍຸຍືນ ຜິວພັນງົດງາມ ແລະມີສັກຫຼາຍກວ່າ ຜູ້ເກີດພາຍຫຼັງມີອາຍຸສັ້ນຜິວພັນບໍ່ງົດງາມ ແລະ ມີສັກນ້ອຍ.

## ມູນເຫດທີ ໑

[໔໔] ໕. (໑) ເມື່ອສັດຜູ້ຈຸຕິ (ເຄື່ອນ) ຈາກຊັ້ນນັ້ນລົງມາເປັນຄົນຢູ່ແບບນີ້ ເປັນເລື້ອງທີ່ເປັນໄປໄດ້ ເມື່ອເຂົາຈຸດຕິລົງມາເປັນຄົນ ອອກຈາກເຮືອນໄປບວດເປັນບັນພະຊິດ ເມື່ອບວດແລ້ວອາໄສຄວາມພຽນເຄື່ອງເຜົາກິເລດ ຄວາມພຽນທີ່ຕັ້ງໝັ້ນຢູ່ ຄວາມໝັ່ນປະກອບ ຄວາມບໍ່ປະໝາດ ແລະອາໄສການໃຊ້ຄວາມຄິດຢ່າງຖືກວິທີແລ້ວ ບັນລຸເຈໂຕສະມາທິ ທີ່ເປັນເຫດທຳຈິດໃຫ້ຕັ້ງໝັ້ນຢູ່ ລະລຶກເຖິງຊາດກ່ອນ ໆ ນັ້ນໄດ້ ຕໍ່ຈາກນັ້ນໄປລະລຶກບໍ່ໄດ້

ເຂົາຈຶ່ງເວົ້າແບບນີ້ວ່າ "ທ່ານຜູ້ເປັນພຣະພົມ ຜູ້ຈະເລີນ ເປັນທ້າວມະຫາພົມຜູ້ຍິ່ງໃຫຍ່ ບໍ່ມີໃຜຂົ່ມເຫັງໄດ້ ເຫັນຊັດແຈ້ງເປັນຜູ້ກຸມອຳນາດ ເປັນອິດສະຫຼະ ເປັນຜູ້ສ້າງຜູ້ບັນດານ ຜູ້ປະເສີດ ຜູ້ບົງການ ຜູ້ຊົງອຳນາດ ເປັນບິດາຂອງສັດຜູ້ເກີດແລ້ວ ແລະກຳລັງຈະເກີດ ພຣະພົມຜູ້

ຈະເລີນບັນດານພວກເຮົາຂຶ້ນມາ ທ່ານເປັນຜູ້ທ່ຽງແທ້ຍັ້ງຍືນຄົງທົນ ບໍ່ຜັນປ່ຽນແປໄປ ຈັກດຳຣົງຢູ່ທ່ຽງແທ້ແນວນັ້ນ ສ່ວນພວກເຮົາທີ່ພຣະພົມຜູ້ຈະເລີນນັ້ນ ບັນດານຂຶ້ນມາກັບເປັນຜູ້ບໍ່ທ່ຽງແທ້ບໍ່ຍັ້ງຍືນ ອາຍຸສັ້ນຕ້ອງຈຸຕິມາເປັນແນວນີ້"

ພິກຂຸທັງຫຼາຍ ນີ້ເປັນມູນເຫດທີ ໑ ເຊິ່ງ ສະມະນະພາມພວກໜຶ່ງອາໄສແລ້ວ ປາຣົບແລ້ວ ຈຶ່ງມີວາທະຂຶ້ນມາວ່າ ບາງຢ່າງທ່ຽງ ບາງຢ່າງບໍ່ທ່ຽງ ບັນຍັດອັດຕາ ແລະ ໂລກວ່າບາງຢ່າງທ່ຽງ ບາງຢ່າງບໍ່ທ່ຽງ.

## ມູນເຫດທີ ໔

[໔໕] ໖. (໔) ອັນໜຶ່ງ ໃນມູນເຫດທີ ໔ ສະມະນະພາມຜູ້ຈະເລີນອາໄສຫຍັງ ປາຣົບຫຍັງ ຈຶ່ງມີວາທະວ່າ ບາງຢ່າງທ່ຽງ ບາງຢ່າງບໍ່ທ່ຽງ ບັນຍັດອັດຕາ ແລະ ໂລກ ວ່າບາງຢ່າງທ່ຽງ ບາງຢ່າງບໍ່ທ່ຽງ ພິກຂຸທັງຫຼາຍ ມີເທວະດາພວກໜຶ່ງຊື່ວ່າ ຂິດຖາປະໂທສິກະ ເທວະດາພວກນັ້ນ ໝົກມຸ່ນຢູ່ໃນຄວາມສະໜຸກສະໜານ ສາລະວົນຢູ່ກັບຄວາມມ່ວນຊື່ນເກີນເວລາ ເມື່ອໝົກມຸ່ນຢູ່ໃນຄວາມສະໜຸກສະໜານ ສາລະວົນຢູ່ແນວນັ້ນເກີນເວລາ ຍ່ອມຫຼົງລືມສະຕິ ເພາະຫຼົງລືມສະຕິ ຈຶ່ງພາກັນຈຸຕິຈາກຊັ້ນນັ້ນລົງມາອີກ

[໔໖] ຂໍ້ທີ່ສັດຜູ້ຈຸຕິຈາກຊັ້ນນັ້ນລົງມາແລ້ວ ແນວນີ້ ເປັນເລື້ອງທີ່ເປັນໄປໄດ້ ເມື່ອເຂົາລົງມາເປັນແນວນີ້ ອອກຈາກເຮືອນໄປບວດເປັນບັນພະຊິດ ເມື່ອບວດແລ້ວອາໄສຄວາມພຽນເຄື່ອງເຜົາກິເລດ ຄວາມພຽນທີ່ຕັ້ງໝັ້ນຢູ່ ຄວາມໝັ່ນປະກອບຄວາມ ບໍ່ປະໝາດ ແລະ ອາໄສການໃຊ້ຄວາມຄິດຢ່າງຖືກວິທີແລ້ວ ບັນລຸເຈໂຕສະມາທິ ທີ່ເປັນເຫດທຳຈິດໃຫ້ຕັ້ງໝັ້ນຢູ່ ລະລຶກເຖິງຊາດກ່ອນນັ້ນໄດ້ ແຕ່ຕໍ່ຈາກຊາດນັ້ນໄປ ລະລຶກຊາດກຳເນີດບໍ່ໄດ້

ເຂົາຈຶ່ງເວົ້າແນວນີ້ວ່າ "ພວກເທວະດາຜູ້ຈະເລີນ ຜູ້ບໍ່ແມ່ນພວກຂິດຖາປະໂທສິກະບໍ່ໝົກມຸ່ນຢູ່ໃນຄວາມສະໜຸກສະໜານ ບໍ່ສາລະວົນຢູ່ກັບການມ່ວນຊື່ນເກີນເວລາ ເມື່ອບໍ່ໝົກມຸ່ນຢູ່ໃນຄວາມສະໜຸກສະໜານສາລະວົນຢູ່ກັບການມ່ວນຊື່ນເກີນເວລາ ຍ່ອມບໍ່ຫຼົງລືມສະຕິ ເພາະບໍ່ຫຼົງລືມສະຕິ ຈຶ່ງບໍ່ຈຸຕິຈາກຊັ້ນນັ້ນ ເປັນຜູ້ທ່ຽງແທ້ ຍັ້ງຍືນ ຄົງທົນບໍ່ຜັນປ່ຽນຈັກດຳຣົງຢູ່ທ່ຽງແທ້ເປັນແນວນັ້ນຢູ່ ສ່ວນພວກເຮົາເຫຼົ່າຂິດຖາປະໂທສິກະ ມົວແຕ່ໝົກມຸ່ນຢູ່ໃນຄວາມສະໜຸກສະໜານສາລະວົນຢູ່ກັບການມ່ວນຊື່ນເກີນເວລາ ເມື່ອໝົກມຸ່ນຢູ່ໃນຄວາມສະໜຸກສະໜານ ສາລະວົນຢູ່ກັບການມ່ວນຊື່ນເກີນເວລາ ຍ່ອມຫຼົງລືມສະຕິ ເພາະຫຼົງລືມສະຕິ ຈຶ່ງຕ້ອງຈຸຕິຈາກຊັ້ນນັ້ນ ເປັນຜູ້ບໍ່ທ່ຽງແທ້ ບໍ່ຍັ້ງຍືນ ມີອາຍຸສັ້ນຕ້ອງຈຸຕິມາເປັນແນວນີ້"

ພິກຂຸທັງຫຼາຍ ນີ້ເປັນມູນເຫດທີ ໔ ເຊິ່ງສະມະນະພາມພວກໜຶ່ງ ອາໄສແລ້ວປາຣົບແລ້ວຈຶ່ງມີວາທະວ່າ ບາງຢ່າງທ່ຽງ ບາງຢ່າງບໍ່ທ່ຽງ ບັນຍັດ ອັດຕາ ແລະ ໂລກ ວ່າ ບາງຢ່າງທ່ຽງບາງຢ່າງບໍ່ທ່ຽງ.

## ມູນເຫດທີ ๓

[໔໗] ໗. (๓) ອັນໜຶ່ງ ໃນມູນເຫດທີ ๓ ສະມະນະພາມຜູ້ຈະເລີນອາໄສຫຍັງ ປາຣົບຫຍັງ ຈຶ່ງມີວາທະວ່າ ບາງຢ່າງທ່ຽງ ບາງຢ່າງບໍ່ທ່ຽງ ບັນຍັດອັດຕາ ແລະ ໂລກວ່າ ບາງຢ່າງທ່ຽງ ບາງຢ່າງບໍ່ທ່ຽງ ພິກຂຸທັງຫຼາຍ ມີເທວະດາພວກໜຶ່ງຊື່ວ່າ ມະໂນປະໂທສິກະ ເທວະດາພວກນັ້ນ ມົວແຕ່ຈ້ອງຈັບຜິດກັນ ແລະ ກັນເກີນຄວນ ເມື່ອມົວແຕ່ຈ້ອງຈັບຜິດກັນ ແລະ ກັນເກີນໄປ ຈຶ່ງຄິດມຸ້ງຮ້າຍຕໍ່ກັນ ເມື່ອຄິດມຸ້ງຮ້າຍຕໍ່ກັນ ຈຶ່ງເມື່ອຍກາຍ ເມື່ອຍໃຈ ພາກັນຈຸຕິຈາກຊັ້ນນັ້ນລົງມາ

[໔໘] ສັດຜູ້ຈຸຕິຈາກຊັ້ນນັ້ນລົງມາແລ້ວ ມາເກີດເປັນຄົນແນວນີ້ ເປັນເລື້ອງທີ່ເປັນໄປໄດ້ ເມື່ອເຂົາອອກຈາກເຮືອນໄປບວດເປັນບັນພະຊິດ ອາໄສຄວາມພຽນເຄື່ອງເຜົາກິເລດຄວາມພຽນທີ່ຕັ້ງໝັ້ນຢູ່ ຄວາມໝັ່ນປະກອບ ຄວາມບໍ່ປະໝາດ ແລະອາໄສການໃຊ້ຄວາມຄິດຢ່າງຖືກວິທີບັນລຸເຈໂຕສະມາທິ ທີ່ເປັນເຫດທຳຈິດໃຫ້ຕັ້ງໝັ້ນຢູ່ ລະລຶກເຖິງຊາດກ່ອນນັ້ນໄດ້ ຕໍ່ຈາກຊາດນັ້ນໄປລະລຶກບໍ່ໄດ້

ເຂົາຈຶ່ງເວົ້າແນວນີ້ວ່າ "ພວກເທວະດາຜູ້ຈະເລີນ ຜູ້ບໍ່ແມ່ນເຫຼົ່າມະໂນປະໂທສິກະ ບໍ່ມົວແຕ່ຈ້ອງຈັບຜິດກັນ ແລະ ກັນເກີນຄວນ ເມື່ອບໍ່ມົວຖ້າແຕ່ຈ້ອງຈັບຜິດກັນ ແລະ ກັນເກີນຄວນກໍບໍ່ຄິດມຸ້ງຮ້າຍຕໍ່ກັນ ເມື່ອບໍ່ຄິດມຸ້ງຮ້າຍຕໍ່ກັນ ກໍບໍ່ເມື່ອຍກາຍ ເມື່ອຍໃຈ ຈຶ່ງບໍ່ຈຸຕິຈາກຊັ້ນນັ້ນ ເປັນຜູ້ທ່ຽງແທ້ ຍັ່ງຍືນ ຖາວອນ ບໍ່ຜັນປ່ຽນ ຈັກດຳຣົງຢູ່ທ່ຽງແທ້ເປັນແນວນັ້ນຢູ່ ສ່ວນພວກເຮົາເຫຼົ່າມະໂນປະໂທສິກະ ມົວແຕ່ຈ້ອງຈັບຜິດກັນ ແລະ ກັນເກີນຄວນ ເມື່ອມົວຈ້ອງຈັບຜິດກັນ ແລະກັນເກີນຄວນ ຈຶ່ງຄິດມຸ້ງຮ້າຍຕໍ່ກັນ ເມື່ອຄິດມຸ້ງຮ້າຍຕໍ່ກັນ ຈຶ່ງເມື່ອຍກາຍ ເມື່ອຍໃຈ ພາກັນຈຸຕິຈາກຊັ້ນນັ້ນ ເປັນຜູ້ບໍ່ທ່ຽງແທ້ ບໍ່ຍັ້ງຍືນ ບໍ່ຖາວອນ ອາຍຸສັ້ນຕ້ອງຈຸຕິມາເປັນແນວນີ້"

ພິກຂຸທັງຫຼາຍ ນີ້ເປັນມູນເຫດທີ ๓ ເຊິ່ງສະມະນະພາມພວກໜຶ່ງ ອາໄສແລ້ວ ປາຣົບແລ້ວ ຈຶ່ງມີວາທະວ່າບາງຢ່າງທ່ຽງ ບາງຢ່າງບໍ່ທ່ຽງ ບັນຍັດອັດຕາ ແລະ ໂລກວ່າບາງຢ່າງທ່ຽງບາງຢ່າງບໍ່ທ່ຽງ.

## ມູນເຫດທີ ໔

[໔໙] ໘. (໔) ອັນໜຶ່ງ ໃນມູນເຫດທີ ໔ ສະມະນະພາມຜູ້ຈະເລີນ ອາໄສຫຍັງ ປາຣົບຫຍັງ ຈຶ່ງມີວາທະວ່າ ບາງຢ່າງທ່ຽງ ບາງຢ່າງບໍ່ທ່ຽງ ບັນຍັດອັດຕາ ແລະ ໂລກວ່າ ບາງຢ່າງທ່ຽງ ບາງຢ່າງບໍ່ທ່ຽງ ພິກຂຸທັງຫຼາຍ ສະມະນະພາມລາງຄົນໃນໂລກນີ້ ເປັນນັກຕັກກະ ເປັນນັກອະພິປັດຊະຍາ ສະແດງທັດສະນະຂອງຕົນຕາມຫຼັກເຫດຜົນ ແລະ ການຄາດຄະເນຄວາມຈິງແນວນີ້ວ່າ "ສິ່ງທີ່ຮຽກວ່າຕາ ຫູ ດັງ ລີ້ນ ກາຍ ນີ້ຮຽກວ່າ ອັດຕາ ເປັນຂອງບໍ່ທ່ຽງແທ້ ບໍ່ຍັ້ງຍືນ

ບໍ່ຖາວອນ ຕ້ອງຜັນປ່ຽນແປໄປ ສ່ວນສິ່ງທີ່ຮຽກວ່າ ຈິດໃຈ ວິນຍານ ນີ້ຮຽກວ່າ ອັດຕາ ເປັນຂອງທ່ຽງແທ້ ຍັ້ງຍືນ ຄົງທົນ ບໍ່ຜັນປ່ຽນແປໄປ ຈັກດຳຣົງຢູ່ທ່ຽງແທ້ ເປັນແນວນັ້ນຢູ່ ສ້ຽງການລະນານ”

ພິກຂຸທັງຫຼາຍ ນີ້ເປັນມູນເຫດທີ ໔ ເຊິ່ງສະມະນະພາມພວກໜຶ່ງ ອາໄສແລ້ວປາຣົບແລ້ວ ຈຶ່ງມີວາທະວ່າ ບາງຢ່າງທ່ຽງ ບາງຢ່າງບໍ່ທ່ຽງ ບັນຍັດອັດຕາ ແລະ ໂລກ ວ່າບາງຢ່າງທ່ຽງ ບາງຢ່າງບໍ່ທ່ຽງ.

## ສະຫຼຸບເອກັດຈະສັດສະຕະວາທະ

[໕໐] ພິກຂຸທັງຫຼາຍ ສະມະນະພາມເຫຼົ່ານັ້ນ ມີວາທະວ່າບາງຢ່າງທ່ຽງ ບາງຢ່າງບໍ່ທ່ຽງ ບັນຍັດອັດຕາ ແລະ ໂລກ ວ່າບາງຢ່າງທ່ຽງ ບາງຢ່າງບໍ່ທ່ຽງ ດ້ວຍມູນເຫດ ໔ ແນວນີ້ແລ ກໍສະມະ ນະພາມເຫຼົ່ານັ້ນ ທຸກຈໍ່ພວກມີວາທະວ່າ ບາງຢ່າງທ່ຽງ ບາງຢ່າງບໍ່ທ່ຽງ ບັນຍັດອັດຕາ ແລະ ໂລກວ່າບາງຢ່າງທ່ຽງ ບາງຢ່າງບໍ່ທ່ຽງ ດ້ວຍມູນເຫດທັງ ໔ ແນວນີ້ ຫຼື ດ້ວຍມູນເຫດຢ່າງໃດຢ່າງໜຶ່ງໃນ ໔ ແນວນີ້ ບໍ່ນອກເໜືອໄປຈາກນີ້

[໕໑] ພິກຂຸທັງຫຼາຍ ເລື້ອງນີ້ຕະຖາຄົດຮູ້ຊັດແຈ້ງວ່າ ມູນເຫດແຫ່ງທິດຖິເຫຼົ່ານີ້ ທີ່ບຸກຄົນຢຶດຖືແນວນີ້ແລ້ວ ຍ່ອມມີຄະຕິ ແລະ ພົບໜ້າແນວນັ້ນ ໆ ຕະຖາຄົດຮູ້ມູນເຫດນັ້ນຊັດແຈ້ງ ແລະ ຮູ້ຍິ່ງຂຶ້ນໄປກວ່ານັ້ນອີກ ຈຶ່ງບໍ່ຢຶດໝັ້ນ ເມື່ອບໍ່ຢຶດໝັ້ນ ຈຶ່ງຮູ້ຄວາມດັບດ້ວຍຕົນເອງ ຮູ້ຄວາມເກີດ ຄວາມດັບ ຄຸນໂທດແລະ ອຸບາຍເຄື່ອງກຳຈັດເວທະນາອອກຕາມຄວາມເປັນຈິງ ຕະຖາຄົດຈຶ່ງຫຼຸດພົ້ນເພາະບໍ່ຢຶດໝັ້ນຖືໝັ້ນ

[໕໔] ພິກຂຸທັງຫຼາຍ ທຳເຫຼົ່ານີ້ແລ ເລິກເຊິ່ງ ເຫັນໄດ້ຍາກ ຮູ້ນຳໄດ້ຍາກ ສະຫງົບ ປະນີດ ໃຊ້ເຫດຜົນການຄາດຄະເນເອົາບໍ່ໄດ້ ລະອຽດ ຮູ້ໄດ້ສະເພາະບັນດິດ ເຊິ່ງຕະຖາຄົດຮູ້ແຈ້ງໄດ້ເອງ ແລ້ວສັ່ງສອນຜູ້ອື່ນໃຫ້ຮູ້ແຈ້ງນຳ ອັນເປັນເຫດໃຫ້ຄົນກ່າວຍ້ອງຍໍຕະຖາຄົນຖືກຕ້ອງຕາມຄວາມເປັນຈິງ.

## ອັນຕານັນຕິກະວາທະ ໔

## ເຫັນວ່າໂລກມີທີ່ສຸດໂລກບໍ່ມີທີ່ສຸດ

[໕໓] ພິກຂຸທັງຫຼາຍ ມີສະມະນະພາມພວກໜຶ່ງ ມີວາທະວ່າໂລກມີທີ່ສຸດ ໂລກບໍ່ມີທີ່ສຸດ ບັນຍັດວ່າໂລກມີທີ່ສຸດ ໂລກບໍ່ມີທີ່ສຸດ ດ້ວຍມູນເຫດ ໔ ຢ່າງ ກໍສະມະນະພາມຜູ້ຈະເລີນເຫຼົ່ານັ້ນ

ອາໄສຫຍັງ ປາຣົບຫຍັງ ຈຶ່ງມີວາທະວ່າໂລກມີທີ່ສຸດ ໂລກບໍ່ມີທີ່ສຸດ ບັນຍັດວ່າ ໂລກມີທີ່ສຸດ ໂລກບໍ່ມີທີ່ສຸດດ້ວຍມູນເຫດ ໔ ຢ່າງ

## ມູນເຫດທີ ໑

[໕໔] ໗. (໑) ພິກຂຸທັງຫຼາຍ ສະມະນະ ຫຼື ພາມລາງຄົນໃນໂລກນີ້ ອາໄສຄວາມພຽນ ເຄື່ອງເຜົາກິເລດ ຄວາມພຽນທີ່ຕັ້ງໝັ້ນຢູ່ ຄວາມໝັ່ນປະກອບ ຄວາມບໍ່ປະໝາດ ແລະ ອາໃສການໃຊ້ຄວາມຄິດຢ່າງຖືກວິທີ ແລ້ວບັນລຸເຈໂຕສະມາທິ ອັນເປັນເຫດທຳຈິດໃຫ້ຕັ້ງໝັ້ນຢູ່ ຈຶ່ງເຂົ້າໃຈວ່າໂລກມີທີ່ສຸດ

ເຂົາຈຶ່ງເວົ້າແບບນີ້ວ່າ "ໂລກນີ້ມີທີ່ສຸດ ມີສັນຖານມົນ ເພາະເຫດຫຍັງ? ເພາະເຮົາອາໄສຄວາມພຽນ ເຄື່ອງເຜົາກິເລດ ຄວາມພຽນທີ່ຕັ້ງໝັ້ນຢູ່ ຄວາມໝັ່ນປະກອບ ຄວາມບໍ່ປະໝາດ ແລະອາໄສການໃຊ້ຄວາມຄິດຢ່າງຖືກວິທີ ແລ້ວບັນລຸເຈໂຕສະມາທິ ອັນເປັນເຫດທຳຈິດໃຫ້ຕັ້ງໝັ້ນຢູ່ ຈຶ່ງເຂົ້າໃຈວ່າໂລກມີທີ່ສຸດ ເພາະການບັນລຸຄຸນວິເສດນີ້ ເຮົາຈຶ່ງຮູ້ອາການທີ່ໂລກນີ້ມີທີ່ສຸດ ແລະ ມີສັນ ຖານມົນ"

ພິກຂຸທັງຫຼາຍ ນີ້ເປັນມູນເຫດທີ ໑ ເຊິ່ງສະມະນະພາມພວກໜຶ່ງ ອາໄສແລ້ວປາຣົບແລ້ວ ຈຶ່ງມີວາທະວ່າໂລກມີທີ່ສຸດ ໂລກບໍ່ມີທີ່ສຸດ ບັນຍັດວ່າ ໂລກມີທີ່ສຸດ ໂລກບໍ່ມີທີ່ສຸດ.

## ມູນເຫດທີ ໔

[໕໕] ໑໐. (໔) ອັນໜຶ່ງ ໃນມູນເຫດທີ ໔ ສະມະນະພາມຜູ້ຈະເລີນ ອາໄສຫຍັງ ປາຣົບຫຍັງ ຈຶ່ງມີວາທະວ່າໂລກມີທີ່ສຸດ ໂລກບໍ່ມີທີ່ສຸດ ບັນຍັດວ່າໂລກມີທີ່ສຸດ ໂລກບໍ່ມີທີ່ສຸດພິກຂຸທັງຫຼາຍ ສະມະນະ ຫຼື ພາມລາງຄົນໃນໂລກນີ້ ອາໄສຄວາມພຽນເຄື່ອງເຜົາກິເລດ ຄວາມພຽນທີ່ຕັ້ງໝັ້ນຢູ່ ຄວາມໝັ່ນປະກອບ ຄວາມບໍ່ປະໝາດ ແລະ ອາໄສການໃຊ້ຄວາມຄິດຢ່າງຖືກວິທີ ບັນລຸເຈໂຕສະມາທິອັນເປັນເຫດທຳຈິດໃຫ້ຕັ້ງໝັ້ນຢູ່ ຈຶ່ງເຂົ້າໃຈວ່າໂລກບໍ່ມີທີ່ສຸດ

ເຂົາຈຶ່ງເວົ້າແບບນີ້ວ່າ "ໂລກນີ້ບໍ່ມີທີ່ສຸດ ຫາບ່ອນສ້ຽງສຸດບໍ່ໄດ້ ສະມະນະພາມທີ່ເວົ້າແບບນີ້ວ່າໂລກນີ້ມີທີ່ສຸດ ມີສັນຖານມົນ ເປັນຜູ້ເວົ້າຕົວະ ແທ້ຈິງແລ້ວ ໂລກນີ້ບໍ່ມີທີ່ສຸດ ຫາບ່ອນສ້ຽງສຸດບໍ່ໄດ້ ເພາະເຫດໃດ ເພາະເຮົາອາໄສຄວາມພຽນ ເຄື່ອງເຜົາກິເລດ ຄວາມພຽນທີ່ຕັ້ງໝັ້ນ ຄວາມໝັ່ນປະກອບ ຄວາມບໍ່ປະໝາດ ແລະອາໄສການໃຊ້ຄວາມຄິດຢ່າງຖືກວິທີ ແລ້ວບັນລຸເຈໂຕສະມາທິ ອັນເປັນເຫດທຳຈິດໃຫ້ຕັ້ງໝັ້ນຢູ່ ຈຶ່ງເຂົ້າໃຈວ່າໂລກນີ້ບໍ່ມີທີ່ສຸດ ຫາບ່ອນສ້ຽງສຸດບໍ່ໄດ້ ເພາະການບັນລຸຄຸນວິເສດນີ້ ເຮົາຈຶ່ງຮູ້ອາການທີ່ໂລກນີ້ບໍ່ມີທີ່ສຸດ ຫາບ່ອນສ້ຽງສຸດບໍ່ໄດ້"

ພິກຂຸທັງຫຼາຍ ນີ້ເປັນມູນເຫດທີ ໔ ເຊິ່ງສະມະນະພາມພວກໜຶ່ງອາໄສແລ້ວ ປາຣົບແລ້ວ ຈຶ່ງມີວາທະວ່າໂລກມີທີ່ສຸດ ໂລກບໍ່ມີທີ່ສຸດ ບັນຍັດວ່າ ໂລກມີທີ່ສຸດ ໂລກບໍ່ມີທີ່ສຸດ.

## ມູນເຫດທີ ໓

[໕໙] ໑໑. (໓) ອັນໜຶ່ງ ໃນມູນເຫດທີ ໓ ສະມະນະພາມຜູ້ຈະເລີນອາໄສອັນໃດ? ປາຣົບອັນໃດ? ຈຶ່ງມີວາທະວ່າໂລກມີທີ່ສຸດ ໂລກບໍ່ມີທີ່ສຸດ ບັນຍັດວ່າໂລກມີທີ່ສຸດ ໂລກບໍ່ມີທີ່ສຸດ ພິກຂຸທັງຫຼາຍ ສະມະນະ ຫຼື ພາມລາງຄົນໃນໂລກນີ້ ອາໄສຄວາມພຽນເຄື່ອງເຜົາກິເລດ ຄວາມພຽນທີ່ຕັ້ງໝັ້ນຢູ່ ຄວາມໝັ່ນປະກອບ ຄວາມບໍ່ປະໝາດ ແລະອາໄສການໃຊ້ຄວາມຄິດຢ່າງຖືກວິທີ ແລ້ວບັນລຸເຈໂຕສະມາທິ ທີ່ເປັນເຫດທຳຈິດໃຫ້ຕັ້ງໝັ້ນຢູ່ ຈຶ່ງເຂົ້າໃຈໂລກວ່າທາງເທິງ ທາງລຸ່ມມີທີ່ສຸດ ລວງຂວາງບໍ່ມີທີ່ສຸດ

ເຂົາຈຶ່ງເວົ້າແບບນີ້ວ່າ "ໂລກນີ້ມີທີ່ສຸດ ແລະ ບໍ່ມີທີ່ສຸດ ສະມະນະພາມທີ່ເວົ້າແບບນີ້ວ່າ ໂລກນີ້ມີທີ່ສຸດ ມີສັນຖານມົນ ເປັນຜູ້ເວົ້າຕົວະ ແມ່ນສະມະນະພາມທີ່ກ່າວແບບນີ້ວ່າ ໂລກນີ້ບໍ່ມີທີ່ສຸດ ຫາບ່ອນສັ້ງສຸດບໍ່ໄດ້ ກໍເປັນຜູ້ເວົ້າຕົວະ ແທ້ຈິງແລ້ວໂລກນີ້ມີທີ່ສຸດ ແລະບໍ່ມີທີ່ສຸດ ເພາະເຫດໃດ? ເພາະເຮົາອາໄສຄວາມພຽນເຄື່ອງເຜົາກິເລດ ຄວາມພຽນທີ່ຕັ້ງໝັ້ນຢູ່ ຄວາມໝັ່ນປະກອບ ຄວາມບໍ່ປະໝາດ ແລະອາໄສການໃຊ້ຄວາມຄິດຢ່າງຖືກວິທີ ບັນລຸເຈໂຕສະມາທິ ອັນເປັນເຫດທຳຈິດໃຫ້ຕັ້ງໝັ້ນຢູ່ ຈຶ່ງເຂົ້າໃຈໂລກວ່າທາງເທິງ ທາງລຸ່ມມີທີ່ສຸດ ລວງຂວາງບໍ່ມີທີ່ສຸດ ເພາະການບັນລຸຄຸນວິເສດນີ້ ເຮົາຈຶ່ງຮູ້ອາການທີ່ໂລກນີ້ ທັງມີທີ່ສຸດ ແລະ ບໍ່ມີທີ່ສຸດ"

ພິກຂຸທັງຫຼາຍ ນີ້ເປັນມູນເຫດທີ ໓ ເຊິ່ງສະມະນະພາມພວກໜຶ່ງ ອາໄສແລ້ວ ປາຣົບແລ້ວ ຈຶ່ງມີວາທະວ່າ ໂລກມີທີ່ສຸດໂລກບໍ່ມີທີ່ສຸດ ບັນຍັດວ່າໂລກມີທີ່ສຸດ ໂລກບໍ່ມີທີ່ສຸດ.

## ມູນເຫດທີ ໔

[໕໗] ໑໘. (໔) ອັນໜຶ່ງ ໃນມູນເຫດທີ ໔ ສະມະນະພາມຜູ້ຈະເລີນ ອາໄສອັນໃດ? ປາຣົບອັນໃດ ຈຶ່ງມີວາທະວ່າ ໂລກມີທີ່ສຸດ ໂລກບໍ່ມີທີ່ສຸດ ບັນຍັດວ່າ ໂລກມີທີ່ສຸດ ໂລກບໍ່ມີທີ່ສຸດ ພິກຂຸທັງຫຼາຍ ສະມະນະ ຫຼື ພາມລາງຄົນໃນໂລກນີ້ເປັນນັກຕັກກະ ເປັນນັກອະພິປັດຊະຍາ ສະແດງທັດສະນະຂອງຕົນຕາມຫຼັກເຫດຜົນ ແລະ ການຄາດຄະເນຄວາມຈິງແບບນີ້ວ່າ "ໂລກນີ້ມີທີ່ສຸດກໍບໍ່ແມ່ນ ບໍ່ມີທີ່ສຸດກໍບໍ່ແມ່ນ ສະມະນະພາມທີ່ເວົ້າແບບນີ້ວ່າ ໂລກນີ້ມີທີ່ສຸດ ມີສັນຖານມົນ ເປັນຜູ້ເວົ້າຕົວະ ແມ່ນສະມະນະພາມທີ່ເວົ້າແບບນີ້ວ່າ ໂລກນີ້ບໍ່ມີທີ່ສຸດຫາບ່ອນສັ້ງສຸດບໍ່ໄດ້ ກໍເປັນຜູ້ເວົ້າຕົວະ ແມ່ນສະມະນະພາມທີ່ເວົ້າແບບນີ້ວ່າໂລກນີ້ທັງມີທີ່ສຸດ ແລະ ບໍ່ມີທີ່ສຸດ ກໍເປັນຜູ້ເວົ້າຕົວະ ທີ່ຈິງແລ້ວໂລກນີ້ມີທີ່ສຸດກໍບໍ່ແມ່ນ ບໍ່ມີທີ່ສຸດກໍບໍ່ແມ່ນ"

ພິກຂຸທັງຫຼາຍ ນີ້ເປັນມູນເຫດທີ ໔ ເຊິ່ງສະມະນະພາມພວກໜຶ່ງ ອາໄສແລ້ວ ປາຣົບແລ້ວ ຈຶ່ງມີວາທະວ່າໂລກມີທີ່ສຸດ ໂລກບໍ່ມີທີ່ສຸດ ບັນຍັດວ່າໂລກມີທີ່ສຸດ ໂລກບໍ່ມີທີ່ສຸດ.

## ສະຫຼຸບອັນຕານັນຕິກະວາທະ

[໕໗] ພິກຂຸທັງຫຼາຍ ສະມະນະພາມເຫຼົ່ານັ້ນ ມີວາທະວ່າໂລກມີທີ່ສຸດໂລກບໍ່ມີທີ່ສຸດ ບັນຍັດວ່າໂລກມີທີ່ສຸດໂລກບໍ່ມີທີ່ສຸດດ້ວຍມູນເຫດ ໔ ແນວນີ້ແລ ກໍສະມະນະພາມເຫຼົ່ານັ້ນທຸກໆພວກ ບັນຍັດວ່າໂລກມີທີ່ສຸດໂລກບໍ່ມີທີ່ສຸດ ດ້ວຍມູນເຫດທັງ ໔ ແນວນີ້ ຫຼື ດ້ວຍມູນເຫດຢ່າງໃດຢ່າງໜຶ່ງໃນ ໔ ແນວນີ້ ບໍ່ນອກເໜືອໄປຈາກນີ້

[໕໘] ພິກຂຸທັງຫຼາຍ ເລື້ອງນີ້ຕະຖາຄົດຮູ້ຊັດແຈ້ງວ່າ ມູນເຫດແຫ່ງທິດຖິເຫຼົ່ານີ້ ທີ່ບຸກຄົນຍຶດຖືແນວນີ້ແລ້ວຍ່ອມມີຄະຕິ ແລະ ພົບໜ້າແນວນັ້ນ ໆ ຕະຖາຄົດຮູ້ມູນເຫດນັ້ນຊັດແຈ້ງ ແລະຫຍັງຮູ້ຊັດແຈ້ງຍິ່ງຂຶ້ນໄປກວ່ານັ້ນອີກຈຶ່ງບໍ່ຍຶດໝັ້ນເມື່ອບໍ່ຍຶດໝັ້ນຈຶ່ງຮູ້ຄວາມດັບດ້ວຍຕົນເອງຮູ້ຄວາມເກີດຄວາມດັບຄຸນໂທດ ແລະ ອຸບາຍເຄື່ອງກຳຈັດເວທະນາອອກຕາມຄວາມເປັນຈິງຕະຖາຄົດຈຶ່ງຫຼຸດພົ້ນເພາະບໍ່ຍຶດໝັ້ນຖືໝັ້ນ

[໖໐] ພິກຂຸທັງຫຼາຍ ທຳເຫຼົ່ານີ້ແລ ເລິກເຊິ່ງ ເຫັນໄດ້ຍາກ ຮູ້ນຳໄດ້ຍາກ ສະຫງົບປະນີດ ໃຊ້ເຫດຜົນຄາດຄະເນເອົາບໍ່ໄດ້ ລະອຽດຮູ້ໄດ້ສະເພາະບັນດິດ ເຊິ່ງຕະຖາຄົດຮູ້ແຈ້ງໄດ້ເອງແລ້ວສັ່ງ ສອນຜູ້ອື່ນໃຫ້ຮູ້ແຈ້ງຕາມ ອັນເປັນເຫດໃຫ້ຄົນກ່າວຍ້ອງຍໍຕະຖາຄົນຖືກຕ້ອງຕາມຄວາມເປັນຈິງ.

## ອະມະຣາວິກເຂປະວາທະ ໑໔

## ຄວາມເຫັນຫຼົບລ້ຽງບໍ່ຕາຍໂຕ

[໖໑] ພິກຂຸທັງຫຼາຍ ມີສະມະນະພາມພວກໜຶ່ງ ມີວາທະຫຼົບລ້ຽງບໍ່ຕາຍໂຕ ເມື່ອຖືກຖາມບັນຫາໃນເລື້ອງນັ້ນ ໆ ຍ່ອມກ່າວຫຼົບລ້ຽງບໍ່ຕາຍໂຕດ້ວຍມູນເຫດ ໔ ຢ່າງ ກໍສະມະນະພາມຜູ້ຈະເລີນເຫຼົ່ານັ້ນ ອາໄສອັນໃດ?ປາຣົບອັນໃດ? ຈຶ່ງມີວາທະຫຼົບລ້ຽງບໍ່ຕາຍໂຕ ເມື່ອຖືກຖາມບັນຫາໃນເລື້ອງ ນັ້ນ ໆ ຍ່ອມກ່າວຫຼົບລ້ຽງບໍ່ຕາຍໂຕດ້ວຍມູນເຫດ ໔ ຢ່າງ

## ມູນເຫດທີ ໑

[໖໔] ໑໓. (໑) ພິກຂຸທັງຫຼາຍ ສະມະນະ ຫຼື ພາມລາງຄົນໃນໂລກນີ້ບໍ່ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ສິ່ງນີ້ເປັນກຸສົນຫຼືເປັນອະກຸສົນ" ເຂົາມີຄວາມເຫັນແນວນີ້ວ່າ "ເຮົາບໍ່ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ ສິ່ງນີ້ເປັນກຸສົນ ຫຼື ເປັນອະກຸສົນ ກໍຖ້າເຮົາບໍ່ຮູ້ຊັດແຈ້ງວ່າ ສິ່ງນີ້ເປັນ

ກຸສົນ ຫຼື ເປັນອະກຸສົນ ຈະເພິ່ງຕອບວ່າ ສິ່ງນີ້ເປັນກຸສົນ ຫຼື ເປັນອະກຸສົນ ຄຳຕອບກໍຈະເປັນການເວົ້າຕົວະໄປ ຄຳເວົ້າຕົວະນັ້ນ ຈະນຳຄວາມເດືອດຮ້ອນ ນຳອັນຕະລາຍມາໃຫ້ແກ່ເຮົາໄດ້" ດັ່ງນັ້ນ ເຂົາຈຶ່ງຕອບວ່າ "ສິ່ງນີ້ເປັນກຸສົນກໍບໍ່ແມ່ນ ເປັນອະກຸສົນກໍບໍ່ແມ່ນ" ເພາະຢ້ານ ແລະ ລັງກຽດການເວົ້າຕົວະ ເມື່ອຖືກຖາມບັນຫາໃນເລື້ອງນັ້ນ ໆ ຈຶ່ງກ່າວຫຼົບລັ້ງງ ບໍ່ຕາຍໂຕວ່າ "ເຮົາມີຄວາມເຫັນວ່າ ແນວນີ້ກໍບໍ່ແມ່ນແນວນັ້ນກໍບໍ່ແມ່ນ ຢ່າງອື່ນກໍບໍ່ແມ່ນ ຈະວ່າບໍ່ແມ່ນກໍບໍ່ແມ່ນ ຈະວ່າບໍ່ແມ່ນບໍ່ແມ່ນກໍບໍ່ແມ່ນ"

ພິກຂຸທັງຫຼາຍ ນີ້ເປັນມູນເຫດທີ ໑ ເຊິ່ງສະມະນະພາມພວກໜຶ່ງ ອາໄສແລ້ວ ປາຣົບແລ້ວ ຈຶ່ງມີວາທະຫຼົບລັ້ງງ ບໍ່ຕາຍໂຕ ເມື່ອຖືກຖາມບັນຫາໃນເລື້ອງນັ້ນ ໆ ຍ່ອມກ່າວຫຼົບລັ້ງງບໍ່ຕາຍໂຕ.

## ມູນເຫດທີ ໔

[໖໓] ໑໔. (໔) ອັນໜຶ່ງ ໃນມູນເຫດທີ ໔ ສະມະນະພາມຜູ້ຈະເລີນອາໄສອັນໃດ? ປາຣົບອັນໃດ? ຈຶ່ງມີວາທະຫຼົບລັ້ງງ ບໍ່ຕາຍໂຕ ເມື່ອຖືກຖາມບັນຫາໃນເລື້ອງນັ້ນ ໆ ຍ່ອມກ່າວຫຼົບລັ້ງງບໍ່ຕາຍໂຕ ພິກຂຸທັງຫຼາຍ ສະມະນະ ຫຼື ພາມລາງຄົນໃນໂລກນີ້ ບໍ່ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ສິ່ງນີ້ເປັນກຸສົນ ຫຼື ເປັນອະກຸສົນ" ເຂົາມີຄວາມເຫັນແນວນີ້ວ່າ "ເຮົາບໍ່ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າສິ່ງນີ້ເປັນກຸສົນ ຫຼື ເປັນອະກຸສົນ ກໍຖ້າເຮົາບໍ່ຮູ້ຊັດແຈ້ງວ່າ ສິ່ງນີ້ເປັນກຸສົນ ຫຼື ເປັນອະກຸສົນ ກໍຈະເພິ່ງຕອບວ່າ ສິ່ງນີ້ເປັນກຸສົນ ຫຼື ເປັນອະກຸສົນສັນທະ (ຄວາມພໍໃຈ) ຣາຄະ (ຄວາມກຳໜັດ) ໂທສະ (ຄວາມຂັດ ເຄືອງ) ປະຕິຄະ (ຄວາມຂັດໃຈ) ກໍຈະເພິ່ງມີແກ່ເຮົາໄດ້ ເລື້ອງນີ້ຈະເປັນເຫດໃຫ້ເຮົາຢຶດໝັ້ນອັນຈະນຳຄວາມເດືອດຮ້ອນ ນຳອັນຕະລາຍມາໃຫ້ແກ່ເຮົາໄດ້" ດັ່ງນັ້ນ ເຂົາຈຶ່ງຕອບວ່າ "ສິ່ງນີ້ເປັນກຸສົນກໍບໍ່ແມ່ນ ເປັນອະກຸສົນກໍບໍ່ແມ່ນ" ເພາະຢ້ານແລະ ລັງກຽດການຢຶດໝັ້ນ ເມື່ອຖືກຖາມບັນຫາໃນເລື້ອງນັ້ນໆ ຈຶ່ງກ່າວຫຼົບລັ້ງງບໍ່ຕາຍໂຕວ່າ "ເຮົາມີຄວາມເຫັນວ່າແນວນີ້ກໍບໍ່ແມ່ນ ແນວນັ້ນກໍບໍ່ແມ່ນ ຢ່າງອື່ນກໍບໍ່ແມ່ນ ຈະວ່າບໍ່ແມ່ນກໍບໍ່ແມ່ນ ຈະວ່າບໍ່ແມ່ນບໍ່ແມ່ນກໍບໍ່ແມ່ນ"

ພິກສຸທັງຫຼາຍ ນີ້ເປັນມູນເຫດທີ ໔ ເຊິ່ງສະມະນະພາມພວກໜຶ່ງ ອາໄສແລ້ວ ປາຣົບແລ້ວ ຈຶ່ງມີວາທະຫຼົບລັ້ງງບໍ່ຕາຍໂຕ ເມື່ອຖືກຖາມບັນຫາໃນເລື້ອງນັ້ນ ໆ ຍ່ອມກ່າວຫຼົບລັ້ງງບໍ່ຕາຍໂຕ.

## ມູນເຫດທີ ໓

[໖໔] ໑໕.(໓) ອັນໜຶ່ງ ໃນມູນເຫດທີ ໓ ສະມະນະພາມຜູ້ຈະເລີນ ອາໄສອັນໃດ? ປາຣົບອັນໃດ? ຈຶ່ງມີວາທະຫຼົບລັ້ງງບໍ່ຕາຍໂຕ ເມື່ອຖືກຖາມບັນຫາໃນເລື້ອງນັ້ນ ໆ ຍ່ອມກ່າວຫຼົບ

ລັ່ງບໍ່ຕາຍໂຕ ພິກຂຸທັງຫຼາຍ ສະມະນະ ຫຼື ພາມລາງຄົນໃນໂລກນີ້ ບໍ່ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ "ສິ່ງນີ້ເປັນກຸສົນ ຫຼື ເປັນອະກຸສົນ" ເຂົາມີຄວາມເຫັນແນວນີ້ວ່າ "ເຮົາບໍ່ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ ສິ່ງນີ້ເປັນກຸສົນ ຫຼື ເປັນອະກຸສົນ ກໍຖ້າເຮົາບໍ່ຮູ້ຊັດແຈ້ງວ່າ ສິ່ງນີ້ເປັນກຸສົນ ຫຼື ເປັນອະກຸສົນແລ້ວຕອບວ່າສິ່ງນີ້ເປັນກຸສົນ ຫຼື ເປັນອະກຸສົນ ສະມະນະພາມຜູ້ເປັນບັນດິດມີປັນຍາເລີກເຊິ່ງ ຜູ້ຊຳນານການໂຕ້ວາທະແມ່ນຍຳ ຄື ນັກຍິງທະນູມີຢູ່ ສະມະນະພາມເຫຼົ່ານັ້ນ ຈະທ່ຽວກ່າວແກ້ທິດຖິດ້ວຍປັນຍາ ພວກເຂົາຈະຊັກໄຊ້ ໄລ່ລຽງ ສອບສວນເຮົາໃນເລື້ອງນີ້ ຖ້າເຮົາບໍ່ອາດໂຕ້ຕອບແກ້ບັນຫາໄດ້ຈົນເຖິງທີ່ສຸດ ການໂຕ້ຕອບບັນຫາບໍ່ໄດ້ນັ້ນຈະເຮັດໃຫ້ເຮົາເດືອດຮ້ອນນຳອັນຕະລາຍມາໃຫ້ແກ່ເຮົາໄດ້" ດັ່ງນັ້ນເຂົາຈຶ່ງຕອບວ່າ "ສິ່ງນີ້ເປັນກຸສົນກໍບໍ່ແມ່ນ ເປັນອະກຸສົນກໍບໍ່ແມ່ນ" ເພາະຢ້ານ ແລະ ຊັງການສົ້ຖາມ ເມື່ອຖືກຖາມບັນຫາໃນເລື້ອງນັ້ນ ໆ ຈຶ່ງກ່າວຫຼົບລັ່ງບໍ່ຕາຍໂຕວ່າ "ເຮົາມີຄວາມເຫັນວ່າແນວນີ້ກໍບໍ່ແມ່ນ ແນວນັ້ນກໍບໍ່ແມ່ນ ຢ່າງອື່ນກໍບໍ່ແມ່ນ ຈະວ່າບໍ່ແມ່ນກໍບໍ່ແມ່ນ ຈະວ່າບໍ່ແມ່ນບໍ່ແມ່ນກໍບໍ່ແມ່ນ"

ພິກຂຸທັງຫຼາຍ ນີ້ເປັນມູນເຫດທີ ໓ ເຊິ່ງສະມະນະພາມພວກໜຶ່ງ ອາໄສແລ້ວ ປາຣົບແລ້ວ ຈຶ່ງມີວາທະຫຼົບລັ່ງ ບໍ່ຕາຍໂຕ ເມື່ອຖືກຖາມບັນຫາໃນເລື້ອງນັ້ນ ໆ ຍ່ອມກ່າວຫຼົບລັ່ງບໍ່ຕາຍໂຕ.

## ມູນເຫດທີ ໔

[໖໕] ໑໖. (໔) ອັນໜຶ່ງ ໃນມູນເຫດທີ ໔ ສະມະນະພາມຜູ້ຈະເລີນອາໄສອັນໃດ? ປາຣົບອັນໃດ ຈຶ່ງມີວາທະຫຼົບລັ່ງບໍ່ຕາຍໂຕ ເມື່ອຖືກຖາມບັນຫາໃນເລື້ອງນັ້ນ ໆ ຍ່ອມກ່າວຫຼົບລັ່ງບໍ່ຕາຍໂຕ ພິກຂຸທັງຫຼາຍ ສະມະນະ ຫຼື ພາມລາງຄົນໃນໂລກນີ້ເປັນຄົນໂງ່ຈ້ຳ ງົມງວາຍ ເພາະຄວາມໂງ່ຈ້ຳງົມ ງວາຍ ບໍ່ມີປັນຍາ ເມື່ອຖືກຖາມບັນຫາໃນເລື້ອງນັ້ນ ໆ ຍ່ອມກ່າວຫຼົບລັ່ງບໍ່ຕາຍໂຕວ່າ "ຖ້າທ່ານຖາມເຮົາແນວນີ້ວ່າ ໂລກໜ້າມີຢູ່ຈິງ ຫຼື ຫາກເຮົາມີຄວາມເຫັນວ່າໂລກໜ້າມີຢູ່ຈິງ ກໍຈະຕອບວ່າມີຈິງ ແຕ່ເຮົາມີຄວາມເຫັນວ່າແນວນີ້ກໍບໍ່ແມ່ນ ແນວນັ້ນກໍບໍ່ແມ່ນ ຢ່າງອື່ນກໍບໍ່ແມ່ນ ຈະວ່າບໍ່ແມ່ນກໍບໍ່ແມ່ນ ຈະວ່າບໍ່ແມ່ນບໍ່ແມ່ນກໍບໍ່ແມ່ນ ຖ້າທ່ານຖາມເຮົາວ່າໂລກໜ້າບໍ່ມີ ຫຼື ຫາກເຮົາມີຄວາມເຫັນວ່າໂລກໜ້າ ບໍ່ມີ ກໍຈະຕອບວ່າບໍ່ມີ ຯລຯ ຖ້າທ່ານຖາມເຮົາວ່າໂລກໜ້າມີ ແລະ ບໍ່ມີ ຫຼື ຯລຯ ໂລກໜ້າຈະວ່າມີກໍບໍ່ແມ່ນ ຈະວ່າບໍ່ມີກໍບໍ່ແມ່ນ ຫຼື ຯລຯ ສັດທີ່ຜຸດເກີດມີຢູ່ຈິງ ຫຼື ຯລຯ ສັດທີ່ຜຸດເກີດບໍ່ມີ ຫຼື ຯລຯ ສັດທີ່ຜຸດເກີດມີ ແລະ ບໍ່ມີຫຼື ຯລຯ ສັດທີ່ຜຸດເກີດຈະວ່າມີກໍບໍ່ແມ່ນ ຈະວ່າບໍ່ມີກໍບໍ່ແມ່ນ ຫຼື ຯລຯ ຜົນວິບາກແຫ່ງກຳດີກຳຊົ່ວມີຢູ່ຈິງ ຫຼື ຯລຯ ຜົນວິບາກແຫ່ງກຳດີກຳຊົ່ວບໍ່ມີ ຫຼື ຯລຯ ຜົນວິບາກແຫ່ງກຳດີກຳຊົ່ວມີແລະບໍ່ມີ ຫຼື ຯລຯ ຜົນວິບາກແຫ່ງກຳດີກຳຊົ່ວຈະວ່າມີກໍບໍ່ແມ່ນ ຈະວ່າບໍ່ມີກໍບໍ່ແມ່ນ ຫຼື ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກ ຫຼື ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ຫຼື ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກ ແລະ ບໍ່ເກີດອີກ ຫຼື ຯລຯ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່

ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ຫຼື ຫາກເຮົາມີຄວາມເຫັນວ່າຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ກໍຈະຕອບວ່າຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ແຕ່ເຮົາມີຄວາມເຫັນວ່າແນວນີ້ກໍບໍ່ແມ່ນ ແນວນັ້ນກໍບໍ່ແມ່ນ ຢ່າງອື່ນກໍບໍ່ແມ່ນ ຈະວ່າບໍ່ແມ່ນກໍບໍ່ແມ່ນ ຈະວ່າບໍ່ແມ່ນບໍ່ແມ່ນກໍບໍ່ແມ່ນ"

ພິກຂຸທັງຫລາຍ ນີ້ເປັນມູນເຫດທີ ໔ ເຊິ່ງສະມະນະພາມພວກໜຶ່ງ ອາໄສແລ້ວປາລົບແລ້ວ ຈຶ່ງມີວາທະຫຼົບລ້ຽງບໍ່ຕາຍໂຕ ເມື່ອຖືກຖາມບັນຫາໃນເລື້ອງນັ້ນ ໆ ຍ່ອມກ່າວຫຼົບລ້ຽງບໍ່ຕາຍໂຕແນວນີ້

## ສະຫຼຸບອະມະຣາວິກເຂປະວາທະ

[໖໖] ພິກຂຸທັງຫຼາຍ ສະມະນະພາມເຫຼົ່ານັ້ນ ມີວາທະຫຼົບລ້ຽງບໍ່ຕາຍໂຕ ເມື່ອຖືກຖາມບັນຫາໃນເລື້ອງນັ້ນ ໆ ຍ່ອມກ່າວຫຼົບລ້ຽງບໍ່ຕາຍໂຕ ດ້ວຍມູນເຫດ ໔ ຢ່າງນີ້ແລ ກໍສະມະນະພາມເຫຼົ່ານັ້ນ ທຸກຈີ່ພວກ ເມື່ອຖືກຖາມບັນຫາໃນເລື້ອງນັ້ນ ໆ ຍ່ອມກ່າວຫຼົບລ້ຽງບໍ່ຕາຍໂຕດ້ວຍມູນເຫດທັງ ໔ ແນວນີ້ ຫຼື ດ້ວຍມູນເຫດຢ່າງໃດຢ່າງໜຶ່ງໃນ ໔ ແນວນີ້ ບໍ່ນອກເໜືອໄປຈາກນີ້ ຯລຯ ອັນເປັນເຫດໃຫ້ຄົນກ່າວຍ້ອງຍໍຕະຖາຄົນຖືກຕ້ອງຕາມຄວາມເປັນຈິງ

## ອະທິດຈະສະມຸບປັນນະວາທະ ໔

## ເຫັນວ່າອັດຕາແລະໂລກເກີດຂື້ນເອງບໍ່ມີເຫດປັດໄຈ

[໖໗] ພິກຂຸທັງຫຼາຍ ມີສະມະນະພາມພວກໜຶ່ງ ມີວາທະວ່າ ອັດຕາ ແລະ ໂລກເກີດຂື້ນເອງບໍ່ມີເຫດປັດໄຈ ບັນຍັດອັດຕາ ແລະ ໂລກວ່າເກີດຂື້ນເອງ ບໍ່ມີເຫດປັດໄຈ ດ້ວຍມູນເຫດ ໔ ຢ່າງ ກໍສະ ມະນະພາມຜູ້ຈະເລີນເຫຼົ່ານັ້ນ ອາໄສອັນໃດ? ປາລົບອັນໃດ? ຈຶ່ງມີວາທະວ່າ ອັດຕາ ແລະ ໂລກເກີດຂື້ນເອງບໍ່ມີເຫດປັດໄຈ ບັນຍັດອັດຕາ ແລະ ໂລກວ່າເກີດຂື້ນເອງບໍ່ມີເຫດປັດໄຈ ດ້ວຍມູນເຫດ ໔ ຢ່າງ

## ມູນເຫດທີ ໑

[໖໘] ໑ກ. (໑) ພິກຂຸທັງຫຼາຍ ມີພວກເທບ ຊື່ ອະສັນຍີສັດຈຸຕິ (ເຄື່ອນ) ຈາກຊັ້ນນັ້ນເພາະເກີດສັນຍາຂື້ນ ຂໍ້ທີ່ສັດຜູ້ຈຸຕິຈາກຊັ້ນນັ້ນແລ້ວມາເປັນແນວນີ້ ເປັນສິ່ງທີ່ເປັນໄປໄດ້ ເມື່ອເຂົາມາເປັນແນວນີ້ແລ້ວ ອອກຈາກເຮືອນໄປບວດເປັນບັນພະຊິດ ເມື່ອບວດແລ້ວອາໄສຄວາມພຽນເຄື່ອງເຜົາກິເລດ ຄວາມພຽນທີ່ຕັ້ງໝັ້ນຢູ່ ຄວາມໝັ່ນປະກອບ ຄວາມບໍ່ປະໝາດ ແລະ ອາໄສການໃຊ້ຄວາມຄິດຢ່າງຖືກວິທີແລ້ວ ບັນລຸເຈໂຕສະມາທິ ອັນເປັນເຫດທຳຈິດໃຫ້ຕັ້ງໝັ້ນຢູ່

ຍ້ອນລະລຶກເຖິງຄວາມເກີດຂຶ້ນຂອງສັນຍານັ້ນ ຕໍ່ຈາກນັ້ນໄປລະລຶກບໍ່ໄດ້ ເຂົາຈຶ່ງເວົ້າແນວນີ້ວ່າ "ອັດຕາ ແລະ ໂລກເກີດຂຶ້ນເອງບໍ່ມີເຫດປັດໄຈ ພາໃຫ້ເກີດຂຶ້ນມາ ເພາະເຫດໃດ? ເພາະແຕ່ກ່ອນເຮົາບໍ່ໄດ້ມີ ບັດນີ້ກໍບໍ່ມີ ຈຶ່ງນ້ອມໄປເພື່ອເປັນຜູ້ສະຫງົບ"

ພິກຂຸທັງຫຼາຍ ນີ້ເປັນມູນເຫດທີ ໑ ເຊິ່ງສະມະນະພາມພວກໜຶ່ງອາໄສແລ້ວ ປາຣົບແລ້ວ ຈຶ່ງມີວາທະວ່າ ອັດຕາ ແລະ ໂລກເກີດຂຶ້ນເອງ ບໍ່ມີເຫດປັດໄຈ ບັນຍັດອັດຕາ ແລະ ໂລກ ວ່າເກີດຂຶ້ນເອງບໍ່ມີເຫດປັດໄຈ.

## ມູນເຫດທີ ໔

[ຜຜ] ໑໗. (໔) ອັນໜຶ່ງ ໃນມູນເຫດທີ ໔ ສະມະນະພາມຜູ້ຈະເລີນອາໄສອັນໃດ? ປາຣົບອັນໃດ? ຈຶ່ງມີວາທະວ່າ ອັດຕາ ແລະ ໂລກເກີດຂຶ້ນເອງ ບໍ່ມີເຫດປັດໄຈ ບັນຍັດອັດຕາ ແລະ ໂລກວ່າເກີດຂຶ້ນເອງບໍ່ມີເຫດປັດໄຈ ພິກຂຸທັງຫຼາຍ ສະມະນະ ຫຼື ພາມລາງຄົນໃນໂລກນີ້ ເປັນນັກຕັກກະ ເປັນນັກອະພິປັດຊະຍາ ສະແດງທັດສະນະຂອງຕົນຕາມຫຼັກເຫດຜົນ ແລະ ການຄາດຄະເນຄວາມຈິງແນວນີ້ວ່າ "ອັດຕາ ແລະ ໂລກເກີດຂຶ້ນເອງບໍ່ມີເຫດປັດໄຈ"

ພິກຂຸທັງຫຼາຍ ນີ້ເປັນມູນເຫດທີ ໔ ເຊິ່ງສະມະນະພາມພວກໜຶ່ງອາໄສແລ້ວ ປາຣົບແລ້ວ ຈຶ່ງມີວາທະວ່າ ອັດຕາ ແລະ ໂລກເກີດຂຶ້ນເອງ ບໍ່ມີເຫດປັດໄຈ ບັນຍັດອັດຕາ ແລະ ໂລກວ່າເກີດຂຶ້ນເອງບໍ່ມີເຫດປັດໄຈ

## ສະຫຼຸບອະທິດຈະສະມຸບປັນນະວາທະ

[໗໐] ພິກຂຸທັງຫຼາຍ ສະມະນະພາມເຫຼົ່ານັ້ນ ມີວາທະວ່າ ອັດຕາ ແລະ ໂລກເກີດຂຶ້ນເອງບໍ່ມີເຫດປັດໄຈ ບັນຍັດອັດຕາ ແລະ ໂລກວ່າເກີດຂຶ້ນເອງບໍ່ມີເຫດປັດໄຈດ້ວຍມູນເຫດ ໔ ແນວນີ້ແລ ກໍສະມະນະພາມເຫຼົ່ານັ້ນ ທຸກຈຶ່ພວກມີວາທະວ່າ ອັດຕາ ແລະ ໂລກເກີດຂຶ້ນເອງບໍ່ມີເຫດປັດໄຈ ບັນຍັດອັດຕາ ແລະ ໂລກວ່າເກີດຂຶ້ນເອງ ບໍ່ມີເຫດປັດໄຈດ້ວຍມູນເຫດທັງ ໔ ແນວນີ້ ຫຼື ດ້ວຍມູນເຫດຢ່າງໃດຢ່າງໜຶ່ງໃນ ໔ ແນວນີ້ ບໍ່ນອກເໜືອໄປຈາກນີ້ ໗ລ໗ ອັນເປັນເຫດໃຫ້ຄົນກ່າວຍ້ອງຍໍຕະຖາຄົນຖືກຕ້ອງຕາມຄວາມເປັນຈິງ.

## ສະຫຼຸບປຸບພັນຕະກັບປິກະວາທະ ໑໘

[໗໑] ພິກຂຸທັງຫຼາຍ ສະມະນະພາມເຫຼົ່ານັ້ນ ກໍານົດຂັນ (ສັບພະສິ່ງຕ່າງ ໆ) ໃນສ່ວນທີ່ເປັນອະດີດ ມີຄວາມເຫັນໄປຕາມຂັນໃນສ່ວນທີ່ເປັນອະດີດ ປາຣົບຂັນໃນອະດີດປະກາດວາທະ ສະແດງທິດຖີຕ່າງ ໆ ດ້ວຍມູນເຫດ ໑໘ ແນວນີ້ແລ ກໍສະມະນະ ຫຼື ພາມເຫຼົ່ານັ້ນ ທຸກຈຶ່ພວກ

ກ່າວຢັ້ງຢືນດ້ວຍມູນເຫດທັງ ໑໘ ແບບນີ້ ຫຼື ດ້ວຍມູນເຫດຢ່າງໃດຢ່າງໜຶ່ງໃນ ໑໘ ແບບນີ້ ບໍ່ນອກເໜືອໄປຈາກນີ້

[໗໔] ພິກຂຸທັງຫຼາຍ ເລື້ອງນີ້ຕະຖາຄົດຮູ້ຊັດແຈ້ງວ່າ ມູນເຫດແຫ່ງທິດຖິເຫຼົ່ານີ້ທີ່ບຸກຄົນຍຶດຖືແບບນີ້ແລ້ວ ຍ່ອມມີຄະຕິ ແລະ ພົບໜ້າແບບນັ້ນ ໆ ຕະຖາຄົດຮູ້ມູນເຫດນັ້ນຊັດແຈ້ງ ແລະ ຍັງຮູ້ຊັດຍິ່ງຂຶ້ນໄປກວ່ານັ້ນອີກ ຈຶ່ງບໍ່ຍຶດໝັ້ນ ເມື່ອບໍ່ຍຶດໝັ້ນ ຈຶ່ງຮູ້ຄວາມດັບດ້ວຍຕົນເອງ ຮູ້ຄວາມເກີດຄວາມດັບ ຄຸນໂທດແຫ່ງເວທະນາ ແລະ ອຸບາຍເຄື່ອງກຳຈັດເວທະນາອອກຕາມຄວາມເປັນຈິງ ຕະຖາຄົດຈຶ່ງຫຼຸດພົ້ນເພາະບໍ່ຍຶດໝັ້ນຖືໝັ້ນ

[໗໕] ພິກຂຸທັງຫຼາຍ ທຳເຫຼົ່ານີ້ແລ ເລິກເຊິ່ງ ເຫັນໄດ້ຍາກ ຮູ້ນຳໄດ້ຍາກ ສະຫງົບປະນີດ ໃຊ້ເຫດຜົນຄາດຄະເນເອົາບໍ່ໄດ້ ລະອຽດຮູ້ໄດ້ສະເພາະບັນດິດ ເຊິ່ງຕະຖາຄົດຮູ້ແຈ້ງໄດ້ເອງ ແລ້ວສັ່ງສອນຜູ້ອື່ນໃຫ້ຮູ້ແຈ້ງຕາມ ອັນເປັນເຫດໃຫ້ຄົນກ່າວຍ້ອງຍໍຕະຖາຄົນຖືກຕ້ອງຕາມຄວາມເປັນຈິງ

## ອະປະຣັນຕະກັບປິກະວາທະ ໔໔

## ຄວາມເຫັນກຳນົດຂັນທີ່ເປັນອະນາຄົດ

[໗໔] ພິກຂຸທັງຫຼາຍ ມີສະມະນະພາມພວກໜຶ່ງ ກຳນົດຂັນ (ສັບພະສິ່ງຕ່າງໆ) ທີ່ເປັນອະນາ ຄົດ ເຫັນຕາມຂັນທີ່ເປັນອະນາຄົດ ປາຣົບຂັນໃນອະນາຄົດ ປະກາດວາທະສະແດງທິດຖິຕ່າງໆດ້ວຍມູນເຫດ ໔໔ ຢ່າງ ກໍສະມະນະພາມຜູ້ຈະເລີນເຫຼົ່ານັ້ນ ອາໄສອັນໃດ? ປາຣົບອັນໃດ? ຈຶ່ງກຳນົດຂັນທີ່ເປັນອະນາຄົດ ເຫັນຕາມຂັນທີ່ເປັນອະນາຄົດ ປາຣົບຂັນໃນອະນາຄົດ ປະກາດວາທະສະແດງທິດຖິຕ່າງ ໆ ດ້ວຍມູນເຫດ ໔໔ ຢ່າງ

## ສັນຍີວາທະ ໑໖

## ເຫັນວ່າອັດຕາຫຼັງຈາກຕາຍແລ້ວມີສັນຍາ

[໗໕] ພິກຂຸທັງຫຼາຍ ມີສະມະນະພາມພວກໜຶ່ງ ມີວາທະວ່າ ອັດຕາຫຼັງຈາກຕາຍແລ້ວມີສັນຍາ ບັນຍັດອັດຕາຫຼັງຈາກຕາຍແລ້ວວ່າ ມີສັນຍາ ດ້ວຍມູນເຫດ ໑໖ ຢ່າງ ກໍສະມະນະພາມຜູ້ຈະເລີນເຫຼົ່ານັ້ນ ອາໄສອັນໃດ? ປາຣົບອັນໃດ? ຈຶ່ງມີວາທະວ່າ ອັດຕາຫຼັງຈາກຕາຍແລ້ວມີສັນຍາ ບັນຍັດອັດຕາຫຼັງຈາກຕາຍແລ້ວວ່າ ມີສັນຍາ ດ້ວຍມູນເຫດ ໑໖ ຢ່າງນັ້ນ

[໗໖] ສະມະນະພາມເຫຼົ່ານັ້ນຍ່ອມບັນຍັດຢ່າງນີ້ວ່າ

໑໙. (໑) ອັດຕາ ທີ່ມີຮູບຍັ້ງຍືນ ຫຼັງຈາກຕາຍແລ້ວມີສັນຍາ
໔໐. (໒) ອັດຕາທີ່ບໍ່ມີຮູບຍັ້ງຍືນ ຫຼັງຈາກຕາຍແລ້ວມີສັນຍາ
໔໑. (໓) ອັດຕາທັງທີ່ມີຮູບ ແລະ ບໍ່ມີຮູບຍັ້ງຍືນ ຫຼັງຈາກຕາຍແລ້ວມີສັນຍາ
໔໒. (໔) ອັດຕາທີ່ມີຮູບກໍບໍ່ແມ່ນ ບໍ່ມີຮູບກໍບໍ່ແມ່ນຍັ້ງຍືນ ຫຼັງຈາກຕາຍແລ້ວມີສັນຍາ
໔໓. (໕) ອັດຕາທີ່ມີທີ່ສຸດຍັ້ງຍືນ ຫຼັງຈາກຕາຍແລ້ວມີສັນຍາ
໔໔. (໖) ອັດຕາທີ່ບໍ່ມີທີ່ສຸດຍັ້ງຍືນ ຫຼັງຈາກຕາຍແລ້ວມີສັນຍາ
໔໕. (໗) ອັດຕາທັງທີ່ມີທີ່ສຸດ ແລະ ບໍ່ມີທີ່ສຸດຍັ້ງຍືນ ຫຼັງຈາກຕາຍແລ້ວມີສັນຍາ
໔໖. (໘) ອັດຕາທີ່ມີທີ່ສຸດກໍບໍ່ແມ່ນ ບໍ່ມີທີ່ສຸດກໍບໍ່ແມ່ນຍັ້ງຍືນຫຼັງຈາກຕາຍແລ້ວມີສັນຍາ
໔໗. (໙) ອັດຕາທີ່ມີສັນຍາຢ່າງດຽວກັນຍັ້ງຍືນ ຫຼັງຈາກຕາຍແລ້ວມີສັນຍາ
໔໘. (໑໐) ອັດຕາທີ່ມີສັນຍາຕ່າງກັນຍັ້ງຍືນ ຫຼັງຈາກຕາຍແລ້ວມີສັນຍາ
໔໙. (໑໑) ອັດຕາທີ່ມີສັນຍາເລັກໜ້ອຍຍັ້ງຍືນ ຫຼັງຈາກຕາຍແລ້ວມີສັນຍາ
໕໐. (໑໒) ອັດຕາທີ່ມີສັນຍາຫາປະມານບໍ່ໄດ້ຍັ້ງຍືນ ຫຼັງຈາກຕາຍແລ້ວມີສັນຍາ
໕໑. (໑໓) ອັດຕາທີ່ມີສຸກຢ່າງດຽວຍັ້ງຍືນ ຫຼັງຈາກຕາຍແລ້ວມີສັນຍາ
໕໒. (໑໔) ອັດຕາທີ່ມີທຸກຢ່າງດຽວຍັ້ງຍືນ ຫຼັງຈາກຕາຍແລ້ວມີສັນຍາ
໕໓. (໑໕) ອັດຕາທີ່ມີທັງສຸກ ແລະ ທຸກຍັ້ງຍືນ ຫຼັງຈາກຕາຍແລ້ວມີສັນຍາ
໕໔. (໑໖) ອັດຕາທີ່ມີທຸກກໍບໍ່ແມ່ນ ມີສຸກກໍບໍ່ແມ່ນຍັ້ງຍືນ ຫຼັງຈາກຕາຍແລ້ວມີສັນຍາ

## ສະຫຼຸບສັນຍີວາທະ ໑໖

[໗໗] ພິກຂຸທັງຫຼາຍ ສະມະນະພາມເຫຼົ່ານັ້ນ ມີວາທະວ່າ ອັດຕາຫຼັງຈາກຕາຍແລ້ວມີສັນຍາ ບັນຍັດອັດຕາຫຼັງຈາກຕາຍແລ້ວວ່າ ມີສັນຍາດ້ວຍມູນເຫດ ໑໖ ແນວນີ້ແລ ກໍສະມະນະພາມເຫຼົ່ານັ້ນທຸກຈໍ່ພວກ ມີວາທະວ່າ ອັດຕາຫຼັງຈາກຕາຍແລ້ວມີສັນຍາ ບັນຍັດອັດຕາຫຼັງຈາກຕາຍແລ້ວວ່າມີສັນຍາດ້ວຍມູນເຫດທັງ ໑໖ ແນວນີ້ ຫຼື ດ້ວຍມູນເຫດຢ່າງໃດຢ່າງໜຶ່ງໃນ ໑໖ ແນວນີ້ ບໍ່ນອກເໜືອໄປຈາກນີ້ ໆລໆ ອັນເປັນເຫດໃຫ້ຄົນກ່າວຍ້ອງຍໍຕະຖາຄົນຖືກຕ້ອງຕາມຄວາມເປັນຈິງ

**ພານະວານທີ່ ໒ ຈົບ**

## ອະສັນຍີວາທະ ໗

## ເຫັນວ່າອັດຕາຫຼັງຈາກຕາຍແລ້ວບໍ່ມີສັນຍາ

[໗໗] ພິກຂຸທັງຫຼາຍ ມີສະມະນະພາມພວກໜຶ່ງມີວາທະວ່າ ອັດຕາ ຫຼັງຈາກຕາຍແລ້ວບໍ່ມີສັນ ຍາ ບັນຍັດອັດຕາຫຼັງຈາກຕາຍແລ້ວວ່າ ບໍ່ມີສັນຍາ ດ້ວຍມູນເຫດ ໗ ຢ່າງ ກໍສະມະນະພາມຜູ້ຈະເລີນເຫຼົ່ານັ້ນ ອາໄສອັນໃດ? ປາຣົບອັນໃດ? ຈຶ່ງມີວາທະວ່າ ອັດຕາ ຫຼັງຈາກຕາຍແລ້ວບໍ່ມີສັນຍາ ບັນຍັດອັດຕາຫຼັງຈາກຕາຍແລ້ວວ່າ ບໍ່ມີສັນຍາດ້ວຍມູນເຫດ ໗ ຢ່າງ

[໗໙] ສະມະນະພາມເຫຼົ່ານັ້ນ ຍ່ອມບັນຍັດຢ່າງນີ້ວ່າ

໓໕. (໑) ອັດຕາທີ່ມີຮູບຍັ້ງຍືນ ຫຼັງຈາກຕາຍແລ້ວບໍ່ມີສັນຍາ
໓໖. (໒) ອັດຕາທີ່ບໍ່ມີຮູບຍັ້ງຍືນ ຫຼັງຈາກຕາຍແລ້ວບໍ່ມີສັນຍາ
໓໗. (໓) ອັດຕາທັງທີ່ມີຮູບ ແລະ ບໍ່ມີຮູບຍັ້ງຍືນ ຫຼັງຈາກຕາຍແລ້ວບໍ່ມີສັນຍາ
໓໘. (໔) ອັດຕາທີ່ມີຮູບກໍບໍ່ແມ່ນ ບໍ່ມີຮູບກໍບໍ່ແມ່ນຍັ້ງຍືນ ຫຼັງຈາກຕາຍແລ້ວບໍ່ມີສັນຍາ
໓໙. (໕) ອັດຕາທີ່ມີທີ່ສຸດຍັ້ງຍືນ ຫຼັງຈາກຕາຍແລ້ວບໍ່ມີສັນຍາ
໔໐. (໖) ອັດຕາທີ່ບໍ່ມີທີ່ສຸດຍັ້ງຍືນ ຫຼັງຈາກຕາຍແລ້ວບໍ່ມີສັນຍາ
໔໑. (໗) ອັດຕາທັງທີ່ມີທີ່ສຸດ ແລະ ບໍ່ມີທີ່ສຸດຍັ້ງຍືນ ຫຼັງຈາກຕາຍແລ້ວບໍ່ມີສັນຍາ
໔໒. (໘) ອັດຕາທີ່ມີທີ່ສຸດກໍບໍ່ແມ່ນ ບໍ່ມີທີ່ສຸດກໍບໍ່ແມ່ນຍັ້ງຍືນຫຼັງຈາກຕາຍແລ້ວບໍ່ມີສັນຍາ

[໘໐] ພິກຂຸທັງຫຼາຍ ສະມະນະພາມເຫຼົ່ານັ້ນ ມີວາທະວ່າ ອັດຕາ ຫຼັງຈາກຕາຍແລ້ວບໍ່ມີສັນຍາ ບັນຍັດອັດຕາຫຼັງຈາກຕາຍແລ້ວວ່າ ບໍ່ມີສັນຍາ ດ້ວຍມູນເຫດ ໘ ແນວນີ້ແລ ສະມະນະ ຫຼື ພາມເຫຼົ່າ ນັ້ນ ທຸກຈີ່ພວກມີວາທະວ່າ ອັດຕາ ຫຼັງຈາກຕາຍແລ້ວບໍ່ມີສັນຍາ ບັນຍັດອັດຕາຫຼັງຈາກຕາຍແລ້ວວ່າບໍ່ມີສັນຍາ ດ້ວຍມູນເຫດທັງ ໘ ແນວນີ້ ຫຼື ດ້ວຍມູນເຫດຢ່າງໃດຢ່າງໜຶ່ງໃນ ໘ ແນວນີ້ ບໍ່ນອກເໜືອໄປຈາກນີ້ ໗໒໗ ອັນເປັນເຫດໃຫ້ຄົນກ່າວຍ້ອງຍໍ ຕະຖາຄົນຖືກຕ້ອງຕາມຄວາມເປັນຈິງ

## ເນວະສັນຍີນາສັນຍີວາທະ ໘

## ເຫັນວ່າອັດຕາຫຼັງຈາກຕາຍແລ້ວມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນ

[໘໑] ພິກຂຸທັງຫຼາຍ ມີສະມະນະພາມພວກໜຶ່ງ ມີວາທະວ່າ ອັດຕາ ຫຼັງຈາກຕາຍແລ້ວມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ ບັນຍັດອັດຕາຫຼັງຈາກຕາຍແລ້ວວ່າ ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ ດ້ວຍມູນເຫດ ໘ ຢ່າງ ກໍສະມະນະພາມຜູ້ຈະເລີນເຫຼົ່ານັ້ນ ອາໄສອັນໃດ? ປາ

ຮັບອັນໃດ? ຈຶ່ງມີວາທະວ່າ ອັດຕາ ຫຼັງຈາກຕາຍແລ້ວມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ ບັນຍັດອັດຕາຫຼັງຈາກຕາຍແລ້ວວ່າ ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນດ້ວຍມູນເຫດ ໘ ຢ່າງນັ້ນ

[໘໔] ສະມະນະພາມເຫຼົ່ານັ້ນຍ່ອມບັນຍັດຢ່າງນີ້ວ່າ

໔໓. (໑) ອັດຕາທີ່ມີຮູບຍັ້ງຍືນ ຫຼັງຈາກຕາຍແລ້ວ ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ

໔໔. (໔) ອັດຕາທີ່ບໍ່ມີຮູບຍັ້ງຍືນ ຫຼັງຈາກຕາຍແລ້ວ ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ

໔໕. (໓) ອັດຕາທັງທີ່ມີຮູບແລະບໍ່ມີຮູບຍັ້ງຍືນ ຫຼັງຈາກຕາຍແລ້ວ ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ

໔໖. (໔) ອັດຕາທີ່ມີຮູບກໍບໍ່ແມ່ນ ບໍ່ມີຮູບກໍບໍ່ແມ່ນຍັ້ງຍືນ ຫຼັງຈາກຕາຍແລ້ວ ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ

໔໗. (໕) ອັດຕາທີ່ມີທີ່ສຸດຍັ້ງຍືນ ຫຼັງຈາກຕາຍແລ້ວ ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ

໔໘. (໖) ອັດຕາທີ່ບໍ່ມີທີ່ສຸດຍັ້ງຍືນ ຫຼັງຈາກຕາຍແລ້ວ ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ

໔໙. (໗) ອັດຕາທັງທີ່ມີທີ່ສຸດ ແລະ ບໍ່ມີທີ່ສຸດຍັ້ງຍືນ ຫຼັງຈາກຕາຍແລ້ວ ມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນ

໕໐. (໘) ອັດຕາທີ່ມີທີ່ສຸດກໍບໍ່ແມ່ນ ບໍ່ມີທີ່ສຸດກໍບໍ່ແມ່ນຍັ້ງຍືນ ຫຼັງຈາກຕາຍແລ້ວ ມີສັນຍາກໍບໍ່ ແມ່ນບໍ່ມີສັນຍາກໍບໍ່ແມ່ນ

[໘໓ ] ພິກຂຸທັງຫຼາຍ ສະມະນະພາມເຫຼົ່ານັ້ນ ມີວາທະວ່າອັດຕາຫຼັງຈາກຕາຍແລ້ວມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ ບັນຍັດອັດຕາຫຼັງຈາກຕາຍແລ້ວວ່າ ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນດ້ວຍມູນເຫດ ໘ ແນວນີ້ແລ ກໍສະມະນະພາມເຫຼົ່ານັ້ນ ທຸກຈຳພວກມີວາທະວ່າອັດຕາຫຼັງຈາກຕາຍແລ້ວ ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ ບັນຍັດອັດຕາຫຼັງຈາກຕາຍແລ້ວວ່າ ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ ດ້ວຍມູນເຫດທັງ ໘ ຢ່າງນີ້ ຫຼື ດ້ວຍມູນເຫດຢ່າງໃດຢ່າງໜຶ່ງໃນ ໘ ແນວນີ້ ບໍ່ນອກເໜືອໄປຈາກນີ້ ሃລሃ ອັນເປັນເຫດໃຫ້ຄົນກ່າວຍ້ອງຍໍຕະຖາຄົດຕາມຄວາມເປັນຈິງ

## ອຸດເສທະວາທະ ໑໗

## ເຫັນວ່າຫຼັງຈາກຕາຍແລ້ວອັດຕາຂາດສູນ

[໘໔] ພິກຂຸທັງຫຼາຍ ມີສະມະນະພາມພວກໜຶ່ງມີວາທະວ່າ ຫຼັງຈາກຕາຍແລ້ວອັດຕາຂາດສູນບັນຍັດຄວາມຂາດສູນ ຄວາມພິນາດ ແລະ ຄວາມບໍ່ເກີດອີກຂອງສັດດ້ວຍມູນເຫດ ໗ ຢ່າງ ກໍສະມະ ນະພາມຜູ້ຈະເລີນເຫຼົ່ານັ້ນ ອາໄສອັນໃດ? ປາຣົບອັນໃດ? ຈຶ່ງມີວາທະວ່າ ຫຼັງຈາກຕາຍແລ້ວ ອັດຕາຂາດສູນ ບັນຍັດຄວາມຂາດສູນ ຄວາມພິນາດ ແລະ ຄວາມບໍ່ເກີດອີກຂອງສັດດ້ວຍມູນເຫດ ໗ ຢ່າງນັ້ນ

[໘໕] ໔໑. (໑) ສະມະນະ ຫຼື ພາມລາງຄົນໃນໂລກນີ້ ມີວາທະມີທັດສະນະແນວນີ້ວ່າ "ທ່ານຜູ້ຈະເລີນ ອັດຕານີ້ມີຮູບມາຈາກມະຫາພູຕະຮູບ ໔ ເກີດຈາກບິດາມານດາ ຫຼັງຈາກຕາຍແລ້ວອັດຕາຍ່ອມຂາດສູນພິນາດ ບໍ່ເກີດອີກດ້ວຍເຫດພຽງເທົ່ານີ້ ອັດຕານີ້ຈຶ່ງຂາດສູນເດັດຂາດ" ສະມະນະພາມພວກໜຶ່ງ ບັນຍັດຄວາມຂາດສູນຄວາມພິນາດ ແລະ ຄວາມບໍ່ເກີດອີກຂອງສັດແນວນີ້

[໘໖] ໔໒. (໒) ສະມະນະ ຫຼື ພາມຄົນອື່ນກ່າວກັບສະມະນະ ຫຼື ພາມຄົນນັ້ນແນວນີ້ວ່າ "ທ່ານຜູ້ຈະເລີນ ອັດຕາທີ່ທ່ານເວົ້າເຖິງນັ້ນມີຢູ່ຈິງ ເຮົາບໍ່ໄດ້ປະຕິເສດວ່າບໍ່ມີ ແຕ່ອັດຕານີ້ບໍ່ແມ່ນຂາດສູນເດັດຂາດ ເພາະເຫດພຽງເທົ່ານີ້ ຍັງມີອັດຕາອື່ນທີ່ເປັນທິບມີຮູບເປັນກາມາວະຈອນບໍລິໂພກເຂົ້າເປັນອາຫານ ທ່ານຍັງບໍ່ຮູ້ບໍ່ເຫັນ ແຕ່ເຮົາຮູ້ເຮົາເຫັນອັດຕານັ້ນ ຫຼັງຈາກຕາຍແລ້ວຈະຂາດສູນພິນາດບໍ່ເກີດອີກ ດ້ວຍເຫດພຽງເທົ່ານີ້ ອັດຕາຈຶ່ງຂາດສູນເດັດຂາດ" ສະມະນະພາມພວກໜຶ່ງ ບັນຍັດຄວາມຂາດສູນ ຄວາມພິນາດ ແລະ ຄວາມບໍ່ເກີດອີກຂອງສັດແນວນີ້

[໘໗] ໔໓. (໓) ສະມະນະ ຫຼື ພາມຄົນອື່ນ ກ່າວກັບສະມະນະ ຫຼື ພາມຄົນນັ້ນແນວນີ້ວ່າ "ທ່ານຜູ້ຈະເລີນ ອັດຕາທີ່ທ່ານເວົ້າເຖິງນັ້ນມີຢູ່ຈິງ ເຮົາບໍ່ໄດ້ປະຕິເສດວ່າບໍ່ມີ ແຕ່ອັດຕານີ້ບໍ່ແມ່ນຂາດສູນເດັດຂາດ ເພາະເຫດພຽງເທົ່ານີ້ ຍັງມີອັດຕາອື່ນທີ່ເປັນທິບ ມີຮູບສຳເລັດດ້ວຍໃຈ ມີອະໄວຍະວະຄົບຖ້ວນ ມີອິນຊີບໍ່ບົກພ່ອງ ທ່ານຍັງບໍ່ຮູ້ບໍ່ເຫັນ ແຕ່ເຮົາຮູ້ເຮົາເຫັນອັດຕານັ້ນ ຫຼັງຈາກຕາຍແລ້ວ ຈະຂາດສູນພິນາດບໍ່ເກີດອີກ ດ້ວຍເຫດພຽງເທົ່ານີ້ ອັດຕາຈຶ່ງຂາດສູນເດັດຂາດ" ສະມະນະພາມພວກໜຶ່ງ ບັນຍັດຄວາມຂາດສູນ ຄວາມພິນາດ ແລະ ຄວາມບໍ່ເກີດອີກຂອງສັດແນວນີ້

[໘໘] ໔໔. (໔) ສະມະນະຫຼືພາມຄົນອື່ນ ກ່າວກັບສະມະນະ ຫຼື ພາມຄົນນັ້ນແນວນີ້ວ່າ "ທ່ານຜູ້ຈະເລີນ ອັດຕາທີ່ທ່ານເວົ້າເຖິງນັ້ນມີຢູ່ຈິງ ເຮົາບໍ່ໄດ້ປະຕິເສດວ່າບໍ່ມີ ແຕ່ອັດຕານີ້ບໍ່ແມ່ນຂາດສູນເດັດຂາດ ເພາະເຫດພຽງເທົ່ານີ້ ຍັງມີອັດຕາອື່ນຢູ່ເທິງຊັ້ນອາກາສານັນຈາຍະຕະນະ

ໂດຍກຳນົດວ່າ ອາກາດຫາບ່ອນສັ້ງສຸດບໍ່ໄດ້ ເພາະຂ້າມພົ້ນຮູບສັນຍາດັບປະຕິຄະສັນຍາບໍ່ກຳນົດນານັດຕະສັນຍາໂດຍປະການທັງປວງ ທ່ານຍັງບໍ່ຮູ້ບໍ່ເຫັນ ແຕ່ເຮົາຮູ້ເຮົາເຫັນອັດຕານັ້ນ ຫຼັງຈາກຕາຍແລ້ວຈະຂາດສູນພິນາດ ບໍ່ເກີດອີກດ້ວຍເຫດພຽງເທົ່ານີ້ ອັດຕາຈຶ່ງຂາດສູນເດັດຂາດ" ສະມະນະພາມພວກໜຶ່ງ ບັນຍັດຄວາມຂາດສູນຄວາມພິນາດ ແລະຄວາມບໍ່ເກີດອີກຂອງສັດແບບນີ້

[໘໙] ໕໕. (໕) ສະມະນະ ຫຼື ພາມຄົນອື່ນກ່າວກັບສະມະນະ ຫຼືພາມຄົນນັ້ນແບບນີ້ວ່າ "ທ່ານຜູ້ຈະເລີນ ອັດຕາທີ່ທ່ານເວົ້າເຖິງນັ້ນມີຢູ່ຈິງ ເຮົາບໍ່ໄດ້ປະຕິເສດວ່າບໍ່ມີ ແຕ່ອັດຕານີ້ບໍ່ແມ່ນຂາດສູນເດັດຂາດ ເພາະເຫດພຽງເທົ່ານີ້ ຍັງມີອັດຕາອື່ນຢູ່ເທິງຊັ້ນວິນຍານັນຈາຍະຕະນະໂດຍກຳນົດວ່າ ວິນຍານຫາບ່ອນສັ້ງສຸດບໍ່ໄດ້ ເພາະຂ້າມພົ້ນອາກາສານັນຈາຍະຕະນະໄດ້ໂດຍປະການທັງປວງ ທ່ານຍັງບໍ່ຮູ້ບໍ່ເຫັນ ແຕ່ເຮົາຮູ້ເຮົາເຫັນອັດຕານັ້ນ ຫຼັງຈາກຕາຍແລ້ວຈະຂາດສູນພິນາດບໍ່ເກີດອີກ ດ້ວຍເຫດພຽງເທົ່ານີ້ ອັດຕາ ຈຶ່ງຂາດສູນເດັດຂາດ" ສະມະນະພາມພວກໜຶ່ງ ບັນຍັດຄວາມຂາດສູນ ຄວາມພິນາດ ແລະ ຄວາມບໍ່ເກີດອີກຂອງສັດແບບນີ້

[໙໐] ໕໖. (໖) ສະມະນະ ຫຼື ພາມຄົນອື່ນກ່າວກັບສະມະນະ ຫຼື ພາມຄົນນັ້ນແບບນີ້ວ່າ "ທ່ານຜູ້ຈະເລີນ ອັດຕາທີ່ທ່ານເວົ້າເຖິງນັ້ນມີຢູ່ຈິງ ເຮົາບໍ່ໄດ້ປະຕິເສດວ່າບໍ່ມີ ແຕ່ອັດຕານີ້ບໍ່ແມ່ນຂາດສູນເດັດຂາດ ເພາະເຫດພຽງເທົ່ານີ້ ຍັງມີອັດຕາອື່ນຢູ່ເທິງຊັ້ນອາກິນຈັນຍາຍະຕະນະ ໂດຍກຳນົດວ່າບໍ່ມີອັນໃດ ເພາະຂ້າມພົ້ນວິນຍານັນຈາຍຕນະໄດ້ໂດຍປະການທັງປວງ ທ່ານຍັງບໍ່ຮູ້ບໍ່ເຫັນ ແຕ່ເຮົາຮູ້ເຮົາເຫັນອັດຕານັ້ນ ຫຼັງຈາກຕາຍແລ້ວ ຈະຂາດສູນພິນາດບໍ່ເກີດອີກ ດ້ວຍເຫດພຽງເທົ່ານີ້ ອັດຕາຈຶ່ງຂາດສູນເດັດຂາດ" ສະມະນະພາມພວກໜຶ່ງ ບັນຍັດຄວາມຂາດສູນຄວາມພິນາດ ແລະ ຄວາມບໍ່ເກີດອີກຂອງສັດແບບນີ້

[໙໑] ໕໗. (໗) ສະມະນະ ຫຼື ພາມຄົນອື່ນກ່າວກັບສະມະນະ ຫຼື ພາມຄົນນັ້ນແບບນີ້ວ່າ "ທ່ານຜູ້ຈະເລີນ ອັດຕາທີ່ທ່ານເວົ້າເຖິງນັ້ນມີຢູ່ຈິງ ເຮົາບໍ່ໄດ້ປະຕິເສດວ່າບໍ່ມີ ແຕ່ອັດຕານີ້ບໍ່ແມ່ນຂາດສູນເດັດຂາດ ເພາະເຫດພຽງເທົ່ານີ້ ຍັງມີອັດຕາອື່ນຢູ່ເທິງຊັ້ນເນວະສັນຍານາສັນຍາຍະຕະນະ ໂດຍກຳນົດວ່າ ນັ້ນລະອຽດ ນັ້ນປະນີດ ເພາະລ່ວງອາກິນຈັນຍາຍະຕະນະໄດ້ໂດຍປະການທັງປວງ ທ່ານຍັງບໍ່ຮູ້ບໍ່ເຫັນ ແຕ່ເຮົາຮູ້ເຮົາເຫັນອັດຕານັ້ນ ຫຼັງຈາກຕາຍແລ້ວຈະຂາດສູນພິນາດບໍ່ເກີດອີກ ດ້ວຍເຫດພຽງເທົ່ານີ້ ອັດຕາຈຶ່ງຂາດສູນເດັດຂາດ" ສະມະນະພາມພວກໜຶ່ງ ບັນຍັດຄວາມຂາດສູນ ຄວາມພິນາດ ແລະ ຄວາມບໍ່ເກີດອີກຂອງສັດແບບນີ້

[໙໒] ພິກຂຸທັງຫຼາຍ ສະມະນະພາມເຫຼົ່ານັ້ນມີວາທະວ່າ ຫຼັງຈາກຕາຍແລ້ວ ອັດຕາຂາດສູນ ບັນຍັດຄວາມຂາດສູນຄວາມພິນາດ ແລະ ຄວາມບໍ່ເກີດອີກຂອງສັດດ້ວຍມູນເຫດ ໗ ແບບນີ້ແລ ກໍສະມະນະພາມເຫຼົ່ານັ້ນ ທຸກຈີ່ພວກມີວາທະວ່າ ຫຼັງຈາກຕາຍແລ້ວອັດຕາຂາດສູນ ບັນ

ຍັດຄວາມຂາດສູນຄວາມພິນາດ ແລະ ຄວາມບໍ່ເກີດອີກຂອງສັດດ້ວຍມູນເຫດທັງ ໗ ແນວນີ້ ຫຼື ດ້ວຍມູນເຫດຢ່າງໃດຢ່າງໜຶ່ງໃນ ໗ ແນວນີ້ ບໍ່ນອກເໜືອໄປຈາກນີ້ ໗໑໗ ອັນເປັນເຫດໃຫ້ຄົນກ່າວຍ້ອງຍໍຕະຖາຄົດຕາມຄວາມເປັນຈິງ

## ທິດຖະທຳນິບພານະວາທະ ໑໕
## ເຫັນວ່າມີສະພາບບາງຢ່າງເປັນນິບພານໃນປະຈຸບັນ

[໙໓] ພິກຂຸທັງຫຼາຍ ມີສະມະນະພາມພວກໜຶ່ງມີວາທະວ່າ ມີສະພາບບາງຢ່າງເປັນນິບພານໃນປະຈຸບັນ ບັນຍັດນິບພານໃນປະຈຸບັນວ່າ ເປັນບໍຣົມມະທຳຂອງສັດດ້ວຍມູນເຫດ ໕ ຢ່າງ ກໍສະມະນະພາມຜູ້ຈະເລີນເຫຼົ່ານັ້ນ ອາໄສອັນໃດ? ປາຣົບອັນໃດ? ຈຶ່ງມີວາທະວ່າ ມີສະພາບບາງຢ່າງເປັນນິບພານໃນປະຈຸບັນ ບັນຍັດນິບພານໃນປະຈຸບັນວ່າ ເປັນບໍຣົມມະທຳຂອງສັດດ້ວຍມູນເຫດ ໕ ຢ່າງນັ້ນ

[໙໔] ໕໗. (໑) ສະມະນະ ຫຼື ພາມລາງຄົນໃນໂລກນີ້ ມີວາທະມີທັດສະນະແນວນີ້ວ່າ "ທ່ານຜູ້ຈະເລີນ ຍ້ອນເຫດທີ່ອັດຕານີ້ເອີບອິ່ມບໍລິບູນຢູ່ດ້ວຍກາມມະຄຸນ ໕ ຈຶ່ງຊື່ວ່າບັນລຸນິບພານໃນປະຈຸບັນ ອັນເປັນບໍຣົມມະທຳ" ສະມະນະພາມພວກໜຶ່ງ ບັນຍັດນິບພານໃນປະຈຸບັນວ່າເປັນບໍຣົມມະທຳຂອງສັດແນວນີ້

[໙໕ ] ໕໙. (໒) ສະມະນະຫຼືພາມຄົນອື່ນ ກ່າວກັບສະມະນະຫຼືພາມຄົນນັ້ນແນວນີ້ວ່າ "ທ່ານຜູ້ຈະເລີນ ອັດຕາທີ່ທ່ານເວົ້າເຖິງນັ້ນມີຢູ່ຈິງ ເຮົາບໍ່ໄດ້ປະຕິເສດວ່າບໍ່ມີ ແຕ່ອັດຕານີ້ບໍ່ແມ່ນຈະບັນລຸນິບພານໃນປະຈຸບັນ ອັນເປັນບໍຣົມມະທຳໄດ້ ເພາະເຫດພຽງເທົ່ານີ້ ເພາະເຫດໃດ? ເພາະກາມບໍ່ທ່ຽງເປັນທຸກມີຄວາມຜັນປ່ຽນເປັນທຳມະດາ ເພາະກາມນັ້ນຜັນປ່ຽນໄປເປັນອື່ນ ຄວາມໂສກເສົ້າ ຄວາມຮ່ຳໄຮ ຄວາມບໍ່ສະບາຍກາຍ ຄວາມບໍ່ສະບາຍໃຈ ແລະ ຄວາມຄັບແຄ້ນໃຈຈຶ່ງເກີດຂຶ້ນ ຍ້ອນເຫດທີ່ອັດຕານີ້ສະຫງັດຈາກກາມ ແລະ ອະກຸສົນທຳທັງຫຼາຍ ແລ້ວບັນລຸປະຖົມມະຊານທີ່ມີວິຕົກ ວິຈານ ປີຕິ ແລະ ສຸກເກີດຈາກວິເວກຢູ່ ຈຶ່ງຊື່ວ່າ ບັນລຸນິບພານໃນປະຈຸບັນ ອັນເປັນບໍຣົມມະທຳ" ສະມະນະພາມພວກໜຶ່ງບັນຍັດນິບພານໃນປະຈຸບັນວ່າ ເປັນບໍຣົມມະທຳຂອງສັດແນວນີ້

[໙໖] ໖໐. (໓) ສະມະນະ ຫຼື ພາມຄົນອື່ນ ກ່າວກັບສະມະນະ ຫຼື ພາມຄົນນັ້ນແນວນີ້ວ່າ "ທ່ານຜູ້ຈະເລີນ ອັດຕາທີ່ທ່ານເວົ້າເຖິງນັ້ນມີຢູ່ຈິງ ເຮົາບໍ່ໄດ້ປະຕິເສດວ່າບໍ່ມີ ແຕ່ອັດຕານີ້ບໍ່ແມ່ນຈະບັນລຸນິບພານໃນປະຈຸບັນ ອັນເປັນບໍຣົມມະທຳໄດ້ເພາະເຫດພຽງເທົ່ານີ້ ເພາະເຫດໃດ ເພາະປະຖົມມະຊານທີ່ມີວິຕົກມີວິຈານນັ້ນ ບັນດິດກ່າວວ່າ ຍັງຫຍາບຢູ່ ຍ້ອນເຫດທີ່ວິຕົກວິຈານສະຫງົບໄປ ອັດຕານີ້ຈຶ່ງບັນລຸທຸຕິຍະຊານ ມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງ

ຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປິຕິ ແລະ ສຸກ ອັນເກີດຈາກສະມາທິຢູ່ ຈຶ່ງຊື່ວ່າ ບັນລຸນິບພານໃນປະຈຸບັນ ອັນເປັນບໍຣົມມະທຳ" ສະມະນະພາມພວກໜຶ່ງ ບັນຍັດນິບພານໃນປະຈຸບັນວ່າເປັນບໍຣົມມະທຳຂອງສັດແບບນີ້

[໙໗] ໙໑. (໔) ສະມະນະ ຫຼື ພາມຄົນອື່ນກ່າວກັບສະມະນະ ຫຼື ພາມຄົນນັ້ນແນວນີ້ວ່າ "ທ່ານຜູ້ຈະເລີນ ອັດຕາທີ່ທ່ານເວົ້າເຖິງນັ້ນມີຢູ່ຈິງ ເຮົາບໍ່ໄດ້ປະຕິເສດວ່າບໍ່ມີ ແຕ່ອັດຕານີ້ບໍ່ແມ່ນຈະບັນລຸນິບພານໃນປະຈຸບັນ ອັນເປັນບໍຣົມມະທຳໄດ້ ເພາະເຫດພຽງເທົ່ານີ້ ເພາະເຫດໃດ? ເພາະທຸຕິຍະຊານທີ່ຍັງມີປິຕິເປັນເຫດໃຫ້ຈິດເບີກບານ ບັນດິດກ່າວວ່າຍັງຫຍາບຢູ່ ຍ້ອນເຫດທີປິຕິຈາງຄາຍຫາຍໄປ ອັດຕານີ້ຈຶ່ງມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍ ສັນລະເສີນວ່າ ຜູ້ມີອຸເປກຂາ ມີສະຕິຢູ່ເປັນສຸກ ຈຶ່ງຊື່ວ່າ ບັນລຸນິບພານໃນປະຈຸບັນອັນເປັນບໍຣົມມະທຳ" ສະມະນະພາມພວກໜຶ່ງ ບັນຍັດນິບພານໃນປະຈຸບັນວ່າ ເປັນບໍຣົມມະທຳຂອງສັດແບບນີ້

[໙໘] ໙໘. (໕) ສະມະນະ ຫຼື ພາມຄົນອື່ນກ່າວກັບສະມະນະ ຫຼື ພາມຄົນນັ້ນແນວນີ້ວ່າ "ທ່ານຜູ້ຈະເລີນ ອັດຕາທີ່ທ່ານເວົ້າເຖິງນັ້ນມີຢູ່ຈິງ ເຮົາບໍ່ໄດ້ປະຕິເສດວ່າບໍ່ມີ ແຕ່ອັດຕານີ້ບໍ່ແມ່ນຈະບັນລຸນິບພານໃນປະຈຸບັນ ອັນເປັນບໍຣົມມະທຳໄດ້ ເພາະເຫດພຽງເທົ່ານີ້ ເພາະເຫດໃດ ເພາະຕະຕິຍະຊານທີ່ຈິດຍັງລະລຶກເຖິງສຸກຢູ່ນັ້ນ ບັນດິດກ່າວວ່າ ຍັງຫຍາບຢູ່ ຍ້ອນເຫດທີລະສຸກ ແລະ ທຸກໄດ້ ເພາະໂສມະນັດ ແລະ ໂທມະນັດດັບໄປກ່ອນ ອັດຕານີ້ຈຶ່ງບັນລຸຈະຕຸດຖະຊານ ທີ່ບໍ່ມີທຸກບໍ່ມີສຸກ ມີສະຕິບໍລິສຸດເພາະອຸເປກຂາຢູ່ ຈຶ່ງຊື່ວ່າ ບັນລຸນິບພານໃນປະຈຸບັນ ອັນເປັນບໍຣົມມະທຳ" ສະມະນະພາມພວກໜຶ່ງບັນຍັດນິບພານໃນປະຈຸບັນວ່າ ເປັນບໍຣົມມະທຳຂອງສັດແບບນີ້

## ສະຫຼຸບທິດຖະທຳມະນິບພານະວາທະ

[໙໙] ພິກຂຸທັງຫຼາຍ ສະມະນະພາມເຫຼົ່ານັ້ນ ມີວາທະວ່າ ມີສະພາບບາງຢ່າງເປັນນິບພານໃນປະຈຸບັນ ບັນຍັດນິບພານໃນປະຈຸບັນວ່າ ເປັນບໍຣົມມະທຳຂອງສັດດ້ວຍມູນເຫດ ໕ ແບບນີ້ແລ ກໍສະມະນະພາມເຫຼົ່ານັ້ນ ທຸກຈຳພວກມີວາທະວ່າ ມີສະພາບບາງຢ່າງເປັນນິບພານໃນປະຈຸບັນ ບັນຍັດນິບພານໃນປະຈຸບັນວ່າ ເປັນບໍຣົມມະທຳຂອງສັດ ດ້ວຍມູນເຫດທັງ ໕ ແບບນີ້ ຫຼື ດ້ວຍມູນເຫດຢ່າງໃດຢ່າງໜຶ່ງໃນ ໕ ແບບນີ້ ບໍ່ນອກເໜືອໄປຈາກນີ້ ໆລໆ ອັນເປັນເຫດໃຫ້ຄົນກ່າວຍ້ອງຍໍຕະຖາຄົນຖືກຕ້ອງຕາມຄວາມເປັນຈິງ

[໑໐໐] ພິກຂຸທັງຫຼາຍ ສະມະນະພາມເຫຼົ່ານັ້ນກຳນົດຂັນ (ສັບພະສິ່ງທັງຫຼາຍ) ໃນສ່ວນທີ່ເປັນອະນາຄົດ ເຫັນໄປຕາມຂັນທີ່ເປັນອະນາຄົດ ປາຣົບຂັນໃນອະນາຄົດ ປະກາດວາທະ

ສະແດງທິດຖິຕ່າງ ໆ ດ້ວຍມູນເຫດ ໔໔ ແບບນີ້ແລ ກໍສະມະນະພາມເຫຼົ່ານັ້ນ ທຸກຈຳພວກກຳນົດຂັນໃນອະນາຄົດ ເຫັນໄປຕາມຂັນທີ່ເປັນອະນາຄົດ ປາຣົບຂັນໃນອະນາຄົດແລ້ວປະກາດວາທະສະແດງທິດຖິຕ່າງ ໆ ດ້ວຍມູນເຫດທັງ ໔໔ ແບບນີ້ ຫຼື ດ້ວຍມູນເຫດຢ່າງໃດຢ່າງໜຶ່ງໃນ ໔໔ ແບບນີ້ ບໍ່ນອກເໜືອໄປຈາກນີ້ ຯລຯ ອັນເປັນເຫດໃຫ້ຄົນກ່າວຍ້ອງຍໍຕະຖາຄົນຖືກຕ້ອງຕາມຄວາມເປັນຈິງ

[໑໐໑] ພິກຂຸທັງຫຼາຍ ສະມະນະພາມພວກທີ່ກຳນົດຂັນໃນອະດີດ ພວກທີ່ກຳນົດຂັນໃນອະນາຄົດ ແລະ ພວກທີ່ກຳນົດຂັນໃນອະດີດ ແລະ ອະນາຄົດ ຕ່າງກໍມີຄວາມເຫັນໄປຕາມຂັນໃນອະດີດ ແລະ ອະນາຄົດ ປາຣົບຂັນທີ່ເປັນອະດີດ ແລະ ອະນາຄົດ ປະກາດວາທະສະແດງທິດຖິຕ່າງໆ ດ້ວຍມູນເຫດ ໖໒ ແບບນີ້ແລ

[໑໐໒] ກໍສະມະນະ ຫຼື ພາມເຫຼົ່ານັ້ນທຸກຈຳພວກ ທີ່ກຳນົດຂັນໃນອະດີດ ທີ່ກຳນົດຂັນໃນອະນາຄົດ ຫຼື ທີ່ກຳນົດຂັນໃນອະດີດ ແລະ ອະນາຄົດ ຕ່າງກໍມີຄວາມເຫັນໄປຕາມຂັນໃນອະດີດ ແລະ ອະນາຄົດ ປາຣົບຂັນທັງທີ່ເປັນອະດີດ ແລະ ອະນາຄົດ ປະກາດວາທະ ສະແດງທິດຖິຕ່າງໆ ດ້ວຍມູນເຫດທັງ ໖໒ ແບບນີ້ ຫຼື ດ້ວຍມູນເຫດຢ່າງໃດຢ່າງໜຶ່ງໃນ ໖໒ ແບບນີ້ ບໍ່ນອກເໜືອໄປຈາກນີ້

[໑໐໓] ພິກຂຸທັງຫຼາຍ ເລື້ອງນີ້ຕະຖາຄົດຮູ້ຊັດແຈ້ງແລ້ວວ່າ ມູນເຫດແຫ່ງທິດຖິເຫຼົ່ານີ້ ທີ່ບຸກຄົນຍຶດຖືແບບນີ້ແລ້ວ ຍ່ອມມີຄະຕິ ແລະ ພົບໜ້າແບບນັ້ນ ໆ ຕະຖາຄົດຮູ້ມູນເຫດນັ້ນຊັດແຈ້ງ ແລະ ຫຍັງຮູ້ຊັດແຈ້ງຍິ່ງຂຶ້ນໄປກວ່ານັ້ນອີກ ຈຶ່ງບໍ່ຍຶດໝັ້ນ ເມື່ອບໍ່ຍຶດໝັ້ນ ຈຶ່ງຮູ້ຄວາມດັບດ້ວຍຕົນເອງ ຮູ້ຄວາມເກີດ ຄວາມດັບ ຄຸນ ໂທດແຫ່ງເວທະນາ ແລະ ອຸບາຍເຄື່ອງກຳຈັດເວທະນາອອກຕາມຄວາມເປັນຈິງ ຕະຖາຄົດຈຶ່ງຫຼຸດພົ້ນເພາະບໍ່ຍຶດໝັ້ນຖືໝັ້ນ

[໑໐໔] ພິກຂຸທັງຫຼາຍ ທຳເຫຼົ່ານີ້ແລ ເລິກເຊິ່ງ ເຫັນໄດ້ຍາກ ຮູ້ນຳໄດ້ຍາກ ສະຫງົບ ປະນີດ ໃຊ້ເຫດຜົນຄາດຄະເນເອົາບໍ່ໄດ້ ລະອຽດ ຮູ້ໄດ້ສະເພາະບັນດິດ ເຊິ່ງຕະຖາຄົດຮູ້ແຈ້ງໄດ້ເອງແລ້ວສັ່ງສອນຜູ້ອື່ນໃຫ້ຮູ້ແຈ້ງຕາມ ອັນເປັນເຫດໃຫ້ຄົນກ່າວຍ້ອງຍໍ ຕະຖາຄົນຖືກຕ້ອງຕາມຄວາມເປັນຈິງ

**ທິດຖິ ໖໒ ຈົບ**

# ວ່າດ້ວຍການບັນຍັດອັດຕາແລະໂລກເພາະຄວາມຕ້ອງການຄວາມດີ້ນຣົນ ຂອງຄົນມີຕັນຫາ

[໑໐໕] ພິກຂຸທັງຫຼາຍ ບັນດາສະມະນະພາມເຫຼົ່ານັ້ນ ພວກທີ່ມີວາທະວ່າທ່ຽງບັນຍັດອັດຕາ ແລະໂລກວ່າທ່ຽງດ້ວຍມູນເຫດ ໔ ຢ່າງ ຂໍ້ນັ້ນ ເປັນຄວາມເຂົ້າໃຈຂອງພວກເຂົາຜູ້ບໍ່ຮູ້ ບໍ່ເຫັນເປັນ ຄວາມຕ້ອງການ ຄວາມດີ້ນຣົນຂອງຄົນມີຕັນຫາເທົ່ານັ້ນ

[໑໐໖] ພວກທີ່ມີວາທະວ່າບາງຢ່າງທ່ຽງ ບາງຢ່າງບໍ່ທ່ຽງ ບັນຍັດອັດຕາ ແລະ ໂລກວ່າບາງຢ່າງທ່ຽງ ບາງຢ່າງບໍ່ທ່ຽງດ້ວຍມູນເຫດ ໔ ຢ່າງ ຂໍ້ນັ້ນ ເປັນຄວາມເຂົ້າໃຈຂອງພວກເຂົາຜູ້ບໍ່ຮູ້ບໍ່ເຫັນ ເປັນຄວາມຕ້ອງການຄວາມດີ້ນຣົນຂອງຄົນມີຕັນຫາຄືກັນ

[໑໐໗] ພວກທີ່ມີວາທະວ່າໂລກມີທີ່ສຸດ ໂລກບໍ່ມີທີ່ສຸດ ບັນຍັດວ່າໂລກມີທີ່ສຸດ ໂລກບໍ່ມີທີ່ສຸດດ້ວຍມູນເຫດ ໔ ຢ່າງ ຂໍ້ນັ້ນ ເປັນຄວາມເຂົ້າໃຈຂອງພວກເຂົາຜູ້ບໍ່ຮູ້ບໍ່ເຫັນ ເປັນຄວາມຕ້ອງການຄວາມດີ້ນຣົນຂອງຄົນມີຕັນຫາຄືກັນ

[໑໐໘] ພວກທີ່ມີວາທະຫຼົບລັ້ງງບໍ່ຕາຍໂຕ ເມື່ອຖືກຖາມບັນຫາໃນເລື້ອງນັ້ນ ໆ ຍ່ອມກ່າວຫຼົບລັ້ງງບໍ່ຕາຍໂຕ ດ້ວຍມູນເຫດ ໔ ຢ່າງ ຂໍ້ນັ້ນ ເປັນຄວາມເຂົ້າໃຈຂອງພວກເຂົາ ຜູ້ບໍ່ຮູ້ບໍ່ເຫັນເປັນ ຄວາມແສ່ຫາຄວາມດີ້ນຣົນຂອງຄົນມີຕັນຫາຄືກັນ

[໑໐໙] ພວກທີ່ມີວາທະວ່າ ອັດຕາ ແລະ ໂລກເກີດຂຶ້ນເອງ ບໍ່ມີເຫດປັດໄຈບັນຍັດອັດຕາ ແລະໂລກວ່າເກີດຂຶ້ນເອງ ບໍ່ມີເຫດປັດໄຈດ້ວຍມູນເຫດ ໔ ຢ່າງ ຂໍ້ນັ້ນ ເປັນຄວາມເຂົ້າໃຈຂອງພວກເຂົາຜູ້ບໍ່ຮູ້ບໍ່ເຫັນ ເປັນຄວາມຕ້ອງການຄວາມດີ້ນຣົນຂອງຄົນມີຕັນຫາຄືກັນ

[໑໑໐] ພວກທີ່ກຳນົດຂັນໃນອະດີດ ເຫັນໄປຕາມຂັນໃນອະດີດ ປາຣົບຂັນສ່ວນທີ່ເປັນອະດີດ ປະກາດວາທະສະແດງທິດຖິຕ່າງ ໆ ດ້ວຍມູນເຫດ ໑໘ ຢ່າງ ຂໍ້ນັ້ນ ເປັນຄວາມເຂົ້າໃຈຂອງພວກເຂົາຜູ້ບໍ່ຮູ້ບໍ່ເຫັນ ເປັນຄວາມຕ້ອງການ ຄວາມດີ້ນຣົນຂອງຄົນມີຕັນຫາເທົ່ານັ້ນ

[໑໑໑] ພວກທີ່ມີວາທະວ່າ ອັດຕາ ຫຼັງຈາກຕາຍແລ້ວມີສັນຍາ ບັນຍັດອັດຕາຫຼັງຈາກຕາຍແລ້ວວ່າມີສັນຍາດ້ວຍມູນເຫດ ໑໖ ຢ່າງ ຂໍ້ນັ້ນ ເປັນຄວາມເຂົ້າໃຈຂອງພວກເຂົາຜູ້ບໍ່ຮູ້ບໍ່ເຫັນ ເປັນຄວາມຕ້ອງການ ຄວາມດີ້ນຣົນຂອງຄົນມີຕັນຫາຄືກັນ

[໑໑໔] ພວກທີ່ມີວາທະວ່າ ອັດຕາຫຼັງຈາກຕາຍແລ້ວບໍ່ມີສັນຍາ ບັນຍັດອັດຕາຫຼັງຈາກຕາຍແລ້ວວ່າບໍ່ມີສັນຍາດ້ວຍມູນເຫດ ໘ ຢ່າງ ຂໍ້ນັ້ນ ເປັນຄວາມເຂົ້າໃຈຂອງພວກເຂົາຜູ້ບໍ່ຮູ້ບໍ່ເຫັນເປັນ ຄວາມຕ້ອງການ ຄວາມດີ້ນຣົນຂອງຄົນມີຕັນຫາຄືກັນ

[໑໑໓] ພວກທີ່ມີວາທະວ່າອັດຕາຫຼັງຈາກຕາຍແລ້ວ ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ ບັນຍັດອັດຕາຫຼັງຈາກຕາຍແລ້ວວ່າ ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນດ້ວຍມູນເຫດ ໘ ຢ່າງ ຂໍ້ນັ້ນເປັນຄວາມເຂົ້າໃຈຂອງພວກເຂົາຜູ້ບໍ່ຮູ້ບໍ່ເຫັນ ເປັນຄວາມຕ້ອງການຄວາມດີ້ນຣົນຂອງຄົນມີຕັນຫາຄືກັນ

[໑໑໔] ພວກທີ່ມີວາທະວ່າຫຼັງຈາກຕາຍແລ້ວ ອັດຕາຂາດສູນ ບັນຍັດຄວາມຂາດສູນ ຄວາມພິນາດ ແລະ ຄວາມບໍ່ເກີດອີກຂອງສັດດ້ວຍມູນເຫດ ໗ ຢ່າງ ຂໍ້ນັ້ນເປັນຄວາມເຂົ້າໃຈຂອງ ພວກເຂົາຜູ້ບໍ່ຮູ້ບໍ່ເຫັນ ເປັນຄວາມຕ້ອງການ ຄວາມດີ້ນຣົນຂອງຄົນມີຕັນຫາຄືກັນ

[໑໑໕] ພວກທີ່ມີວາທະວ່າມີສະພາບບາງຢ່າງເປັນນິບພານໃນປະຈຸບັນ ບັນຍັດນິບພານໃນປະຈຸບັນວ່າ ເປັນບໍຣົມມະທຳຂອງສັດດ້ວຍມູນເຫດ ໕ ຢ່າງ ຂໍ້ນັ້ນ ເປັນຄວາມເຂົ້າໃຈຂອງພວກເຂົາຜູ້ບໍ່ຮູ້ບໍ່ເຫັນ ເປັນຄວາມຕ້ອງການ ຄວາມດີ້ນຣົນຂອງຄົນມີຕັນຫາຄືກັນ

[໑໑໖] ພວກທີ່ກຳນົດຂັນໃນອະນາຄົດ ເຫັນໄປຕາມຂັນໃນອະນາຄົດ ປາຣົບຂັນໃນອະນາຄົດ ປະກາດວາທະສະແດງທິດຖິຕ່າງ ໆ ດ້ວຍມູນເຫດ ໔໔ ຢ່າງ ຂໍ້ນັ້ນ ເປັນຄວາມເຂົ້າໃຈຂອງພວກເຂົາຜູ້ບໍ່ຮູ້ບໍ່ເຫັນ ເປັນຄວາມຕ້ອງການ ຄວາມດີ້ນຣົນຂອງຄົນມີຕັນຫາເທົ່ານັ້ນ

[໑໑໗] ພິກຂຸທັງຫຼາຍ ສະມະນະພາມພວກທີ່ກຳນົດຂັນໃນອະດີດ ພວກທີ່ກຳນົດຂັນໃນອະນາຄົດ ແລະ ພວກທີ່ກຳນົດຂັນໃນອະດີດ ແລະ ອະນາຄົດ ລ້ວງກໍມີຄວາມເຫັນໄປຕາມຂັນໃນສ່ວນທີ່ເປັນອະດີດ ແລະ ອະນາຄົດ ປາຣົບຂັນໃນອະດີດ ແລະ ອະນາຄົດ ປະກາດວາທະສະແດງທິດຖິຕ່າງ ໆ ດ້ວຍມູນເຫດ ໖໒ ຢ່າງ ຂໍ້ນັ້ນ ເປັນຄວາມເຂົ້າໃຈຂອງພວກເຂົາຜູ້ບໍ່ຮູ້ບໍ່ເຫັນ ເປັນຄວາມຕ້ອງການ ຄວາມດີ້ນຣົນຂອງຄົນມີຕັນຫາເທົ່ານັ້ນ

## ວ່າດ້ວຍການບັນຍັດອັດຕາແລະໂລກເພາະຜັດສະເປັນເຫດ

[໑໑໘] ພິກຂຸທັງຫຼາຍ ບັນດາສະມະນະພາມເຫຼົ່ານັ້ນ ພວກທີ່ມີວາທະວ່າທ່ຽງບັນຍັດອັດຕາ ແລະໂລກວ່າທ່ຽງດ້ວຍມູນເຫດ ໔ ຢ່າງ ຂໍ້ນັ້ນ ເພາະຜັດສະເປັນເຫດ

[໑໑໙] ພວກທີ່ມີວາທະວ່າບາງຢ່າງທ່ຽງ ບາງຢ່າງບໍ່ທ່ຽງ ບັນຍັດອັດຕາ ແລະ ໂລກວ່າບາງຢ່າງທ່ຽງ ບາງຢ່າງບໍ່ທ່ຽງ ດ້ວຍມູນເຫດ ໔ ຢ່າງ ຂໍ້ນັ້ນ ເພາະຜັດສະເປັນເຫດ

[໑໒໐] ພວກທີ່ມີວາທະວ່າໂລກມີທີ່ສຸດ ໂລກບໍ່ມີທີ່ສຸດ ບັນຍັດວ່າໂລກມີທີ່ສຸດ ໂລກບໍ່ມີທີ່ສຸດດ້ວຍມູນເຫດ ໔ ຢ່າງ ຂໍ້ນັ້ນ ເພາະຜັດສະເປັນເຫດ

[໑໘໑] ພວກທີ່ມີວາທະຫຼົບລັ້ງງບໍ່ຕາຍໂຕ ເມື່ອຖືກຖາມບັນຫາໃນເລື່ອງນັ້ນ ໆ ຍ່ອມກ່າວຫຼົບລັ້ງງໄມ່ແນ່ນອນດ້ວຍມູນເຫດ ໔ ຢ່າງ ຂໍ້ນັ້ນ ເພາະຜັດສະເປັນເຫດ

[໑໘໒] ພວກທີ່ມີວາທະວ່າອັດຕາ ແລະ ໂລກເກີດຂຶ້ນເອງບໍ່ມີເຫດປັດໄຈ ບັນຍັດອັດຕາ ແລະໂລກວ່າເກີດຂຶ້ນເອງ ບໍ່ມີເຫດປັດໄຈດ້ວຍມູນເຫດ ໒ ຢ່າງ ຂໍ້ນັ້ນເພາະຜັດສະເປັນເຫດ

[໑໘໓] ພວກທີ່ກໍານົດຂັນໃນອະດີດ ເຫັນໄປຕາມຂັນໃນອະດີດ ປາຣົບຂັນທີ່ເປັນອະດີດ ປະກາດວາທະສະແດງທິດຖິຕ່າງ ໆ ດ້ວຍມູນເຫດ ໑໘ ຢ່າງ ຂໍ້ນັ້ນ ກໍເພາະຜັດສະເປັນເຫດ

[໑໘໔] ພວກທີ່ມີວາທະວ່າອັດຕາ ຫຼັງຈາກຕາຍແລ້ວມີສັນຍາ ບັນຍັດອັດຕາຫຼັງຈາກຕາຍແລ້ວວ່າມີສັນຍາ ດ້ວຍມູນເຫດ ໑໖ ຢ່າງ ຂໍ້ນັ້ນ ເພາະຜັດສະເປັນເຫດ

[໑໘໕] ພວກທີ່ມີວາທະວ່າອັດຕາ ຫຼັງຈາກຕາຍແລ້ວບໍ່ມີສັນຍາ ບັນຍັດອັດຕາຫຼັງຈາກຕາຍແລ້ວວ່າບໍ່ມີສັນຍາ ດ້ວຍມູນເຫດ ໘ ຢ່າງ ຂໍ້ນັ້ນ ເພາະຜັດສະເປັນເຫດ

[໑໘໖] ພວກທີ່ມີວາທະວ່າ ອັດຕາ ຫຼັງຈາກຕາຍແລ້ວມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ ບັນຍັດອັດຕາ ຫຼັງຈາກຕາຍແລ້ວວ່າ ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ ດ້ວຍມູນເຫດ ໘ ຢ່າງຂໍ້ນັ້ນເພາະຜັດສະເປັນເຫດ

[໑໘໗] ພວກທີ່ມີວາທະວ່າຫຼັງຈາກຕາຍແລ້ວ ອັດຕາຂາດສູນ ບັນຍັດຄວາມຂາດສູນ ຄວາມພິນາດ ແລະ ຄວາມບໍ່ເກີດອີກຂອງສັດ ດ້ວຍມູນເຫດ ໗ ຢ່າງ ຂໍ້ນັ້ນ ເພາະຜັດສະເປັນເຫດ

[໑໘໘] ພວກທີ່ມີວາທະວ່າ ມີສະພາບບາງຢ່າງເປັນນິບພານໃນປະຈຸບັນ ບັນຍັດນິບພານໃນປະຈຸບັນວ່າ ເປັນບໍຣົມມະທໍາຂອງສັດດ້ວຍມູນເຫດ ໕ ຢ່າງ ຂໍ້ນັ້ນ ເພາະຜັດສະເປັນເຫດ

[໑໘໙] ພວກທີ່ກໍານົດຂັນໃນອະນາຄົດ ເຫັນໄປຕາມຂັນໃນອະນາຄົດ ປາຣົບຂັນໃນອະນາຄົດ ປະກາດວາທະສະແດງທິດຖິຕ່າງ ໆ ດ້ວຍມູນເຫດ ໔໔ ຢ່າງ ຂໍ້ນັ້ນ ເພາະຜັດສະເປັນເຫດ

[໑໙໐] ພິກຂຸທັງຫຼາຍ ສະມະນະພາມພວກທີ່ກໍານົດຂັນໃນອະດີດ ພວກທີ່ກໍານົດຂັນໃນອະນາຄົດ ແລະ ພວກທີ່ກໍານົດຂັນໃນອະດີດ ແລະ ອະນາຄົດ ລ້ວນມີຄວາມເຫັນໄປຕາມຂັນໃນອະດີດ ແລະ ອະນາຄົດ ປາຣົບຂັນທັງທີ່ເປັນອະດີດ ແລະ ທີ່ເປັນອະນາຄົດປະກາດວາທະສະແດງທິດຖິຕ່າງ ໆ ດ້ວຍມູນເຫດ ໖໒ ຢ່າງ ຂໍ້ນັ້ນ ເພາະຜັດສະເປັນເຫດ

# ວ່າດ້ວຍສິ່ງທີ່ເປັນໄປບໍ່ໄດ້

[໑໓໑] ພິກຂຸທັງຫຼາຍ ບັນດາສະມະນະພາມເຫຼົ່ານັ້ນ ພວກທີ່ມີວາທະວ່າທ່ຽງ ບັນຍັດອັດຕາແລະໂລກວ່າທ່ຽງ ດ້ວຍມູນເຫດ ໔ ຢ່າງ ເປັນໄປບໍ່ໄດ້ເລີຍ ທີ່ເມື່ອພວກເຂົາເວັ້ນຈາກຜັດສະແລ້ວຈະຍັງຮູ້ສຶກໄດ້

[໑໓໔] ພວກທີ່ມີວາທະວ່າບາງຢ່າງທ່ຽງ ບາງຢ່າງບໍ່ທ່ຽງ ບັນຍັດອັດຕາ ແລະ ໂລກວ່າບາງຢ່າງທ່ຽງ ບາງຢ່າງບໍ່ທ່ຽງ ດ້ວຍມູນເຫດ ໔ ຢ່າງ ເປັນໄປບໍ່ໄດ້ເລີຍ ທີ່ເມື່ອພວກເຂົາເວັ້ນຈາກຜັດສະແລ້ວຈະຍັງຮູ້ສຶກໄດ້

[໑໓໓] ພວກທີ່ມີວາທະວ່າໂລກມີທີ່ສຸດ ໂລກບໍ່ມີທີ່ສຸດບັນຍັດວ່າ ໂລກມີທີ່ສຸດ ໂລກບໍ່ມີທີ່ສຸດດ້ວຍມູນເຫດ ໔ ຢ່າງ ເປັນໄປບໍ່ໄດ້ເລີຍ ທີ່ເມື່ອພວກເຂົາເວັ້ນຈາກຜັດສະແລ້ວ ຈະຍັງຮູ້ສຶກໄດ້

[໑໓໔] ພວກທີ່ມີວາທະຫຼີບລັ່ງງບໍ່ຕາຍໂຕ ເມື່ອຖືກຖາມບັນຫາໃນເລື້ອງນັ້ນ ໆ ຍ່ອມກ່າວຫຼີບລັ່ງງບໍ່ຕາຍໂຕ ດ້ວຍມູນເຫດ ໔ ຢ່າງ ເປັນໄປບໍ່ໄດ້ເລີຍ ທີ່ເມື່ອພວກເຂົາເວັ້ນຈາກຜັດສະແລ້ວຈະຍັງຮູ້ສຶກໄດ້

[໑໓໕] ພວກທີ່ມີວາທະວ່າອັດຕາ ແລະ ໂລກເກີດຂຶ້ນເອງບໍ່ມີເຫດປັດໄຈບັນຍັດອັດຕາ ແລະໂລກວ່າເກີດຂຶ້ນເອງບໍ່ມີເຫດປັດໄຈ ດ້ວຍມູນເຫດ ໒ ຢ່າງ ເປັນໄປບໍ່ໄດ້ເລີຍ ທີ່ເມື່ອພວກເຂົາເວັ້ນຈາກຜັດສະແລ້ວຈະຍັງຮູ້ສຶກໄດ້

[໑໓໖] ພວກທີ່ກຳນົດຂັນໃນອະດີດ ເຫັນໄປຕາມຂັນໃນອະດີດ ປາຣົບຂັນທີ່ເປັນອະດີດປະກາດວາທະສະແດງທິດຖິຕ່າງ ໆ ດ້ວຍມູນເຫດ ໑໘ ຢ່າງ ເປັນໄປບໍ່ໄດ້ເລີຍ ທີ່ເມື່ອພວກເຂົາເວັ້ນຈາກຜັດສະແລ້ວຈະຍັງຮູ້ສຶກໄດ້

[໑໓໗] ພວກທີ່ມີວາທະວ່າອັດຕາຫຼັງຈາກຕາຍແລ້ວ ມີສັນຍາບັນຍັດອັດຕາ ຫຼັງຈາກຕາຍແລ້ວວ່າມີສັນຍາດ້ວຍມູນເຫດ ໑໖ ຢ່າງ ເປັນໄປບໍ່ໄດ້ເລີຍ ທີ່ເມື່ອພວກເຂົາເວັ້ນຈາກຜັດສະແລ້ວຈະຍັງຮູ້ສຶກໄດ້

[໑໓໘] ພວກທີ່ມີວາທະວ່າອັດຕາຫຼັງຈາກຕາຍແລ້ວບໍ່ມີສັນຍາ ບັນຍັດອັດຕາຫຼັງຈາກຕາຍແລ້ວວ່າບໍ່ມີສັນຍາ ດ້ວຍມູນເຫດ ໘ ຢ່າງ ເປັນໄປບໍ່ໄດ້ເລີຍ ທີ່ເມື່ອພວກເຂົາເວັ້ນຈາກຜັດສະແລ້ວຈະຍັງຮູ້ສຶກໄດ້

[໑໕໙] ພວກທີ່ມີວາທະວ່າອັດຕາຫຼັງຈາກຕາຍແລ້ວ ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ ບັນ ຍັດອັດຕາຫຼັງຈາກຕາຍແລ້ວວ່າ ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ ດ້ວຍມູນເຫດ ໘ ຢ່າງເປັນໄປບໍ່ໄດ້ເລີຍ ທີ່ເມື່ອພວກເຂົາເວັ້ນຈາກຜັດສະແລ້ວຈະຍັງຮູ້ສຶກໄດ້

[໑໘໐] ພວກທີ່ມີວາທະວ່າຫຼັງຈາກຕາຍແລ້ວ ອັດຕາຂາດສູນ ບັນຍັດຄວາມຂາດສູນ ຄວາມພິນາດ ແລະ ຄວາມບໍ່ເກີດອີກຂອງສັດ ດ້ວຍມູນເຫດ ໗ ຢ່າງເປັນໄປບໍ່ໄດ້ເລີຍ ທີ່ເມື່ອພວກເຂົາເວັ້ນຈາກຜັດສະແລ້ວຈະຍັງຮູ້ສຶກໄດ້

[໑໘໑] ພວກທີ່ມີວາທະວ່າ ມີສະພາບບາງຢ່າງເປັນນິບພານໃນປະຈຸບັນ ບັນຍັດນິບພານໃນປະຈຸບັນວ່າ ເປັນບໍຣິມມະທຳຂອງສັດ ດ້ວຍມູນເຫດ ໕ ຢ່າງ ເປັນໄປບໍ່ໄດ້ເລີຍ ທີ່ເມື່ອພວກເຂົາເວັ້ນຈາກຜັດສະແລ້ວຈະຍັງຮູ້ສຶກໄດ້

[໑໘໒] ພວກທີ່ກຳນົດຂັນໃນອະນາຄົດ ເຫັນໄປຕາມຂັນໃນອະນາຄົດ ປາຣົບຂັນທີ່ເປັນອະນາ ຄົດປະກາດວາທະສະແດງທິດຖິຕ່າງ ໆ ດ້ວຍມູນເຫດ ໔໔ ຢ່າງ ເປັນໄປບໍ່ໄດ້ເລີຍ ທີ່ເມື່ອພວກເຂົາເວັ້ນຈາກຜັດສະແລ້ວຈະຍັງຮູ້ສຶກໄດ້

[໑໘໓] ພິກຂຸທັງຫຼາຍ ສະມະນະພາມພວກທີ່ກຳນົດຂັນໃນອະດີດ ພວກທີ່ກຳນົດຂັນໃນອະນາຄົດ ແລະ ພວກທີ່ກຳນົດຂັນໃນອະດີດ ແລະ ອະນາຄົດ ຕ່າງກໍມີຄວາມເຫັນໄປຕາມຂັນໃນອະ ດີດແລະອະນາຄົດ ປາຣົບຂັນໃນອະດີດ ແລະ ອະນາຄົດປະກາດວາທະສະແດງທິດຖິຕ່າງ ໆ ດ້ວຍມູນເຫດ ໖໒ ຢ່າງ ເປັນໄປບໍ່ໄດ້ເລີຍ ທີ່ເມື່ອພວກເຂົາເວັ້ນຈາກຜັດສະແລ້ວຈະຍັງຮູ້ສຶກໄດ້

## ວ່າດ້ວຍວັດຕະທີ່ເຈົ້າລັດທິຕັ້ງໄວ້

[໑໘໔] ພິກຂຸທັງຫຼາຍ ບັນດາສະມະນະພາມເຫຼົ່ານັ້ນ ພວກທີ່ມີວາທະວ່າທ່ຽງ ບັນຍັດອັດຕາ ແລະ ໂລກ ວ່າທ່ຽງ ດ້ວຍມູນເຫດ ໔ ຢ່າງ ພວກທີ່ມີວາທະວ່າ ບາງຢ່າງທ່ຽງ ບາງຢ່າງບໍ່ທ່ຽງ ຯລຯ ພວກທີ່ມີວາທະວ່າ ໂລກມີທີ່ສຸດ ໂລກບໍ່ມີທີ່ສຸດ ຯລຯ ພວກທີ່ມີວາທະຫຼົບລ້ຽງບໍ່ຕາຍໂຕ ຯລຯ ພວກທີ່ມີວາທະວ່າ ອັດຕາ ແລະ ໂລກເກີດຂຶ້ນເອງບໍ່ມີເຫດປັດໄຈ ຯລຯ ພວກທີ່ກຳນົດຂັນໃນອະດີດ ຯລຯ ພວກທີ່ມີວາທະວ່າ ອັດຕາ ຫຼັງຈາກຕາຍແລ້ວມີສັນຍາ ຯລຯ ພວກທີ່ມີວາທະວ່າ ອັດຕາຫຼັງຈາກຕາຍແລ້ວບໍ່ມີສັນຍາ ຯລຯ ພວກທີ່ມີວາທະວ່າອັດຕາ ຫຼັງຈາກຕາຍແລ້ວມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ ຯລຯ ພວກທີ່ມີວາທະວ່າຫຼັງຈາກຕາຍແລ້ວອັດຕາຂາດສູນ ຯລຯ ພວກທີ່ມີວາທະວ່າມີສະພາບບາງຢ່າງເປັນນິບພານໃນປະຈຸບັນ ຯລຯ ພວກທີ່ກຳນົດຂັນໃນອະນາຄົດ ຯລຯ ພວກທີ່ກຳນົດຂັນໃນອະດີດ ພວກທີ່ກຳນົດຂັນໃນອະນາຄົດແລະພວກທີ່ກຳນົດຂັນໃນອະດີດ ແລະ ອະນາຄົດ ລ້ວນມີຄວາມເຫັນໄປຕາມຂັນໃນອະດີດ

ແລະ ອະນາຄົດ ປາຣົບຂັນໃນອະດີດ ແລະ ອະນາຄົດ ປະກາດວາທະສະແດງທິດຖິຕ່າງ ໆ ດ້ວຍມູນເຫດ ໖໒ ຢ່າງ ສະມະນະພາມເຫຼົ່ານັ້ນ ທຸກຈົ່ພວກຮັບສຳຜັດ (ຜັດສະ) ທາງຜັດສະຍະຕະນະ ໖ ແລ້ວເກີດເວທະນາ (ຄວາມຮູ້ສຶກ) ເພາະເວທະນາເປັນປັດໄຈ ຈຶ່ງເກີດມີຕັນຫາ (ຄວາມຢາກ) ເພາະຕັນຫາເປັນປັດໄຈ ຈຶ່ງເກີດມີອຸປາທານ (ຄວາມຢຶດໝັ້ນຖືໝັ້ນ) ເພາະອຸປາທານເປັນປັດໄຈ ຈຶ່ງເກີດມີພົບ (ຄວາມມີຄວາມເປັນ) ເພາະພົບເປັນປັດໄຈ ຈຶ່ງເກີດມີຊາດ (ຄວາມເກີດ) ເພາະຊາດເປັນປັດໄຈ ຈຶ່ງເກີດມີຊະລາ (ຄວາມແກ່) ມໍລະນະ(ຄວາມຕາຍ) ໂສກະ (ຄວາມເສົ້າໂສກ) ປະຣິເທວະ (ຄວາມຮ່ຳໄຮ) ທຸກ (ຄວາມບໍ່ສະບາຍກາຍ) ໂທມະນັດ (ຄວາມບໍ່ສະບາຍໃຈ) ແລະອຸປາຍາດ (ຄວາມຄັບແຄ້ນໃຈ)

## ວ່າດ້ວຍບໍ່ມີວັດຕະເປັນຕົ້ນ

[໑໔໕] ພິກຂຸທັງຫຼາຍ ເມື່ອໃດ ພິກຂຸຮູ້ຊັດແຈ້ງເຖິງຄວາມເກີດ ຄວາມດັບ ຄຸນ ໂທດ ແຫ່ງຜັດສະຍະຕະນະ ໖ ແລະ ອຸບາຍເຄື່ອງກຳຈັດຜັດສາຍະຕະນະເຫຼົ່ານັ້ນອອກໄດ້ ຕາມຄວາມເປັນຈິງ ເມື່ອນັ້ນ ທ່ານຍ່ອມຮູ້ຊັດແຈ້ງຍິ່ງກວ່າສະມະນະພາມເຫຼົ່ານັ້ນ

## ອຸບປະມາຄືຊາວປະມຸງຫວ່ານແຫ

[໑໔໖] ພິກຂຸທັງຫຼາຍ ສະມະນະ ຫຼື ພາມພວກທີ່ກຳນົດຂັນໃນອະດີດ ພວກທີ່ກຳນົດຂັນໃນອະນາຄົດ ແລະ ພວກທີ່ກຳນົດຂັນໃນອະດີດ ແລະ ອະນາຄົດ ລ້ວນມີຄວາມເຫັນໄປຕາມຂັນໃນອະດີດ ແລະ ອະນາຄົດ ປາຣົບຂັນໃນອະດີດ ແລະ ອະນາຄົດ ປະກາດວາທະສະແດງທິດຖິຕ່າງ ໆ ທັງໝົດຖືກທິດຖິ ໖໒ ນີ້ ເຊິ່ງເປັນ ຄື ແຫກວມເອົາໄວ້ ຕົກຢູ່ໃນອຳນາດແຫນີ້ ເມື່ອເງີຍຄໍຂຶ້ນມາໄດ້ກໍເງີຍໄດ້ຢູ່ແຕ່ໃນແຫນີ້ ຕິດຢູ່ໃນແຫນີ້ ຖືກຄອບເອົາໄວ້ດ້ວຍແຫນີ້ເອງ

ປຽບຄືຊາວປະມຸງ ຫຼື ລູກມືຊາວປະມຸງຜູ້ຊຳນານການໃຊ້ແຫຕາຖີ່ຫວ່ານລົງໜອງນ້ຳນ້ອຍ ໆ ເຂົາຄິດວ່າ ບັນດາສັດໂຕໃຫຍ່ໃນໜອງນ້ຳແຫ່ງນີ້ທັງໝົດ ຕ້ອງຖືກແຫງ້ວມເອົາໄວ້ຢູ່ໃນແຫນີ້ ເມື່ອຜຸດຂຶ້ນກໍຜຸດຢູ່ໃນແຫນີ້ ຕິດຢູ່ໃນແຫນີ້ ຖືກຄອບເອົາໄວ້ແລ້ວ ສັນໃດ ສະມະນະ ຫຼື ພາມພວກທີ່ກຳນົດຂັນໃນອະດີດ ພວກທີ່ກຳນົດຂັນໃນອະນາຄົດ ແລະ ພວກທີ່ກຳນົດຂັນໃນອະດີດ ແລະ ອະນາຄົດ ລ້ວນມີຄວາມເຫັນໄປຕາມຂັນໃນອະດີດ ແລະ ອະນາຄົດ ປາຣົບຂັນໃນອະດີດ ແລະອະນາຄົດ ປະກາດວາທະສະແດງທິດຖິຕ່າງ ໆ ທັງໝົດຖືກທິດຖິ ໖໒ ນີ້ ເຊິ່ງເປັນ ຄື ແຫກວມເອົາໄວ້ ຕົກຢູ່ໃນແຫນີ້ ເມື່ອເງີຍຄໍຂຶ້ນມາໄດ້ ກໍເຮັດໄດ້ແຕ່ຢູ່ໃນແຫນີ້ ຕິດຢູ່ໃນແຫນີ້ ຖືກກວມເອົາໄວ້ດ້ວຍແຫນີ້ເອງສັນນັ້ນ

## ອຸປະມາຮ່າງກາຍຄືໝາກມ່ວງ

[໑໔໗] ພິກຂຸທັງຫຼາຍ ກາຍຂອງຕະຖາຄົດປາສະຈາກຕັນຫາທີ່ພາໄປສູ່ພົບເສຍແລ້ວ ເທວະດາ ແລະ ມະນຸດຈັກເຫັນກາຍຂອງຕະຖາຄົດໄດ້ພຽງແຕ່ໃນເວລາທີ່ຍັງດຳຣົງຊີວິດຢູ່ເທົ່ານັ້ນ ຫຼັງຈາກກາຍແຕກສະຫຼາຍຫາຍໄປເພາະສິ້ນຊີວິດແລ້ວ ເທວະດາ ແລະ ມະນຸດຈັກບໍ່ເຫັນກາຍນັ້ນອີກ

ປຽບຄື ເມື່ອພົ້ວໝາກມ່ວງທີ່ຖືກຕັດຂັ້ວອອກແລ້ວ ຂັ້ວໝາກມ່ວງທັງໝົດທີ່ຫ້ອຍຢູ່ກັບຂັ້ວກໍຍ່ອມຕິດຕາມໝາກມ່ວງນັ້ນໄປ ສັນໃດ ກາຍຂອງຕະຖາຄົດປາສະຈາກຕັນຫາທີ່ພາໄປສູ່ພົບໃໝ່ເສຍແລ້ວ ເທວະດາ ແລະ ມະນຸດຈັກເຫັນກາຍຂອງຕະຖາຄົດໄດ້ພຽງແຕ່ໃນເວລາທີ່ຍັງດຳຣົງຊີວິດຢູ່ເທົ່ານັ້ນ ຫຼັງຈາກກາຍແຕກສະຫຼາຍຫາຍໄປເພາະສິ້ນຊີວິດແລ້ວ ເທວະດາ ແລະ ມະນຸດຈັກບໍ່ເຫັນກາຍນັ້ນອີກສັນນັ້ນ

[໑໔໘ ] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ ທ່ານພຣະອານົນໄດ້ທູນຖາມວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ໜ້າອັດສະຈັນແທ້ ບໍ່ເຄີຍປາກົດມີມາກ່ອນ ທຳບັນລະຍາຍນີ້ມີຊື່ວ່າແນວໃດນໍ? ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອານົນ ທ່ານຈົ່ງຈື່ຈື່ທຳບັນລະຍາຍນີ້ໄວ້ວ່າ ດາງແຫແຫ່ງປະໂຫຍດ (ອັດຖະຊາລະ) ກໍໄດ້ ດາງແຫແຫ່ງທຳ (ທຳຊາລະ) ກໍໄດ້ ດາງແຫແຫ່ງສຳພັນຍຸດຕະຍານອັນປະເສີດ (ພົມຊາລະ) ກໍໄດ້ ດາງແຫແຫ່ງທິດຖິ (ທິດຖິຊາລະ) ກໍໄດ້ ຕຳລາພິໄຊສົງຄາມ (ສັງຄາມະວິໄຊ) ອັນຍອດຢ້ຽມກໍໄດ້

[໑໔໙] ພິກຂຸເຫຼົ່ານັ້ນ ມີໃຈຍິນດີ ຕ່າງຊື່ນຊົມໃນພາສິດຂອງພຣະຜູ້ມີພຣະພາກເຈົ້າກໍແລ ເມື່ອພຣະຜູ້ມີພຣະພາກເຈົ້າຕັດໄວຍາກະຣະນະພາສິດນີ້ຈົບລົງ ໂລກະທາດທີ່ປະກອບດ້ວຍ ໑໐,໐໐໐ ຈັກກະວານໄດ້ຫວັ່ນໄຫວແລ້ວດ້ວຍອາການຢ່າງນີ້ແລ.

**ພົມຊາລະສູດທີ ໑ ຈົບ**

# ໘. ສາມັນຍະຜົນສູດ

## ວ່າດ້ວຍຜົນແຫ່ງຄວາມເປັນສະມະນະ

## ເລື້ອງພຣະເຈົ້າອະຊາຕະສັດຕູແລະຣາດຊະອຳມາດ

[໑໕໐] ຂ້າພະເຈົ້າໄດ້ຟັງມາແນວນີ້ວ່າ

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ໃນສວນໝາກມ່ວງຂອງໝໍຊີວົກໂກມາຣະພັດເຂດເມືອງຣາດຊະຄື ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ຈຳນວນ ໑,໒໕໐ ອົງ ສະໄໝນັ້ນ ໃນຄືນວັນເພັງຂຶ້ນ ໑໕ ຄ່ຳ ອັນເປັນວັນອຸໂບສົດຂອງເດືອນທີ່ ໔ ເຊິ່ງ ເປັນເດືອນທີ່ມີດອກໂກມຸດບານເຮື່ອງເຮືອ ພຣະຣາຊາແຫ່ງແຄວ້ນມະຄົດພຣະນາມວ່າ ອະຊາດສັດຕູ ເວເທຫິບຸດ ມີອຳມາດແວດລ້ອມ ປະທັບນັ່ງຢູ່ເທິງຜາສາດຊັ້ນເທິງ ໃນຂະນະນັ້ນ ພຣະອົງຊົງເປ່ງອຸທານຂຶ້ນມາວ່າ "ຣາຕີອັນສະຫວ່າງສະໄຫວ ໜ້າອອນຊອນ ງົດງາມ ໜ້າຊື່ນຊົມແນວນີ້ ເປັນເລີກງາມຍາມດີວັນນີ້ເຮົາຄວນເຂົ້າໄປຫາສະມະນະ ຫຼື ພາມຜູ້ໃດນໍ? ທີ່ຈະເຮັດໃຫ້ຈິດໃຈຂອງເຮົາເບີກບານເຫຼື້ອມໃສໄດ້

[໑໕໑] ເມື່ອພຣະອົງຊົງເປ່ງອຸທານແນວນີ້ແລ້ວ ຣາດຊະອຳມາດຜູ້ໜຶ່ງໄດ້ຂາບທູນວ່າ "ຂ້າແຕ່ ມະຫາຣາດ ຄູປູຣະນະກັດສະປະ ເປັນເຈົ້າໝູ່ເຈົ້າຄະນະ ເປັນຄະນາຈານ ເປັນຜູ້ມີຊື່ສຽງມີກຽດຕິຍົດ ເປັນເຈົ້າລັດທິ ຄົນຈຳນວນຫຼາຍຍ້ອງຍໍກັນວ່າເປັນຄົນດີມີປະສົບການຫຼາຍບວດມາດົນ ມີຊີວິດຢູ່ຫຼາຍລັດຊະສະໄໝລ່ວງການຜ່ານວັຍມາຫຼາຍພຣະອົງ ໂຜດສະເດັດເຂົ້າໄປຫາທ່ານ ເມື່ອສະເດັດເຂົ້າໄປຫາພຣະທັຍຂອງພຣະອົງຈະເບີກບານເຫຼື້ອມໃສ

ເມື່ອຣາດຊະອຳມາດຜູ້ນັ້ນ ຂາບທູນແນວນີ້ພຣະອົງຊົງມິດຢູ່

[໑໕໒] ຣາດຊະອຳມາດອີກຄົນໜຶ່ງໄດ້ຂາບທູນວ່າ "ຂ້າແຕ່ ມະຫາຣາດ ຄູມັກຂະລິໂຄສານ ເປັນເຈົ້າໝູ່ເຈົ້າຄະນະ ເປັນຄະນາຈານ ເປັນຜູ້ມີຊື່ສຽງ ມີກຽດຕິຍົດ ເປັນເຈົ້າລັດທິ ຄົນຈຳນວນຫຼາຍຍ້ອງຍໍກັນວ່າເປັນຄົນດີ ມີປະສົບການຫຼາຍ ບວດມາດົນ ມີຊີວິດຢູ່ຫຼາຍຣັດຊະສະໄໝລ່ວງການຜ່ານວັຍມາຫຼາຍພຣະອົງ ໂຜດສະເດັດເຂົ້າໄປຫາທ່ານ ເມື່ອສະເດັດເຂົ້າໄປຫາພຣະທັຍຂອງພຣະອົງຈະເບີກບານເຫຼື້ອມໃສ

ເມື່ອຣາດຊະອຳມາດຜູ້ນັ້ນ ຂາບທູນແນວນີ້ພຣະອົງກໍຊົງມິດຢູ່

[໑໕໓] ຣາດຊະອຳມາດອີກຄົນໜຶ່ງ ໄດ້ຂາບທູນວ່າ "ຂ້າແຕ່ ມະຫາຣາດ ຄູອະຊິຕະເກສະກຳພົນ ເປັນເຈົ້າໝູ່ເຈົ້າຄະນະ ເປັນຄະນາຈານ ເປັນຜູ້ມີຊື່ສຽງ ມີກຽດຕິຍົດ ເປັນເຈົ້າລັດທິ ຄົນຈຳນວນຫຼາຍຍ້ອງຍໍກັນວ່າ ເປັນຄົນດີ ມີປະສົບການຫຼາຍ ບວດມາດົນ ມີຊີວິດຢູ່ຫຼາຍຣັດຊະສະໄໝ ລ່ວງການຜ່ານວັຍມາຫຼາຍພຣະອົງ ໂຜດສະເດັດເຂົ້າໄປຫາທ່ານ ເມື່ອສະເດັດເຂົ້າໄປຫາພຣະທັຍຂອງພຣະອົງຈະເບີກບານເຫຼື້ອມໃສ

ເມື່ອຣາດຊະອຳມາດຜູ້ນັ້ນ ຂາບທູນແນວນີ້ ພຣະອົງກໍຊົງມິດຢູ່

[໑໕໔] ຣາດຊະອຳມາດອີກຄົນໜຶ່ງ ໄດ້ຂາບທູນວ່າ "ຂ້າແຕ່ ມະຫາຣາດ ຄູປະກຸທະກັດຈາຍະນະ ເປັນເຈົ້າໝູ່ເຈົ້າຄະນະ ເປັນຄະນາຈານ ເປັນຜູ້ມີຊື່ສຽງ ມີກຽດຕິຍົດ ເປັນເຈົ້າລັດທິ ຄົນຈື່ ນວນຫຼາຍຍ້ອງຍໍກັນວ່າເປັນຄົນດີ ມີປະສົບການຫຼາຍ ບວດມາດົນ ມີຊີວິດຢູ່ຫຼາຍຣັດຊະສະໄໝ ລ່ວງການຜ່ານວັຍມາຫຼາຍພຣະອົງ ໂຜດສະເດັດເຂົ້າໄປຫາທ່ານ ເມື່ອສະເດັດເຂົ້າໄປຫາພຣະທັຍຂອງພຣະອົງຈະເບີກບານເຫຼື້ອມໃສ

ເມື່ອຣາດຊະອຳມາດຜູ້ນັ້ນຂາບທູນແນວນີ້ ພຣະອົງກໍຊົງມິດຢູ່

[໑໕໕] ຣາດຊະອຳມາດອີກຄົນໜຶ່ງໄດ້ຂາບທູນວ່າ "ຂ້າແຕ່ ມະຫາຣາດ ຄູສັນໄຊເວລັດຖະບຸດເປັນເຈົ້າໝູ່ເຈົ້າຄະນະ ເປັນຄະນາຈານ ເປັນຜູ້ມີຊື່ສຽງ ມີກຽດຕິຍົດ ເປັນເຈົ້າລັດທິ ຄົນຈຳນວນຫຼາຍຍ້ອງຍໍກັນວ່າເປັນຄົນດີ ມີປະສົບການຫຼາຍ ບວດມາດົນ ມີຊີວິດຢູ່ຫຼາຍຣັດຊະສະໄໝ ລ່ວງການຜ່ານວັຍມາຫຼາຍພຣະອົງ ໂຜດສະເດັດເຂົ້າໄປຫາທ່ານ ເມື່ອສະເດັດເຂົ້າໄປຫາພຣະທັຍຂອງພຣະອົງຈະເບີກບານເຫຼື້ອມໃສ

ເມື່ອຣາດຊະອຳມາດຜູ້ນັ້ນ ຂາບທູນແນວນີ້ພຣະອົງກໍຊົງມິດຢູ່

[໑໕໖] ຣາດຊະອຳມາດອີກຄົນໜຶ່ງໄດ້ຂາບທູນວ່າ "ຂ້າແຕ່ ມະຫາຣາດ ຄູນິຄົນນາຕະບຸດ ເປັນເຈົ້າໝູ່ເຈົ້າຄະນະ ເປັນຄະນາຈານ ເປັນຜູ້ມີຊື່ສຽງ ມີກຽດຕິຍົດ ເປັນເຈົ້າລັດທິ ຄົນຈຳນວນຫຼາຍຍ້ອງຍໍກັນວ່າເປັນຄົນດີ ມີປະສົບການຫຼາຍ ບວດມາດົນມີ ຊີວິດຢູ່ຫຼາຍຣັດຊະສະໄໝ ລ່ວງການຜ່ານວັຍມາຫຼາຍພຣະອົງ ໂຜດສະເດັດເຂົ້າໄປຫາທ່ານ ເມື່ອສະເດັດເຂົ້າໄປຫາພຣະທັຍຂອງພຣະອົງຈະເບີກບານເຫຼື້ອມໃສ

ເມື່ອຣາດຊະອຳມາດຜູ້ນັ້ນຂາບທູນແນວນີ້ພຣະອົງກໍຊົງມິດຢູ່

## ວ່າດ້ວຍໝໍຊີວົກໂກມາຣະພັດ

[໑໕໗] ສະໄໝນັ້ນ ໝໍຊີວົກໂກມາຣະພັດນັ່ງນິ່ງຢູ່ ໃນທີ່ບໍ່ໄກຈາກພຣະເຈົ້າອະຊາດສັດຕູເວເທຫິບຸດ ພຣະອົງຕັດຖາມໝໍຊີວົກໂກມາຣະພັດວ່າ "ສະຫາຍຊີວົກ ເປັນຫຍັງ? ທ່ານຈຶ່ງມິດຢູ່ແນວນີ້ບໍ?"

ໝໍຊີວົກໂກມາຣະພັດທູນຕອບວ່າ "ຂ້າແຕ່ ມະຫາຣາດ ພຣະຜູ້ມີພຣະພາກ ຜູ້ຊົງເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຊອບ ປະທັບຢູ່ໃນສວນໝາກມ່ວງຂອງຂ້າພຣະອົງ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ຈຳນວນ ໑,໒໕໐ ຮູບ ພຣະອົງມີພຣະກິດຕິສັບອັນງາມຊ່າລືໄປແບບນີ້ວ່າ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຊອບ ບໍລິບູນດ້ວຍວິດຊາແລະຈະຣະນະ ສະເດັດໄປດີຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງຍອດຢ້ຽມ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ຂໍໃຫ້ພຣະອົງໂຜດສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເມື່ອສະເດັດເຂົ້າໄປເຝົ້າແລ້ວ ພຣະທັຍຂອງພຣະອົງຈະເບີກບານເຫຼື້ອມໃສ

[໑໕໗] ພຣະອົງຈຶ່ງມີຮັບສັ່ງວ່າ "ຖ້າເປັນແບບນັ້ນ ທ່ານຈົ່ງສັ່ງໃຫ້ຈັດກຽມຂະບວນຊ້າງເຖິ້ນສະຫາຍຊີວົກ"

ເມື່ອແລ້ວ ໝໍຊີວົກໂກມາຣະພັດ ໄດ້ຂາບທູນຮັບສະໜອງ ພຣະບໍຣົມຣາດຊະໂອງການແລ້ວສັ່ງໃຫ້ກຽມຊ້າງພັງ ໕໐໐ ເຊືອກ ແລະ ຊ້າງພຣະບ່ອນນັ່ງ ຂາບທູນວ່າ "ຂະບວນຊ້າງກຽມພ້ອມແລ້ວ ຂໍເຊີນໃຕ້ຝ່າລະອອງທຸລີພຣະບາດສະເດັດເຖີ້ນ ໂດຍຂ້ານ້ອຍ"

[໑໕໘] ຕໍ່ມາພຣະເຈົ້າອະຊາດສັດຕູເວເທຫິບຸດ ໂຜດໃຫ້ສະຕີ ໕໐໐ ຄົນ ຂຶ້ນຊ້າງພັງເຊືອກລະ ໑ ຄົນ ແລ້ວຊົງຊ້າງພຣະບ່ອນນັ່ງມີຜູ້ຖືທອນໄຟ ສະເດັດອອກຈາກເມືອງຣາດຊະຄຶດ້ວຍຣາຊານຸພາບອັນຍິ່ງໃຫຍ່ ສົມພຣະກຽດໄປສູ່ສວນໝາກມ່ວງຂອງໝໍຊີວົກໂກມາຣະພັດ

ພໍໃກ້ຈະເຖິງສວນໝາກມ່ວງ ພຣະອົງຊົງຫວາດຣະແວງພຣະໂລມາຊາດຊູຊັນ ຈຶ່ງຕັດຖາມໝໍຊີວົກໂກມາຣະພັດວ່າ "ສະຫາຍຊີວົກ ທ່ານບໍ່ໄດ້ຫຼອກເຮົາ ບໍ່ໄດ້ລວງເຮົາ ບໍ່ໄດ້ນຳເຮົາມາໃຫ້ສັດຕູແມ່ນບໍ? ມີພິກຂຸສົງໝູ່ໃຫຍ່ເປັນຈຳນວນ ໑,໒໕໐ ອົງ ແຕ່ເປັນຫຍັງ ຈຶ່ງບໍ່ມີສຽງຈາມສຽງອະແຮ່ມໄອ ຫຼື ສຽງໂອ້ລົມກັນເລີຍ"

ໝໍຊີວົກໂກມາຣະພັດທູນຕອບວ່າ "ພຣະອົງໂຜດຢ່າໄດ້ຊົງຫວາດຣະແວງໄປເລີຍຂ້າພຣະ ອົງບໍ່ໄດ້ຫຼອກພຣະອົງ ບໍ່ໄດ້ລວງພຣະອົງ ບໍ່ໄດ້ນຳພຣະອົງມາໃຫ້ສັດຕູດອກ ຂ້າແຕ່ມະຫາຣາດ ພຣະອົງໂຜດສະເດັດເຂົ້າໄປເຖີ້ນ ເຫັນບໍ່ຢູ່ບ່ອນນັ້ນທີ່ມີແສງປະທີບໄຕ້ຢູ່ໃນສາລານັ່ງຫຼີ້ນນັ້ນ

## ພຣະເຈົ້າອະຊາຕະສັດຕູທູນຖາມເລື້ອງຜົນແຫ່ງຄວາມເປັນສະມະນະ

[໑໖໐] ພຣະອົງຈຶ່ງໄດ້ສະເດັດເຂົ້າໄປໂດຍຂະບວນຊ້າງພຣະບ່ອນນັ່ງ ຈົນສຸດທາງຊ້າງຍ່າງແລ້ວສະເດັດລົງຈາກຊ້າງພຣະບ່ອນນັ່ງ ເຂົ້າທາງປະຕູສາລານັ່ງຫຼື້ນຕັດຖາມໝໍຊີວົກໂກມາຣະພັດວ່າ"ສະຫາຍຊີວົກພຣະຜູ້ມີພຣະພາກເຈົ້າປະທັບຢູ່ໄສນໍ?"

ໝໍຊີວົກໂກມາຣະພັດທູນຕອບວ່າ "ຂ້າແຕ່ ມະຫາຣາດ ຜູ້ປະທັບນັ່ງອີງເສົາກາງ ທັນພຣະພັກໄປທາງທິດຕາເວັນອອກຢູ່ທາງໜ້າພິກຂຸສົງນັ້ນແຫຼະ ເປັນພຣະຜູ້ມີພຣະພາກເຈົ້າຂ້ານ້ອຍ"

[໑໖໑] ລຳດັບນັ້ນ ພຣະເຈົ້າອະຊາດສັດຕູ ເວເທຫິບຸດ ສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຖີງທີ່ປະທັບ ໄດ້ປະທັບຢືນໃນທີ່ສົມຄວນແລ້ວ ຊົງແນມເຫັນພິກຂຸສົງ ພາກັນສະຫງົບນິ່ງກັນຢູ່ຄືສະນ້ຳໃສ ຈຶ່ງຊົງເປ່ງອຸທານຂຶ້ນມາວ່າ "ຂໍໃຫ້ອຸທັຍພັດທະກຸມານຂອງເຮົາ ຈົ່ງມີຄວາມສະຫງົບເໝືອນຢ່າງພິກຂຸສົງໃນເວລານີ້ເຖີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມະຫາບໍພິດ ພຣະອົງສະເດັດມາຕາມແຮງສັດທາ"

ພຣະອົງຂາບທູນວ່າ "ອຸທັຍພັດທະກຸມານເປັນທີ່ຮັກຂອງຂ້ານ້ອຍ ຂໍໃຫ້ທ່ານຈົ່ງມີຄວາມສະຫງົບເໝືອນຢ່າງພິກຂຸສົງໃນເວລານີ້ດ້ວຍເຖີ້ນ ຂ້ານ້ອຍ"

[໑໖໒] ລຳດັບນັ້ນ ພຣະອົງຊົງຂາບພຣະຜູ້ມີພຣະພາກເຈົ້າ ຊົງໄຫວ້ພິກຂຸສົງແລ້ວປະທັບນັ່ງໃນທີ່ສົມຄວນຂາບທູນວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ຂ້ານ້ອຍ ຂໍວະໂຮກາດທູນຖາມບັນຫາບາງຢ່າງກັບພຣະຜູ້ມີພຣະພາກເຈົ້າ ຫາກພຣະຜູ້ມີພຣະພາກເຈົ້າ ຈະປະທານພຣະອະໂຮກາດເພື່ອຊົງຕອບບັນຫາຂອງຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ເຊີນຖາມຕາມພຣະປະສົງເຖີ້ນ ມະຫາບໍພິດ"

[໑໖໓] ພຣະເຈົ້າອະຊາດສັດຕູເວເທຫິບຸດໄດ້ທູນຖາມວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ອາຊີບທີ່ອາໄສສິນະປະເຫຼົ່ານີ້ມີ ຄື ທະຫານຊ້າງ ທະຫານມ້າ ທະຫານລົດ ທະຫານທະນູ ພະນັກງານເຊີນທົງ ພະນັກງານຈັດກະບວນທັບ ພວກຈັດສົ່ງສະບຽງ ຣາດຊະນິກູນ ຜູ້ຊົງເປັນນາຍທະຫານລະດັບສູງ ທະຫານອາສາ ຂຸນພົນ ພົນກ້າຕາຍ ພົນເກາະ ພວກຂ້າທາດເຮືອນເບ້ຍ ພວກເຮັດເຂົ້າໜົມ ຊ່າງຕັດຜົມ ພະນັກງານເຄື່ອງສົງ ພວກພໍ່ຄົວ ຊ່າງຈັດດອກໄມ້ ຊ່າງຍ້ອມ ຊ່າງຫູກ ຊ່າງຈັກສານ ຊ່າງໝໍ້ ນັກຄຳນວນ ນັກບັນຊີ ຫຼືອາຊີບທີ່ອາໄສສິນະປະແນວອື່ນໆ ໃນທຳນອງນີ້ ຄົນເຫຼົ່ານັ້ນໄດ້ຮັບຜົນຈາກອາຊີບທີ່ອາໄສສິນະປະທີ່ເຫັນປະຈັກໄດ້ມາລ້ຽງຊີບໃນປະຈຸບັນ ຈຶ່ງບຳຣຸງຕົນເອງແດ່ ບິດາ ມານດາ ບຸດພັນລະຍາ ມິດສະຫາຍແດ່ ໃຫ້ເປັນສຸກໄດ້

ພ້ອມທັງພໍ່າເພັງທັກສິນາທານໃນສະມະນະພາມ ເຊິ່ງມີຜົນຫຼາຍເປັນໄປເພື່ອໃຫ້ໄດ້ອາລົມດີມີສຸກ ເປັນຜົນໃຫ້ເກີດໃນສະຫວັນ ພຣະອົງຈະຊົງບັນຍັດຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກແຈ້ງໃນປະຈຸບັນໄດ້ແນວນັ້ນແດ່ຫຼືບໍ່?"

[໑໖໔] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ມະຫາບໍພິດ ພຣະອົງຊົງຈຳໄດ້ ຫຼື ບໍ່ວ່າ ບັນຫາຂໍ້ນີ້ໄດ້ຕັດຖາມສະມະນະພາມອື່ນມາກ່ອນແລ້ວ"

ຂ້ານ້ອຍຈື່ໄດ້ຢູ່ວ່າ ເຄີຍຖາມບັນຫາຂໍ້ນີ້ກັບສະມະນະພາມເຫຼົ່າອື່ນມາແລ້ວ ໂດ້ຍຂ້ານ້ອຍ

ແລ້ວທ່ານເຫຼົ່ານັ້ນຕອບວ່າແນວໃດ? ຫາກບໍ່ໜັກພຣະທັຍເຊີນພຣະອົງຕັດຕໍ່ໄປເຖີ້ນ

ໃນສະຖານທີ່ທີ່ມີພຣະຜູ້ມີພຣະພາກເຈົ້າ ຫຼື ຜູ້ປຽບດັ່ງພຣະຜູ້ມີພຣະພາກເຈົ້າປະທັບນັ່ງຢູ່ ຂ້ານ້ອຍບໍ່ໜັກໃຈເລີຍ ໂດຍຂ້ານ້ອຍ

ຖ້າເປັນແນວນັ້ນ ເຊີນພຣະອົງຕັດເຖີ້ນ ມະຫາບໍພິດ

## ລັດທິຂອງຄູປູຣະນະກັດສະປະ

## ອະກິຣິຍະວາທະ

## ລັດທິທີ່ຖືວ່າເຮັດແລ້ວບໍ່ເປັນອັນເຮັດ

[໑໖໕] ພຣະເຈົ້າອະຊາດສັດຕູ ເວເທຫິບຸດຂາບທູນວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ໃນເມືອງຣາດຊະຄືນີ້ ຂ້ານ້ອຍເຂົ້າໄປຫາຄູປູຣະນະກັດສະປະເຖິງບ່ອນຢູ່ ໄດ້ເຈຣະຈາປາໄສທັກທວາຍກັນພໍຄຸ້ນເຄີຍດີແລ້ວ ໄດ້ນັ່ງຖາມຄູປູຣະນະກັດສະປະວ່າ "ທ່ານກັດສະປະ ອາຊີບທີ່ອາໄສສິນະປະຫຼວງຫຼາຍເຫຼົ່ານີ້ລ້ຽງຊີບມີຄື ທະຫານຊ້າງ ທະຫານມ້າ ທະຫານລົດ ທະຫານທະນູ ພະນັກງານເຊີນທົງ ພະນັກງານຈັດກະບວນທັບ ພວກຈັດສົ່ງສະບຽງ ຣາດຊະນິກູນ ຜູ້ຊົງເປັນນາຍທະຫານລະດັບສູງ ທະຫານອາສາ ຊຸນພົນ ພົນກ້າຕາຍ ພົນເກາະ ພວກຂ້າທາດເຮືອນເບ້ຍ ພວກເຮັດເຂົ້າໜົມ ຊ່າງຕັດຜົມ ພະນັກງານເຄື່ອງສົງ ພວກພໍ່ຄົວ ຊ່າງດອກໄມ້ ຊ່າງຍ້ອມ ຊ່າງຫູກຊ່າງຈັກສານ ຊ່າງໝໍ້ ນັກຄຳນວນ ນັກບັນຊີ ຫຼື ອາຊີບທີ່ອາໄສສິນະປະຢ່າງອື່ນ ໆ ທຳນອງນີ້ ຄົນເຫຼົ່ານັ້ນໄດ້ຮັບຜົນຈາກອາຊີບທີ່ອາໄສສິນະປະທີ່ເຫັນປະຈັກມາລ້ຽງຊີບໃນປະຈຸບັນ ຈຶ່ງບຳຣຸງຕົນເອງແດ່ ບິດາມານດາ ບຸດພັນລະຍາ ມິດສະຫາຍແດ່ໃຫ້ເປັນສຸກໄດ້ ພ້ອມທັງພໍ່າເພັງທັກສິນາທານໃນສະມະນະພາມ ເຊິ່ງມີຜົນຫຼາຍເປັນໄປເພື່ອໃຫ້ໄດ້ອາລົມດີມີສຸກ ເປັນຜົນໃຫ້ເກີດໃນສະຫວັນ ທ່ານກັດສະປະຈະບັນຍັດຜົນແຫ່ງຄວາມເປັນສະມະນະທີ່ເຫັນຜົນປະຈັກໃນປະຈຸບັນໄດ້ແນວນັ້ນແດ່ຫຼືບໍ່?"

[໑໙໖] ຂ້າແຕ່ ພຣະອົງຜູ້ຈະເລີນ ເມື່ອຂ້ານ້ອຍຖາມແນວນີ້ ຄູປູຣະນະກັດສະປະຕອບວ່າ "ມະຫາບໍພິດ ເມື່ອບຸກຄົນເຮັດເອງ ໃຊ້ໃຫ້ຜູ້ອື່ນເຮັດ ຕັດເອງໃຊ້ໃຫ້ຜູ້ອື່ນຕັດ ບຽດບຽນເອງໃຊ້ໃຫ້ຜູ້ອື່ນບຽດບຽນ ເຮັດໃຫ້ເສົ້າໂສກເອງໃຊ້ໃຫ້ຜູ້ອື່ນເຮັດໃຫ້ເສົ້າໂສກ ເຮັດໃຫ້ລຳບາກເອງໃຊ້ໃຫ້ຜູ້ອື່ນເຮັດໃຫ້ລຳບາກດີ້ນຣົນເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ດີ້ນຣົນຂ້າ ສັດຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ຍ້ອງເບົາປຸ້ນຈີ້ເຮັດໂຈຣະກຳໃນບ້ານຫຼັງດຽວ ດັກຊຸ່ມທີ່ທາງປ່ຽວ ເປັນຊູ້ ເວົ້າຕົວະ ຜູ້ເຮັດແນວນັ້ນກໍບໍ່ຈັດວ່າເຮັດບາບ ແມ່ນຫາກບຸກຄົນໃຊ້ຈັກມີຄົມ ຄື ມີດ ຫຼື ດາບສັງຫານເຫຼົ່າສັດໃຫ້ຕາຍລົງໄປ ເປັນຄືລານຕາກຊີ້ນເປັນກອງພະເນີນດຽວກັນ ເຂົາຍ່ອມບໍ່ມີບາບທີ່ເກີດຈາກກຳນັ້ນ ບໍ່ມີບາບມາເຖິງເຂົາ ແມ່ນຫາກບຸກຄົນໄປຝັ່ງຂວາຂອງແມ່ນ້ຳຄົງຄາ ຂ້າເອງໃຊ້ໃຫ້ຜູ້ອື່ນຂ້າ ຕັດເອງໃຊ້ໃຫ້ຜູ້ອື່ນຕັດ ບຽດບຽນເອງໃຊ້ໃຫ້ຜູ້ອື່ນບຽດບຽນ ເຂົາຍ່ອມບໍ່ມີບາບທີ່ເກີດຈາກກຳນັ້ນ ບໍ່ມີບາບມາເຖິງເຂົາ ແມ່ນຫາກບຸກຄົນໄປຝັ່ງຊ້າຍແມ່ນ້ຳຄົງຄາ ໃຫ້ເອງ ໃຊ້ໃຫ້ຜູ້ອື່ນໃຫ້ ບູຊາເອງ ໃຊ້ໃຫ້ຜູ້ອື່ນບູຊາ ເຂົາຍ່ອມບໍ່ມີບຸນທີ່ເກີດຈາກກຳນັ້ນ ບໍ່ມີບຸນມາເຖິງເຂົາ ບໍ່ມີບຸນທີ່ເກີດຈາກການໃຫ້ທານ ຈາກການເຝິກອິນຊີ ຈາກການສັງລວມ ຈາກການເວົ້າຄຳສັດ ບໍ່ມີບຸນມາເຖິງເຂົາ" ດັ່ງນີ້ ຂ້ານ້ອຍ ຖາມເຖິງຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກແຈ້ງໄດ້ໃນປັດຈຸບັນ ຕໍ່ຄູປູຣະນະກັດສະປະ ແຕ່ທ່ານກັບຕອບເລື້ອງທີ່ເຮັດແລ້ວບໍ່ເປັນອັນເຮັດ

ຂ້າແຕ່ ພຣະອົງຜູ້ຈະເລີນ ຂ້ານ້ອຍຖາມເຖິງຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກໄດ້ ແຕ່ຄູປູຣະນະກັດສະປະກັບຕອບເລື້ອງທີ່ເຮັດແລ້ວບໍ່ເປັນອັນເຮັດ ປຽບຄືກັນກັບເຂົາຖາມເລື້ອງໝາກມ່ວງ ກັບໄປຕອບເລື້ອງໝາກມີ້ ຫຼື ເຂົາຖາມເລື້ອງໝາກມີ້ປ່າກັບໄປຕອບເລື້ອງໝາກມ່ວງ ຂ້ານ້ອຍຈຶ່ງຄິດວ່າ ຄົນລະດັບເຮົາຈະຮຸກຮານສະມະນະພາມຜູ້ຢູ່ໃນຣາຊະອານາເຂດເປັນເລື້ອງທີ່ບໍ່ຄວນ ຂ້ານ້ອຍຈຶ່ງບໍ່ຊື່ນຊົມ ບໍ່ຕຳໜິຄຳກ່າວຂອງຄູປູຣະນະກັດສະປະ ເຖິງບໍ່ຊື່ນຊົມ ບໍ່ຕຳໜິ ແຕ່ກໍບໍ່ພໍໃຈ ແລະບໍ່ເປ່ງວາຈາສະແດງຄວາມບໍ່ພໍໃຈອອກມາ ເມື່ອບໍ່ຢຶດຖື ບໍ່ໃສ່ໃຈ ຄຳກ່າວນັ້ນ ກໍໄດ້ລຸກຂຶ້ນຈາກບ່ອນນັ່ງຍ່າງຈາກໄປ.

## ລັດທິຂອງຄູມັກຂະລິໂຄສານ

## ນັດຖິກະວາທະ

## ລັດທິທີ່ຖືວ່າບໍ່ມີເຫດບໍ່ມີປັດໄຈ

[໑໙໗] ຂ້າແຕ່ ພຣະອົງຜູ້ຈະເລີນ ໃນເມືອງຣາດຊະຄຶນີ້ເອງ ຂ້ານ້ອຍເຂົ້າໄປຫາຄູມັກຂະລິໂຄສານເຖິງບ່ອນຢູ່ໄດ້ເຈຣະຈາປາໄສທັກທວາຍກັນພໍຄຸ້ນເຄີຍດີແລ້ວ ໄດ້ນັ່ງລົງຖາມຄູມັກຂະລິໂຄສານວ່າ "ທ່ານໂຄສານອາຊີບທີ່ອາໄສສິນະປະຫຼວງຫຼາຍເຫຼົ່ານີ້ ຄື ຯລຯ ຯລຯ ທ່ານໂຄສານຈະບັນຍັດຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກໃນປະຈຸບັນໄດ້ແນວນັ້ນແດ່ຫຼືບໍ່?"

[໑໖໗] ຂ້າແຕ່ພຣະອົງຜູ້ຈະເລີນ ເມື່ອຂ້ານ້ອຍຖາມແບບນີ້ ຄູມັກຂະລິໂຄສານຕອບວ່າ "ມະຫາບໍພິດຄວາມເສົ້າໝອງຂອງສັດທັງຫຼາຍ ບໍ່ມີເຫດ ບໍ່ມີປັດໄຈ ສັດທັງຫຼາຍເສົ້າໝອງເອງ ຄວາມບໍລິສຸດຂອງສັດທັງຫຼາຍບໍ່ມີເຫດບໍ່ມີປັດໄຈ ສັດທັງຫຼາຍບໍລິສຸດເອງບໍ່ແມ່ນເພາະການກະທຳຂອງຕົນ ແລະບໍ່ແມ່ນເພາະການກະທຳຂອງຜູ້ອື່ນ ບໍ່ແມ່ນເພາະການກະທຳຂອງມະນຸດບໍ່ມີກຳລັງ ບໍ່ມີຄວາມພຽນ ບໍ່ມີຄວາມສາມາດຂອງມະນຸດ ບໍ່ມີຄວາມພະຍາຍາມຂອງມະນຸດ ສັດ ປານະ ພູຕະ ຊີວະທັງປວງລ້ວນບໍ່ມີອຳນາດ ບໍ່ມີກຳລັງ ບໍ່ມີຄວາມພຽນ ຜັນປ່ຽນໄປຕາມໂຊກຊະຕາ ຕາມສະຖານະພາບທາງສັງຄົມ ແລະ ຕາມລັກສະນະສະຂອງຕົນ ສະເຫວີຍສຸກ ແລະທຸກໃນອະພິຊາດທັງ ໖ ອັນໜຶ່ງ ກຳເນີດທີ່ເປັນປະທານ ໑໐໖,໖໐໐ ກຳ ໕໐໐ ກຳ ໕ ກຳ ໓ ກຳ ໑ ກຳ ເຄິ່ງ ໓ ປະຕິປະທາ ໖໒ ອັນຕົນກັບ ໖໒ ອະພິຊາດ ໖ ປຸຣິດ ພູມ ໔໗ ອາຊີວະກະ ໔,໙໐໐ ປະຣິພາຊົກ ໔,໙໐໐ ນາຄະວາດ ໔,໙໐໐ ອິນຊີ ໒,໐໐໐ ນະຣົກ ໓໐໐ ຣະໂຊທາດ ໕໓໖ ສັນຍີພາ ໗ ອະສັນຍີພາ ໗ ນິຄັນຖີພາ ໖໗ ເທວະດາ ໗ ມະນຸດ ໗ ຜີສາດ ໗ ສະຣະ ໗ ຕາໄມ້ໄຜ່ ໗ ຕາໄມ້ໄຜ່ ໗໐໐ ເຫວໃຫຍ່ ໗ ເຫວນ້ອຍ ໗໐໐ ມະຫາສຸບິນ ໗ ສຸບິນ ໗໐໐ ມະຫາກັບ ໗໗,໔໐໐,໐໐໐ ເຫຼົ່ານີ້ທີ່ຄົນພານ ແລະ ບັນດິດພາກັນທ່ຽວວຽນລອຍໄປຮອດແລ້ວ ຈັກທຳທີ່ສຸດແຫ່ງທຸກໄດ້ເອງ ບໍ່ມີຄວາມສົມຫວັງໃນຄວາມປາດຖະໜາວ່າ ເຮົາຈັກອົບຮົມກຳທີ່ຍັງບໍ່ໃຫ້ຜົນໃຫ້ເກີດຜົນ ຫຼື ສຳຜັດກຳທີ່ໃຫ້ຜົນແລ້ວຈັກເຮັດໃຫ້ໝົດສິ້ນໄປ ດ້ວຍສົນພົດຕະບະ ຫຼື ພົມມະຈັນນີ້ ບໍ່ມີສຸກທຸກທີ່ເຮັດໃຫ້ສິ້ນສຸດລົງໄດ້ (ຈຳນວນເທົ່ານັ້ນເທົ່ານີ້) ຄືການຜອງວັດດ້ວຍທະນານ ບໍ່ມີສັງສາຣະວັດທີ່ເຮັດໃຫ້ສິ້ນສຸດໄປໄດ້ ດ້ວຍອາການແບບນີ້ ບໍ່ມີຄວາມເສື່ອມ ແລະຄວາມຈະເລີນບໍ່ມີການເລື່ອນຂຶ້ນສູງ ແລະເລື່ອນລົງຕ່ຳ ພວກຄົນພານ ແລະ ບັນດິດພາກັນທ່ຽວວຽນລອຍໄປແລ້ວກໍຈັກທຳທີ່ສຸດແຫງທຸກໄດ້ເອງ ຄື ກໍ້ດ້າຍທີ່ຖືກດຶກອອກໄປຍ່ອມໝົດໄປໄດ້ເອງແນວນັ້ນ"

[໑໖໙] ຂ້າແຕ່ ພຣະອົງຜູ້ຈະເລີນ ຂ້ານ້ອຍຖາມເຖິງຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກໄດ້ ແຕ່ຄູມັກຂະລິໂຄສານກັບຕອບເລື້ອງຄວາມບໍລິສຸດ ເພາະການວຽນຕາຍເກີດ ປຽບຄືເຂົາຖາມເລື້ອງໝາກມ່ວງ ກັບຕອບເລື້ອງໝາກມີ້ ຫຼື ເຂົາຖາມເລື້ອງໝາກມີ້ປ່າກັບຕອບເລື້ອງໝາກມ່ວງ ຂ້ານ້ອຍ ຈຶ່ງຄິດວ່າຄົນລະດັບເຮົາຈະຮຸກຮານສະມະນະພາມຜູ້ຢູ່ໃນຣາຊະອານາເຂດເປັນເລື້ອງທີ່ບໍ່ສົມຄວນ ຂ້ານ້ອຍຈຶ່ງບໍ່ຊື່ນຊົມ ບໍ່ຕຳໜິຄຳກ່າວຂອງຄູມັກຂະລິໂຄສານ ເຖິງບໍ່ຊື່ນຊົມບໍ່ຕຳໜິ ແຕ່ກໍບໍ່ພໍໃຈ ແລະ ບໍ່ເປ່ງວາຈາສະແດງຄວາມບໍ່ພໍໃຈອອກມາ ເມື່ອບໍ່ຍຶດຖືບໍ່ໃສ່ໃຈຄຳກ່າວນັ້ນກໍໄດ້ລຸກຂຶ້ນຈາກບ່ອນນັ່ງຍ່າງຈາກໄປ

## ລັດທິຂອງຄູອະຊິຕະເກສະກໍາພົນ
## ອຸດເສທະວາທະ
## ລັດທິທີ່ຖືວ່າຫຼັງຈາກຕາຍແລ້ວອັດຕາຂາດສູນ

[໑໗໐] ຂ້າແຕ່ ພຣະອົງຜູ້ຈະເລີນ ຕໍ່ມາອີກໃນເມືອງຣາດຊະຄືນີ້ເອງ ຂ້ານ້ອຍເຂົ້າໄປຫາຄູອະຊິຕະເກສະກໍາພົນເຖິງບ່ອນຢູ່ ເຈຣະຈາປາໄສທັກທວາຍກັນພໍຄຸ້ນເຄີຍດີແລ້ວ ໄດ້ນັ່ງລົງຖາມຄູອະຊິຕະເກສະກໍາພົນວ່າ "ທ່ານອະຊິຕະ ອາຊີບທີ່ອາໄສສິນະປະຫຼວງຫຼາຍເຫຼົ່ານີ້ຄື ຯລຯ ຯລຯ ທ່ານອະຊິຕະຈະບັນຍັດຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກໃນປະຈຸບັນໄດ້ແນວນັ້ນແດ່ຫຼືບໍ່?"

[໑໗໑] ຂ້າແຕ່ ພຣະອົງຜູ້ຈະເລີນ ເມື່ອຂ້ານ້ອຍຖາມແນວນີ້ ຄູອະຊິຕະເກສະກໍາພົນຕອບວ່າ "ມະຫາບໍພິດ ທານທີ່ໃຫ້ແລ້ວບໍ່ມີຜົນ ຍັນທີ່ບູຊາແລ້ວບໍ່ມີຜົນ ການບວງຊວງກໍບໍ່ມີຜົນ ຜົນວິບາກແຫ່ງກໍາທີ່ທໍາດີທໍາຊົ່ວກໍບໍ່ມີ ໂລກນີ້ບໍ່ມີ ໂລກໜ້າບໍ່ມີ ຄຸນບິດາບໍ່ມີຄຸນມານດາບໍ່ມີ ຄຸນສັດທີ່ເກີດຜຸດຂຶ້ນແລ້ວທັງຫຼາຍກໍບໍ່ ມີສະມະນະພາມຜູ້ປະພຶດປະຕິບັດຊອບເຮັດໃຫ້ແຈ້ງໂລກນີ້ ແລະ ໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວ ສອນຜູ້ອື່ນໃຫ້ຮູ້ແຈ້ງກໍບໍ່ມີ ໂລກມະນຸດນີ້ຄືບ່ອນປະຊຸມແຫ່ງມະຫາພູຕະຮູບ ໔ ເມື່ອຕາຍສັ່ງງຊີວິດລົງ ທາດດິນກໍຕາມທາດດິນໄປ ທາດນໍ້າກໍຕາມທາດນໍ້າໄປ ທາດໄຟກໍຕາມທາດໄຟໄປ ທາດລົມກໍຕາມທາດລົມໄປ ອິນຊີທັງຫຼາຍຍ່ອມຜັນປ່ຽນໄປເປັນອາກາດທາດ ມະນຸດມີຕຽງນອນເປັນທີ່ ໕ ນໍາສົບໄປ ຮ່າງກາຍປາກົດຢູ່ແຄ່ປ່າຊ້າ ກາຍເປັນກະດູກຂາວຈ່າດພ່ານ ຄື ສີນົກກາງແກ ການບວງຊວງສິ້ນສຸດລົງໃນຂີ້ເຖົ່າ ຄົນໂງ່ຈ້ຳບັນຍັດຄໍາວ່າທານນີ້ໄວ້ວ່າມີຜົນນັ້ນ ວ່າງປ່າວ ເປັນການຕົວະຂາດສາຣະ ເມື່ອສັ່ງງຊີວິດບໍ່ວ່າຄົນໂງ່ຈ້ຳ ຫຼື ຄົນສະຫຼາດຍ່ອມຂາດສູນບໍ່ເກີດອີກ"

[໑໗໔] ຂ້າແຕ່ ພຣະອົງຜູ້ຈະເລີນ ຂ້ານ້ອຍຖາມເຖິງຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກ ຕໍ່ຄູອະຊິຕະເກສະກໍາພົນແຕ່ກັບຕອບເລື້ອງຄວາມຂາດສູນ ປຽບຄືກັນກັບເຂົາຖາມເລື້ອງໝາກມ່ວງ ກັບໄປຕອບເລື້ອງໝາກມີ້ ຫຼືເຂົາຖາມເລື້ອງໝາກມີ້ປ່າກັບໄປຕອບເລື້ອງໝາກມ່ວງ ຂ້ານ້ອຍຈຶ່ງຄິດວ່າຄົນລະດັບເຮົາຈະຮຸກຮານສະມະນະພາມຜູ້ຢູ່ໃນຣາຊະອານາເຂດ ເປັນເລື້ອງທີ່ບໍ່ສົມຄວນ ຂ້ານ້ອຍຈຶ່ງບໍ່ຊື່ນຊົມ ບໍ່ຕໍາໜິຄໍາກ່າວຂອງຄູອະຊິຕະເກສະກໍາພົນ ເຖິງບໍ່ຊື່ນຊົມບໍ່ຕໍາໜິ ແຕ່ກໍບໍ່ພໍໃຈ ແລະບໍ່ເປ່ງວາຈາສະແດງຄວາມບໍ່ພໍໃຈອອກມາ ເມື່ອບໍ່ຍຶດຖື ບໍ່ໃສ່ໃຈຄໍາກ່າວນັ້ນ ກໍໄດ້ລຸກຂຶ້ນຍ່າງຈາກບ່ອນນັ່ງອອກໄປ

# ລັດທິຂອງຄູປະກຸທະກັດຈາກະນະ

## ນັດຖິກະວາທະ

## ລັດທິທີ່ຖືວ່າບໍ່ມີເຫດບໍ່ມີປັດໄຈ

[໑໗໓] ຂ້າແຕ່ ພຣະອົງຜູ້ຈະເລີນ ຄັ້ງໜຶ່ງໃນເມືອງຣາດຊະຄຶນີ້ເອງ ຂ້ານ້ອຍເຂົ້າໄປຫາຄູປະກຸທະກັດຈາຍະນະເຖິງບ່ອນຢູ່ ເຈຣະຈາປາໄສທັກທວາຍກັນພໍຄຸ້ນເຄີຍດີແລ້ວ ໄດ້ນັ່ງລົງຖາມຄູປະກຸທະກັດຈາຍະນະວ່າ "ທ່ານກັດຈາຍນະ ອາຊີບທີ່ອາໄສສິນະປະຫຼວງຫຼາຍເຫຼົ່ານີ້ຄື ໆລໆ ໆລໆ ທ່ານກັດຈາຍະນະຈະບັນຍັດຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກໃນປະຈຸບັນໄດ້ແນວນັ້ນແດ່ຫຼືບໍ່?"

[໑໗໔] ຂ້າແຕ່ ພຣະອົງຜູ້ຈະເລີນ ເມື່ອຂ້ານ້ອຍຖາມແນວນີ້ ຄູປະກຸທະກັດຈາຍະນະຕອບວ່າ "ມະຫາບໍພິດ ສະພາວະ ໗ ກອງນີ້ ບໍ່ມີຜູ້ສ້າງ ບໍ່ມີຜູ້ບັນດານ ບໍ່ມີຜູ້ເນລະມິດ ບໍ່ມີຜູ້ສັ່ງໃຫ້ເນລະມິດຂຶ້ນມາ ຍັ້ງຍືນ ໝັ້ນຄົງຢູ່ ຄື ຈອມພູ ຄື ເສົາພະນຽດ ບໍ່ຫວັ່ນໄຫວ ບໍ່ຜັນປ່ຽນ ບໍ່ກະທົບກະທັ່ງກັນ ບໍ່ກໍ່ໃຫ້ເກີດສຸກ ຫຼື ທຸກ ຫຼື ທັງສຸກ ແລະ ທຸກແກ່ກັນ ແລະ ກັນ ສະພາວະ ໗ ກອງນັ້ນມີອັນໃດແດ່ ຄືກອງແຫ່ງທາດດິນ ກອງແຫ່ງທາດນ້ຳ ກອງແຫ່ງທາດໄຟກອງແຫ່ງທາດລົມ ກອງສຸກກອງທຸກ ກອງຊີວະ ສະພາວະ ໗ ກອງເຫຼົ່ານີ້ ບໍ່ມີຜູ້ສ້າງ ບໍ່ມີຜູ້ບັນດານ ບໍ່ມີຜູ້ເນລະມິດ ບໍ່ມີຜູ້ໃຫ້ເນລະມິດ ຍັ້ງຍືນໝັ້ນຄົງຢູ່ ຄື ຈອມພູ ຄື ເສົາພະນຽດ ບໍ່ຫວັ່ນໄຫວ ບໍ່ຜັນປ່ຽນ ບໍ່ກະທົບກະທັ່ງກັນ ບໍ່ກໍ່ພາໃຫ້ເກີດສຸກ ຫຼື ທຸກ ຫຼື ທັງສຸກ ແລະ ທຸກ ແກ່ກັນແລະກັນໃນສະພາວະ ໗ ກອງນັ້ນ ບໍ່ມີຜູ້ຂ້າ ບໍ່ມີຜູ້ໃຊ້ໃຫ້ຄົນອື່ນຂ້າ ບໍ່ມີຜູ້ຟັງ ບໍ່ມີຜູ້ໃຊ້ໃຫ້ຄົນອື່ນຟັງ ບໍ່ມີຜູ້ຮູ້ ບໍ່ມີຜູ້ເຮັດ ໃຫ້ຄົນອື່ນຮູ້ ໃຜກໍຕາມແມ່ນຈະເອົາສາດຕາຂອງມີຄົມຕັດຫົວໃຜ ກໍບໍ່ຊື່ວ່າຕັດຊີວິດໃຜໄດ້ ເພາະເປັນພຽງແຕ່ສາດຕາຕັດແຊກຜ່ານໄປລະຫວ່າງສະພາວະ ໗ ກອງເທົ່ານັ້ນເອງ"

[໑໗໕] ຂ້າແຕ່ ພຣະອົງ ຜູ້ຈະເລີນ ຂ້ານ້ອຍ ຖາມເຖິງຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກ ຕໍ່ຄູປະກຸທະກັດຈາຍະນະ ແຕ່ກັບຕອບເລື້ອງຄວາມຂາດສູນ ປຽບຄືກັນກັບເຂົາຖາມເລື້ອງໝາກມ່ວງ ແຕ່ຕອບເລື້ອງໝາກມີ້ ຫຼື ເຂົາຖາມເລື້ອງໝາກມີ້ປ່າກັບມາຕອບເລື້ອງໝາກມ່ວງ ຂ້ານ້ອຍຈຶ່ງຄິດວ່າ ຄົນລະດັບເຮົາ ຈະຮຸກຮານສະມະນະພາມຜູ້ຢູ່ໃນຣາຊະອານາເຂດເປັນເລື້ອງທີ່ບໍ່ສົມຄວນ ຂ້ານ້ອຍ ຈຶ່ງບໍ່ຊື່ນຊົມ ບໍ່ຕຳໜິຄຳກ່າວຂອງຄູປະກຸທະກັດຈາຍະນະ ເຖິງວ່າບໍ່ຊື່ນຊົມ ບໍ່ຕຳໜິ ແຕ່ກໍບໍ່ພໍໃຈ ແລະ ບໍ່ເປ່ງວາຈາສະແດງຄວາມບໍ່ພໍໃຈອອກມາ ເມື່ອບໍ່ຍຶດຖືບໍ່ໃສ່ໃຈຄຳກ່າວນັ້ນກໍໄດ້ລຸກຂຶ້ນຈາກບ່ອນນັ່ງຍ່າງອອກໄປ

## ລັດທິຂອງຄູນິຄົນນາຕະບຸດ

## ອັດຕະກິລະມະຖານຸໂຍກ

## ລັດທິທີ່ຖືວ່າການທໍລະມານຕົນເອງເປັນການເຜົາກິເລດໃຫ້ໝົດໄປໄດ້

[໑໗໖] ຂ້າແຕ່ ພຣະອົງຜູ້ຈະເລີນ ຄັ້ງໜຶ່ງໃນເມືອງຣາດຊະຄຶນີ້ເອງ ຂ້ານ້ອຍເຂົ້າໄປຫາຄູນິຄົນນາຕະບຸດເຖິງບ່ອນຢູ່ ເຈຣະຈາປາໄສທັກທວາຍກັນພໍຄຸ້ນເຄີຍດີແລ້ວ ໄດ້ນັ່ງລົງຖາມຄູນິຄົນນາຕະບຸດວ່າ "ທ່ານອັກຄິເວດສະນະ ອາຊີບທີ່ອາໄສສິນະປະຫຼວງຫຼາຍເຫຼົ່ານີ້ຄື ໗ລ໗ ໗ລ໗ ທ່ານອັກຄິເວດສະນະຈະບັນຍັດຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກໃນປະຈຸບັນໄດ້ແນວນັ້ນແດ່ຫຼືບໍ່?"

[໑໗໗] ຂ້າແຕ່ ພຣະອົງຜູ້ຈະເລີນ ເມື່ອຂ້ານ້ອຍຖາມແນວນີ້ຄູນິຄົນນາຕະບຸດຕອບວ່າ "ມະຫາບໍພິດ ນິຄົນໃນໂລກນີ້ສັງລວມດ້ວຍການສັງວອນ ໔ ຢ່າງ ຄື ໑. ເວັ້ນນ້ຳດິບທຸກຊະນິດ ໘. ປະກອບກິດທີ່ເວັ້ນຈາກບາບທຸກຢ່າງ ໓. ລ້າງບາບທຸກຢ່າງ ໔. ຮັບສຳຜັດທຸກຢ່າງ ໂດຍບໍ່ໃຫ້ເກີດບາບ ຄົນຜູ້ສັງລວມດ້ວຍການສັງວອນ ໔ ແນວນີ້ ດັ່ງນັ້ນ ບັນດິດຈຶ່ງຮຽກວ່າ ຜູ້ເຖິງທີ່ສຸດແລ້ວສັງລວມແລ້ວຕັ້ງໝັ້ນຢູ່ແລ້ວ"

[໑໗໘] ຂ້າແຕ່ ພຣະອົງຜູ້ຈະເລີນ ຂ້ານ້ອຍຖາມເຖິງຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກ ຕໍ່ຄູນິຄົນນາຕະບຸດ ແຕ່ກັບຕອບເລື້ອງຄວາມສັງວອນ ໔ ຢ່າງ ປຽບຄືກັນກັບເຂົາຖາມເລື້ອງໝາກມ່ວງ ກັບຕອບເລື້ອງໝາກມີ້ ຫຼື ເຂົາຖາມເລື້ອງໝາກມີ້ປ່າກັບຕອບເລື້ອງໝາກມ່ວງ ຂ້ານ້ອຍຈຶ່ງຄິດວ່າ ຄົນລະດັບເຮົາຈະຮຸກຮານສະມະນະພາມຜູ້ຢູ່ໃນຣາຊະອານາເຂດ ເປັນເລື້ອງທີ່ບໍ່ສົມຄວນ ຂ້ານ້ອຍຈຶ່ງບໍ່ຊື່ນຊົມ ບໍ່ຕຳໜິຄຳກ່າວຂອງຄູນິຄົນນາຕະບຸດ ເຖິງວ່າບໍ່ຊື່ນຊົມບໍ່ຕຳໜິ ແຕ່ກໍບໍ່ພໍໃຈ ແລະ ບໍ່ເປ່ງວາຈາສະແດງຄວາມບໍ່ພໍໃຈອອກມາ ເມື່ອບໍ່ຢຶດຖືບໍ່ໃສ່ໃຈຄຳກ່າວນັ້ນ ກໍໄດ້ລຸກຈາກບ່ອນນັ່ງຢ່າງອອກໄປ.

## ລັດທິຂອງຄູສັນໄຊເວລັນຖະບຸດ

## ອະມະຣາວິກເຂປະວາທະ

## ລັດທິທີ່ຫຼີບລ້ຽງບໍ່ຕາຍໂຕ

[໑໗໙] ຂ້າແຕ່ ພຣະອົງຜູ້ຈະເລີນ ຄັ້ງໜຶ່ງໃນເມືອງຣາດຊະຄຶນີ້ເອງ ຂ້ານ້ອຍເຂົ້າໄປຫາຄູສັນໄຊເວລັນຖະບຸດເຖິງບ່ອນຢູ່ ເຈຣະຈາປາໄສທັກທວາຍກັນພໍຄຸ້ນເຄີຍດີແລ້ວ ໄດ້ນັ່ງລົງຖາມ

ຄູສັນໄຊເວລັດຖະບຸດວ່າ “ທ່ານສັນໄຊ ອາຊີບທີ່ອາໄສສີນະປະຫຼວງຫຼາຍເຫຼົ່ານີ້ຄື ຯລຯ ຯລຯ ທ່ານສັນໄຊຈະບັນຍັດຜົນແຫ່ງຄວາມເປັນສະມະນະ ທີ່ເຫັນປະຈັກໃນປະຈຸບັນໄດ້ແນວນັ້ນແດ່ຫຼືບໍ່?”

[໑໗໐] ຂ້າແຕ່ ພຣະອົງຜູ້ຈະເລີນ ເມື່ອຂ້ານ້ອຍຖາມແນວນີ້ ຄູສັນໄຊເວລັນຖະບຸດຕອບວ່າ “ຖ້າມະຫາບໍພິດຕັດຖາມອາດຕະມາພາບວ່າ ໂລກໜ້າມີຢູ່ຈິງ ຫຼື ຫາກອາດຕະມາພາບມີຄວາມເຫັນວ່າມີຢູ່ຈິງ ກໍຈະທູນຕອບວ່າ ມີຢູ່ຈິງ ແຕ່ອາດຕະມາພາບມີຄວາມເຫັນວ່າ ແນວນີ້ກໍບໍ່ແມ່ນ ແນວນັ້ນກໍບໍ່ແມ່ນ ຢ່າງອື່ນກໍບໍ່ແມ່ນ ຈະວ່າບໍ່ແມ່ນກໍບໍ່ແມ່ນ ຈະວ່າບໍ່ແມ່ນບໍ່ແມ່ນກໍບໍ່ແມ່ນ ຖ້າມະຫາບໍພິດຕັດຖາມອາດຕະມາພາບວ່າ ໂລກໜ້າບໍ່ມີ ຫຼື ຯລຯ ໂລກໜ້າມີ ແລະ ບໍ່ມີຫຼື ຯລຯ ຯລຯ ໂລກໜ້າຈະວ່າມີກໍບໍ່ແມ່ນ ຈະວ່າບໍ່ມີກໍບໍ່ແມ່ນ ຫຼື ຯລຯ ສັດທີ່ຜຸດເກີດມີຢູ່ຈິງ ຫຼື ຯລຯ ຯລຯ ສັດທີ່ຜຸດເກີດບໍ່ມີ ຫຼື ຯລຯ ຯລຯ ສັດທີ່ຜຸດເກີດມີແລະບໍ່ມີຫຼື ຯລຯ ຯລຯ ສັດທີ່ຜຸດເກີດຈະວ່າມີກໍບໍ່ແມ່ນ ຈະວ່າບໍ່ມີກໍບໍ່ແມ່ນຫຼື ຯລຯ ຯລຯ ຜົນວິບາກແຫ່ງກຳດີກຳຊົ່ວມີຢູ່ຈິງ ຫຼື ຯລຯ ຯລຯ ຜົນວິບາກແຫ່ງກຳດີກຳຊົ່ວບໍ່ມີຫຼື ຯລຯ ຯລຯ ຜົນວິບາກແຫ່ງກຳດີກຳຊົ່ວມີ ແລະ ບໍ່ມີຫຼື ຯລຯ ຯລຯ ຜົນວິບາກແຫ່ງກຳດີກຳຊົ່ວຈະວ່າມີກໍບໍ່ແມ່ນ ຈະວ່າບໍ່ມີກໍບໍ່ແມ່ນຫຼື ຯລຯ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກ ຫຼື ຯລຯ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ຫຼື ຯລຯ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກ ແລະ ບໍ່ເກີດອີກ ຫຼື ຯລຯ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າ ເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ຫຼື ຫາກອາດຕະມາພາບມີຄວາມເຫັນວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າ ເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ກໍຈະທູນຕອບວ່າ ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າ ເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ແຕ່ອາດຕະມາພາບມີຄວາມເຫັນວ່າແນວນີ້ກໍບໍ່ແມ່ນ ແນວນັ້ນກໍບໍ່ແມ່ນ ຢ່າງອື່ນກໍບໍ່ແມ່ນ ຈະວ່າບໍ່ແມ່ນກໍບໍ່ແມ່ນ ຈະວ່າບໍ່ແມ່ນບໍ່ແມ່ນກໍບໍ່ແມ່ນ”

[໑໗໑] ຂ້າແຕ່ ພຣະອົງຜູ້ຈະເລີນ ຂ້ານ້ອຍຖາມເຖິງຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກ ຕໍ່ຄູສັນໄຊເວລັນຖະບຸດກັບຕອບຫຼົບລ້ຽງ ປຽບຄືເຂົາຖາມເລື້ອງໝາກມ່ວງກັບຕອບເລື້ອງໝາກມີ້ ຫຼື ເຂົາຖາມເລື້ອງໝາກມີ້ປ່າກັບຕອບເລື້ອງໝາກມ່ວງ ຂ້ານ້ອຍ ຈຶ່ງຄິດວ່າຄົນລະດັບເຮົາຈະຮຸກຮານສະມະນະພາມຜູ້ຢູ່ໃນຣາຊະອານາເຂດເປັນເລື້ອງທີ່ບໍ່ສົມຄວນ ຂ້ານ້ອຍ ຈຶ່ງບໍ່ຊື່ນຊົມ ບໍ່ຕຳໜິຄຳກ່າວຂອງຄູສັນໄຊເວລັນຖະບຸດ ເຖິງບໍ່ຊື່ນຊົມບໍ່ຕຳໜິແຕ່ກໍບໍ່ພໍໃຈ ແລະ ບໍ່ເປ່ງວາຈາສະແດງຄວາມບໍ່ພໍໃຈອອກມາ ເມື່ອບໍ່ຍຶດຖືບໍ່ໃສ່ໃຈຄຳກ່າວນັ້ນກໍໄດ້ລຸກຈາກບ່ອນນັ່ງຍ່າງອອກໄປ

## ຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກໄດ້ຂໍ້ທີ ໑

[໑໗໘] ຂ້າແຕ່ ພຣະອົງຜູ້ຈະເລີນ ຂ້ານ້ອຍຂໍທູນຖາມພຣະອົງວ່າ ອາຊີບທີ່ອາໄສສິນະປະຫຼວງຫຼາຍເຫຼົ່ານີ້ຄື ທະຫານຊ້າງ ທະຫານມ້າ ທະຫານລົດ ທະຫານທະນູ ພະນັກງານເຊີນທົງພະນັກງານຈັດກະບວນທັບ ພວກຈັດສົ່ງສະບຽງ ຣາດຊະນິກູນ ຜູ້ຊົງເປັນນາຍທະຫານລະດັບສູງ ພົນອາສາ ຂຸນພົນ ພົນກ້າ ພົນເກາະ ພວກຂ້າທາດເຮືອນເບ້ຍ ພວກເຮັດເຂົ້າໜົມຊ່າງຕັດຜົມ ພະນັກ ງານເຄື່ອງສົງ ພວກພໍ່ຄົວ ຊ່າງດອກໄມ້ ຊ່າງຍ້ອມ ຊ່າງຫູກ ຊ່າງຈັກສານຊ່າງໝໍ້ ນັກຄຳນວນ ນັກບັນຊີ ຫຼື ອາຊີບທີ່ອາໄສສິນະປະຢ່າງອື່ນ ທຳນອງນີ້ຄົນເຫຼົ່ານັ້ນ ໄດ້ຮັບຜົນຈາກອາຊີບທີ່ອາໄສສິນະປະໃນການທຳມາຫາກິນ ທີ່ເຫັນປະຈັກແຈ້ງມາລ້ຽງຊີບໃນປະຈຸບັນຈຶ່ງບຳຣຸງຕົນເອງ ບິດາມານດາ ບຸດພັນລະຍາ ມິດສະຫາຍໃຫ້ເປັນສຸກພໍ່າເພັງ ທັກສິນາທານໃຫ້ແກ່ສະມະນະພາມ ເຊິ່ງມີຜົນຫຼາຍ ເປັນໄປເພື່ອໃຫ້ໄດ້ອາລົມດີມີສຸກເປັນຜົນໃຫ້ເກີດໃນສະຫວັນ ພຣະອົງຈະຊົງບັນຍັດຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກໃນປະຈຸບັນໄດ້ແນວນັ້ນໄດ້ແດ່ຫຼືບໍ່ນໍ? ຂ້ານ້ອຍ?.

[໑໗໙] ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ບັນຍັດໄດ້ມະຫາບໍພິດ ແຕ່ໃນເລື້ອງນີ້ອາດຕະມາພາບ ຂໍຍ້ອນຖາມພຣະອົງກ່ອນ ໂຜດຕອບຕາມຄວາມພໍພຣະທັຍຂອງພຣະອົງ ຊົງເຂົ້າພຣະທັຍໃນເລື້ອງນີ້ວ່າຢ່າງໃດ? ສົມມຸດວ່າ ພຣະອົງມີບຸຣຸດຂ້າທາດກຳມະກອນຜູ້ຕື່ນກ່ອນ ນອນພາຍຫລັງ ເຝົ້າຮັບພຣະບັນຊາຕາມຮັບສັ່ງ ຄອຍຖ້າຮັບຄຳສັ່ງເຮັດໃຫ້ຖືກພຣະທັຍ ຕ້ອງທູນຖວາຍໃຫ້ມ່ວນຫູ ຕ້ອງຄອຍຖ້າສັງເກດເບິ່ງສີໜ້າພຣະອົງ ເຂົາຄິດວ່າໜ້າອັດສະຈັນແທ້ ຜົນບຸນນີ້ຫຼາຍແທ້ ພຣະເຈົ້າອະຊາດສັດຕູ ເວເທຫິບຸດ ພຣະອົງນີ້ຊົງເປັນມະນຸດ ແມ່ນເຮົາກໍເປັນມະນຸດແຕ່ພຣະອົງຊົງບໍລິບູນພັ່ງບພ້ອມດ້ວຍການມະຄຸນ ໕ ຄື ເທບພະເຈົ້າ ເປັນຄົນມີບຸນຫຼາຍ ສ່ວນເຮົາເປັນຂ້າທາດກຳມະກອນຂອງພຣະອົງ ຕ້ອງຕື່ນກ່ອນນອນພາຍຫລັງ ເຝົ້າຮັບພຣະບັນຊາຕາມຮັບສັ່ງ ຄອຍຖ້າຮັບຄຳສັ່ງເຮັດໃຫ້ຖືກພຣະທັຍ ຕ້ອງທູນຖວາຍໃຫ້ມ່ວນຫູ ຕ້ອງຄອຍຖ້າສັງເກດເບິງສີໜ້າພຣະພັກ ເຮົາຄວນທຳບຸນໄວ້ໃຫ້ຫຼາຍ ຈະໄດ້ເປັນຄືພຣະອົງໃນຊາດຕໍ່ໄປ ທາງທີ່ດີເຮົາຄວນແຖຜົມ ແລະ ໜວດ ນຸ່ງຫົ່ມຜ້າກາສາວະພັດອອກຈາກເຮືອນໄປບວດເປັນບັນພະຊິດກັນດີກວ່າ

ຕໍ່ມາ ເຂົາແຖຜົມ ແລະ ໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນໄປບວດເປັນບັນພະຊິດ ເມື່ອບວດແລ້ວເປັນຜູ້ສັງລວມກາຍວາຈາໃຈຢູ່ ສັນໂດດດ້ວຍອາຫານມີພໍປະທັງຄວາມຫິວ ແລະຜ້າພໍຄຸມກາຍ ຍິນດີຍິ່ງໃນຄວາມສະຫງັດ ຖ້າຣາດຊະບຸຣຸດຂອງພຣະອົງ ເຫັນແລ້ວກັບມາຂາບທູນພຶດຕິການຂອງເຂົາແນວນີ້ວ່າ "ຂ້າແຕ່ ມະຫາຣາດ ພຣະອົງຈະຊົງມີຄວາມເຫັນເປັນແນວໃດວ່າ ບຸຣຸດຜູ້ເຄີຍເປັນຂ້າທາດກຳມະກອນຂອງພຣະອົງ ທີ່ຕ້ອງຕື່ນກ່ອນນອນພາຍຫລັງ ເຝົ້າຮັບພຣະບັນຊາຕາມຮັບສັ່ງ ຄອຍຖ້າປະພຶດໃຫ້ຖືກພຣະທັຍ ຕ້ອງທູນໃຫ້ມ່ວນຫູພ

ຣະອົງ ຄອຍຖ້າສັງເກດພຣະພັກຢູ່ນັ້ນ (ບັດນີ້) ເຂົາເຈົ້າໄດ້ແຖຜົມ ແລະ ໜວດນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນໄປບວດເປັນບັນພະຊິດ ເມື່ອບວດແລ້ວ ເປັນຜູ້ສັງລວມກາຍວາຈາໃຈຢູ່ສັນໂດດດ້ວຍອາຫານພໍປະທັງຄວາມຫິວ ແລະ ຜ້າມີພໍຄຸມກາຍ ຍິນດີຍິ່ງໃນຄວາມສະຫງັດ" ພຣະອົງຈະຕັດຮັບສັ່ງໄປແນວນີ້ຫຼືບໍ່ວ່າ ຈົ່ງຮຽກເຈົ້າຄົນນັ້ນກັບຄືນມາຫາເຮົາ ຈົ່ງກັບມາເປັນຂ້າທາດກຳມະກອນຂອງເຮົາ ທີ່ຕ້ອງຕື່ນກ່ອນນອນພາຍຫລັງ ຄອຍຖ້າຮັບຄຳສັ່ງ ຄອຍຖ້າປະພຶດໃຫ້ຖືກໃຈເຮົາ ເວົ້າແຕ່ເລື້ອງທີ່ມ່ວນຫູເຮົາ ເວເລເວົ້າຕ້ອງຄອຍຖ້າເຝົ້າສັງເກດເບິ່ງສີໜ້າເຮົາ ເວົ້າໃຫ້ຖືກໃຈເຮົາຄືເກົ່າດັ່ງນີ້ຫຼືບໍ່?.

[໑໗໔] ພຣະເຈົ້າອະຊາດສັດຕູ ເວເທຫິບຸດ ຂາບທູນຕອບວ່າ"ຈະເຮັດແນວນັ້ນບໍ່ໄດ້ເລີຍຂ້ານ້ອຍ ກົງກັນຂ້າມ ຂ້ານ້ອຍເອງຄວນຈະລຸກຮັບ ຂາບໄຫວ້ ເຊື້ອເຊີນໃຫ້ນັ່ງລົງ ບຳຣຸງດ້ວຍຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານ (ຢາປິ່ນປົວພະຍາດ ແລະ ເຄື່ອງບໍລິ ຂານ) ແລະ ຖືຮັກສາປົກປ້ອງຄຸ້ມຄອງບຸກຄົນນັ້ນ ດ້ວຍຄວາມສັດທາ

[໑໗໕] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມະຫາບໍພິດ ພຣະອົງຊົງເຂົ້າພຣະທັຍເລື້ອງນັ້ນວ່າແນວໃດ ຫາກເມື່ອເປັນແນວນີ້ ຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກມີຢູ່ຫຼືບໍ່?

ພຣະເຈົ້າອະຊາດສັດຕູເວເທຫິບຸດ ຂາບທູນຕອບວ່າ "ເມື່ອເປັນແນວນີ້ ຜົນແຫ່ງການເປັນສະມະນະທີ່ເຫັນປະຈັກແຈ້ງໃນປັດຈຸບັນ ກໍເຫັນໄດ້ ໂດຍຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມະຫາບໍພິດ ນີ້ຄືຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກໄດ້ໃນປະຈຸບັນ ທີ່ອາດຕະມາພາບບັນຍັດຊີ້ຖວາຍພຣະອົງເປັນຂໍ້ທີ ໑"

## ຜົນແຫ່ງການເປັນສະມະນະທີ່ເຫັນປະຈັກໄດ້ໃນປະຈຸບັນຂໍ້ທີ ໒

[໑໗໖] ພຣະເຈົ້າອະຊາດສັດຕູ ເວເທຫິບຸດ ທູນຖາມວ່າ "ພຣະອົງຈະຊົງບັນຍັດຜົນແຫ່ງຄວາມເປັນສະມະນະ ທີ່ເຫັນປະຈັກໄດ້ໃນປະຈຸບັນແນວນີ້ ແມ່ນຢ່າງອື່ນໄດ້ອີກຫຼືບໍ່ນໍ? ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ບັນຍັດໄດ້ມະຫາບໍພິດ ແຕ່ໃນເລື້ອງນີ້ອາດຕະມາພາບຂໍຍ້ອນຖາມພຣະອົງກ່ອນ ໂຜດຕອບຕາມຄວາມພໍພຣະທັຍ ພຣະອົງຊົງເຂົ້າພຣະທັຍເລື້ອງນີ້ວ່າແນວໃດ ສົມມຸດວ່າ ພຣະອົງມີບຸຣຸດເປັນຊາວນາ ເປັນຄະຫະບໍດີ ເຊິ່ງຕ້ອງເສຍພາສີບຳຣຸງໃຫ້ແກ່ລັດ ເຂົາຄິດແນວນີ້ວ່າ ໜ້າອັດສະຈັນໃນຜົນບຸນນີ້ແທ້ ພຣະເຈົ້າອະຊາດສັດຕູ ເວເທຫິບຸດພຣະອົງນີ້ຊົງເປັນມະນຸດ ແມ່ນເຮົາກໍເປັນມະນຸດ ແຕ່ພຣະອົງຊົງບໍລິບູນພຽບພ້ອມດ້ວຍກາມມະຄຸນ ໕ ຄືເທບພະເຈົ້າ ສ່ວນເຮົາເປັນຊາວນາ ເປັນຄະຫະບໍດີທີ່ຕ້ອງເສຍພາສີບຳຣຸງລັດຂອງພຣະອົງ ເຮົາຄວນເຮັດບຸນໄວ້ໃຫ້ຫຼາຍ ໆ ຈະໄດ້ເປັນຄືພຣະອົງ ຖ້າຈັ່ງຊັ້ນເຮົາເພິ່ງແຖຜົມ ແລະໜວດນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນໄປບວດເປັນບັນພະຊິດເຖີ້ນ

ຕໍ່ມາ ເຂົາຜູ້ນັ້ນ ລະຖິ້ມກອງໂພຄະສົມບັດນ້ອຍໃຫຍ່ ແລະ ເຄືອຍາດມິດສະຫາຍທັງຫຼາຍແຖຜົມ ແລະ ໜວດນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນໄປບວດເປັນບັນພະຊິດ ເມື່ອບວດແລ້ວເປັນຜູ້ສັງລວມກາຍວາຈາໃຈ ຢູ່ສັນໂດດດ້ວຍອາຫານມີພໍປະທັງຄວາມຫິວ ແລະມີຜ້າພໍຄຸມກາຍ ຍິນດີຍິ່ງໃນຄວາມສະຫງັດ ຣາດຊະບຸຣຸດຂາບຂອງພຣະອົງເຫັນແລ້ວ ກັບມາທູນພຶດຕິການຂອງເຂົາແນວນີ້ວ່າ"ຂ້າແຕ່ ມະຫາຣາດ ພຣະອົງຊົງຮູ້ເຖີ້ນວ່າ ບຸຣຸດຜູ້ເຄີຍເປັນຊາວນາເປັນຄະຫະບໍດີ ທີ່ເຄີຍເສຍພາສີບໍາຣຸງລັດຂອງພຣະອົງຜູ້ນັ້ນ ບັດນີ້ເຂົາໄດ້ແຖຜົມແລະໜວດນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນໄປບວດເປັນບັນພະຊິດ ເມື່ອບວດແລ້ວເປັນຜູ້ສັງລວມກາຍວາຈາໃຈ ຢູ່ສັນໂດດດ້ວຍອາຫານມີພໍປະທັງຄວາມຫິວ ແລະ ມີຜ້າພໍຄຸມກາຍຍິນດີຍິ່ງໃນຄວາມສະຫງັດ" ພຣະອົງຈະຕັດສັ່ງແນວນີ້ບໍວ່າ ໃຫ້ຮຽກໂຕຄົນຜູ້ນັ້ນກັບມາຫາເຮົາ ຈົ່ງເປັນຊາວນາເປັນຄະຫະບໍດີເສຍພາສີບໍາຣຸງລັດຄືເກົ່າ

[໑໗໗] ພຣະເຈົ້າອະຊາດສັດຕູ ເວເທຫິບຸດ ຂາບທູນຕອບວ່າ "ຈະເຮັດແນວນັ້ນບໍ່ໄດ້ ຂ້ານ້ອຍ ກົງກັນຂ້າມ ຂ້ານ້ອຍເອງ ຄວນເປັນຜູ້ກົ້ມລົງຂາບໄຫວ້ ລຸກຮັບ ເຊື້ອເຊີນໃຫ້ນັ່ງ ບໍາຣຸງດ້ວຍຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານ (ຢາປິ່ນປົວພະຍາດແລະເຄື່ອງຢາ) ແລະຖືຮັກສາປົກປ້ອງຄຸ້ມຄອງທ່ານຜູ້ນັ້ນໂດຍຊອບທໍາ"

[໑໗໘] ພຣະຜູ້ມີພຣະພາກຕັດຖາມວ່າ "ມະຫາບໍພິດ ພຣະອົງຊົງເຂົ້າພຣະທັຍໃນເລື້ອງນີ້ວ່າຢ່າງໃດ ຫາກເປັນແນວນີ້ ຜົນແຫ່ງການເປັນສະມະນະທີ່ເຫັນປະຈັກແຈ້ງໃນປັດຈຸບັນມີຢູ່ຫຼືບໍ່?"

ພຣະເຈົ້າອະຊາດສັດຕູເວເທຫິບຸດ ຂາບທູນຕອບຮັບວ່າ "ເມື່ອເປັນແນວນີ້ ຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກມີ ໂດຍຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມະຫາບໍພິດ ນີ້ຄື ຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກໄດ້ໃນປະຈຸບັນ ທີ່ອາດຕະມາພາບບັນຍັດຖວາຍພຣະອົງເປັນຂໍ້ທີ ໔"

## ຜົນແຫ່ງຄວາມເປັນສະມະນະທີ່ວິເສດປານີດກວ່າຜົນທີ່ຜ່ານມາ

[໑໗໙] ພຣະເຈົ້າອະຊາດສັດຕູເວເທຫິບຸດທູນຖາມວ່າ "ພຣະອົງຈະຊົງບັນຍັດຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກ ໃນປະຈຸບັນແມ່ນຢ່າງອື່ນທີ່ດີກວ່າ ແລະ ປະນີດກວ່າຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກເຫຼົ່ານີ້ໄດ້ອີກຫຼືບໍ່ນໍ? ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ບັນຍັດໄດ້ມະຫາບໍພິດ ຂໍພຣະອົງໂຜດສະດັບໂຜດຕັ້ງພຣະທັຍໃຫ້ດີ ອາດຕະມາພາບຈັກສະແດງຖວາຍ"

ພຣະເຈົ້າອະຊາດສັດຕູ ເວເທຫິບຸດ ທູນຮັບສະໜອງພຣະດຳຣັດຂອງພຣະຜູ້ມີພຣະພາກເຈົ້າແລ້ວ ຊົງໄດ້ນັ່ງນິດຕັ້ງໃຈຟັງຢູ່

[໑໙໐] ພຣະຜູ້ມີພຣະພາກເຈົ້າຕັດວ່າ “ມະຫາບໍພິດ ຕະຖາຄົດອຸບັດຂຶ້ນມາໃນໂລກນີ້ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍຕົນເອງໂດຍຊອບ ພຽບພ້ອມດ້ວຍວິດຊາ ແລະ ຈະຣະນະ ໄປດີຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງຍອດຢ້ຽມ ເປັນສາດສະດາຂອງເທວະດາ ແລະ ມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ຕະຖາຄົດຮູ້ແຈ້ງໂລກນີ້ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະ ໝູ່ສັດ ພ້ອມທັງສະມະນະພາມ ເທວະດາ ແລະ ມະນຸດດ້ວຍຕົນເອງ ແລ້ວປະກາດໃຫ້ຜູ້ອື່ນຮູ້ນຳ ສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະ ມີຄວາມງາມໃນທີ່ສຸດ ປະກາດພົມມະຈັນພ້ອມທັງອັດຖະ ແລະ ພະຍັນຊະນະ ບໍລິສຸດ ບໍລິບູນ ຄົບຖ້ວນ

[໑໙໑] ຄະຫະບໍດີ ບຸດຄະຫະບໍດີ ຫຼື ອະນຸຊົນ (ຄົນຜູ້ເກີດພາຍຫຼັງ) ໃນຕະກູນໃດຕະກູນໜຶ່ງ ໄດ້ສະດັບທຳນັ້ນແລ້ວ ເກີດສັດທາໃນຕະຖາຄົດ ເມື່ອມີສັດທາຍ່ອມຄິດວ່າ “ການຢູ່ຄອງເຮືອນເປັນເລື້ອງໜ້າອຶດອັດ ເປັນທາງແຫ່ງທຸລີ ການບວດເປັນທາງປອດໂປ່ງ ການທີ່ຜູ້ຢູ່ຄອງເຮືອນ ຈະປະພຶດພົມມະຈັນໃຫ້ບໍລິສຸດ ບໍລິບູນຄົບຖ້ວນຄືສັງທີ່ຂັດແລ້ວບໍ່ແມ່ນເຮັດໄດ້ງ່າຍທາງທີ່ດີເຮົາຄວນແຖຜົມແຖໜວດນຸ່ງຫົ່ມຜ້າກາສາວະພັດອອກຈາກເຮືອນໄປບວດເປັນບັນພະຊິດດີກວ່າ”

[໑໙໒] ຕໍ່ມາ ເຂົາປະລະຖິ້ມກອງໂພຄະສົມບັດນ້ອຍໃຫຍ່ ແລະ ເຄືອຍາດມິດສະຫາຍທັງຫຼາຍ ແຖຜົມ ແລະ ໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນໄປບວດເປັນບັນພະຊິດ

[໑໙໓] ເມື່ອບວດແລ້ວ ເປັນຜູ້ສັງລວມດ້ວຍການສັງວອນໃນພຣະປາຕິໂມກ ພຽບພ້ອມດ້ວຍມາລະຍາດ ແລະ ໂຄຈອນ (ການທ່ຽວໄປ) ເຫັນໄພໃນໂທດແມ່ນພຽງເລັກໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດຢູ່ ປະກອບດ້ວຍກາຍະກຳ ແລະ ວະຈີກຳອັນເປັນກຸສົນ ມີອາຊີວະບໍລິສຸດ ສົມບູນດ້ວຍສີນ ຄຸ້ມຄອງທະວານໃນອິນຊີທັງຫຼາຍ ສົມບູນດ້ວຍສະຕິສຳປະຊັນຍາ ແລະ ເປັນຜູ້ສັນໂດດພໍໃຈແຕ່ໃນຂອງທີ່ເຂົາເຈົ້າທານມາໃຫ້ປະຕິບັດທຳຢູ່

## ຈູນລະສີນ

[໑໙໔] ມະຫາບໍພິດ ພິກຂຸຊື່ວ່າຜູ້ສົມບູນດ້ວຍສີນເປັນຢ່າງໃດ?

໑. ພິກຂຸໃນທຳວິໄນນີ້ ລະເວັ້ນຂາດຈາກການຂ້າສັດ ວາງທັນຍະວຸດ ແລະ ສາດຕາວຸດ ມີຄວາມລະອາຍ ມີຄວາມອີດູ ມຸ້ງປະໂຫຍດເກື້ອກູນຕໍ່ສັບພະສັດຢູ່

໒. ພິກຂຸ ລະເວັ້ນຂາດຈາກການຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ຮັບເອົາແຕ່ຂອງທີ່ເຂົາໃຫ້ ມຸ້ງຫວັງແຕ່ຂອງທີ່ເຂົາໃຫ້ ບໍ່ເປັນຄົນຂີ້ລັກ ເປັນຄົນສະອາດຢູ່

໓. ພິກຂຸ ລະພຶດຕິກຳອັນເປັນຂ້າເສິກຕໍ່ພົມມະຈັນ ປະພຶດພົມມະຈັນ ເວັ້ນຫ່າງໄກຈາກເມຖຸນທຳ ອັນເປັນເລື້ອງຂອງຊາວບ້ານ

໔. ພິກຂຸ ລະເວັ້ນຂາດຈາກການເວົ້າຕົວະ ຄື ເວົ້າແຕ່ຄຳສັດ ດຳຣົງໄວ້ເຊິ່ງຄວາມສັດມີຄຳເວົ້າໜ້າເຊື່ອຖືໄດ້ ບໍ່ຫຼອກລວງຊາວໂລກ

໕. ພິກຂຸ ລະເວັ້ນຂາດຈາກຄຳສັບສໍ່ ຄື ຟັງຄວາມຈາກຝ່າຍນີ້ແລ້ວ ບໍ່ນຳໄປບອກຝ່າຍນັ້ນເພື່ອທຳລາຍຝ່າຍນີ້ ຫຼື ຟັງຄວາມຈາກຝ່າຍນັ້ນ ແລ້ວບໍ່ນຳມາບອກຝ່າຍນີ້ ເພື່ອທຳລາຍຝ່າຍນັ້ນ ກ້ຽວກ່ອມຄົນຜູ້ແຕກແຍກກັນ ສົ່ງເສີມຄົນທີ່ປອງດອງກັນ ຊື່ນຊົມຍິນດີຕໍ່ຜູ້ທີ່ສາມັກຄີກັນເວົ້າແຕ່ຄຳເວົ້າທີ່ສ້າງສັນຄວາມສາມັກຄີ

໖. ພິກຂຸ ລະເວັ້ນຂາດຈາກຄຳຫຍາບ ຄື ເວົ້າແຕ່ຄຳບໍ່ມີໂທດ ມ່ວນຫູ ໜ້າຮັກຈັບໃຈເປັນສຳນວດຄຳເວົ້າຂອງຊາວເມືອງ ທີ່ຄົນສ່ວນຫຼາຍຮັກແພງຕ້ອງການພໍໃຈຮັບຟັງ

໗. ພິກຂຸ ລະເວັ້ນຂາດຈາກຄຳເວົ້າເພີ້ເຈີ້ ເວົ້າໄປທົ່ວທິບ ເວົ້າຖືກເວລາ ເວົ້າຄຳຈິງເວົ້າອິງປະໂຫຍດ ເວົ້າອິງທຳ ເວົ້າອິງວິໄນ ເວົ້າຄຳມີຫຼັກຖານມີທີ່ອ້າງອີງ ມີທີ່ກຳນົດ ປະກອບດ້ວຍປະໂຫຍດເໝາະແກ່ເວລາ

໘. ພິກຂຸ ເວັ້ນຂາດຈາກການພາກຕັດພຶດຊະຄາມ ແລະ ພູຕະຄາມ

໙. ພິກຂຸສັນມື້ດຽວ ບໍ່ສັນເວລາກາງຄືນ ເວັ້ນຂາດຈາກການສັນໃນເວລາວິການ

໑໐. ພິກຂຸເວັ້ນຂາດຈາກການຟ້ອນລຳຂັບຮ້ອງ ເສບດົນຕີ ແລະ ເບິ່ງການລະຫຼິ້ນທີ່ເປັນຂ້າເສິກແກ່ກຸສົນ

໑໑. ພິກຂຸ ເວັ້ນຂາດຈາກການທັດຊົງ ປະດັບຕົກແຕ່ງກາຍ ດ້ວຍພວງດອກໄມ້ຂອງຫອມແລະເຄື່ອງທາຜິວ ອັນເປັນລັກສະນະແຫ່ງການແຕ່ງໂຕ

໑໒. ພິກຂຸ ເວັ້ນຂາດຈາກບ່ອນນອນສູງໃຫຍ່

໑໓. ພິກຂຸ ເວັ້ນຂາດຈາກການຮັບຄຳ ແລະ ເງິນ

໑໔. ພິກຂຸ ເວັ້ນຂາດຈາກການຮັບ ທັນຍາຫານດິບ

໑໕. ພິກຂຸ ເວັ້ນຂາດຈາກການຮັບ ຊີ້ນ

໑໖. ພິກຂຸ ເວັ້ນຂາດຈາກການຮັບ ສະຕີແລະກຸມາຣີ

໑໗. ພິກຂຸ ເວັ້ນຂາດຈາກການຮັບ ຂ້າທາດຍິງແລະຂ້າທາດຊາຍ

໑໘. ພິກຂຸ ເວັ້ນຂາດຈາກການຮັບ ແບ້ແລະແກະ

໑໙. ພິກຂຸ ເວັ້ນຂາດຈາກການຮັບ ໄກ່ແລະໝູ

໒໐. ພິກຂຸ ເວັ້ນຂາດຈາກການຮັບ ຊ້າງງົວມ້າແລະລາ

໒໑. ພິກຂຸ ເວັ້ນຂາດຈາກການຮັບ ສວນໄຮ່ນາແລະທີ່ດິນ

໔໘. ພິກຂຸ ເວັ້ນຂາດຈາກການ ເຮັດໜ້າທີ່ເປັນໂຕແທນແລະຜູ້ສື່ສານ

໔໙. ພິກຂຸ ເວັ້ນຂາດຈາກການ ຊື້ຂາຍ

໔໔. ພິກຂຸ ເວັ້ນຂາດຈາກການ ໂກງດ້ວຍຊິງ ດ້ວຍຂອງປອມແລະດ້ວຍເຄື່ອງຜອງວັດ

໔໕. ພິກຂຸ ເວັ້ນຂາດຈາກການຮັບສິນບົນ ການລໍ້ລວງ ແລະ ການຕະລົບຕະແລງ

໔໖. ພິກຂຸ ເວັ້ນຂາດຈາກການຕັດ (ອະໄວຍະວະ) ການຂ້າ ການຈອງຈຳ ຍາດຊິງ ການປຸ້ນຈີ້ ແລະ ຂົ່ມເຫງເອົາຊັບ ທັງໝົດນີ້ຄືສີນຂອງພິກຂຸ

**ຈູນລະສີນຈົບ**

## ມັດຊິມະສີນ

[໑໘໕] ໑. ພິກຂຸ ເວັ້ນຂາດຈາກການ ແຍກພືດຊະຄາມ ແລະ ພູຕະຄາມ ຢ່າງເຊັ່ນສະມະນະພາມຜູ້ຈະເລີນລາງພວກສັນໂພຊະນາອາຫານ ທີ່ເຂົາໃຫ້ດ້ວຍສັດທາແລ້ວ ຍັງແຍກຕັດຖອນພືດຊະຄາມ ແລະ ພູຕະຄາມເຫຼົ່ານີ້ຄື ພືດເກີດຈາກເຫງົ້າ ເກີດຈາກລຳຕົ້ນ ເກີດຈາກຕາ ເກີດຈາກຍອດ ເກີດຈາກເມັດ

[໑໘໖] ໒. ພິກຂຸ ເວັ້ນຂາດຈາກການບໍລິໂພກຂອງທີ່ສະສົມໄວ້ ຢ່າງເຊັ່ນ ສະມະນະພາມຜູ້ຈະເລີນລາງພວກ ສັນໂພຊະນາອາຫານທີ່ເຂົາໃຫ້ດ້ວຍສັດທາແລ້ວ ຍັງບໍລິໂພກຂອງທີ່ສະສົມໄວ້ເຫຼົ່ານີ້ ຄື ສະສົມເຂົ້າ ນໍ້າ ຜ້າ ລົດ ບ່ອນນອນ ຂອງຫອມ ແລະ ອາມິດ

[໑໘໗] ໓. ພິກຂຸ ເວັ້ນຂາດຈາກການເບິ່ງການລະຫຼິ້ນ ອັນເປັນຂ້າເສິກຕໍ່ກຸສົນ ຢ່າງເຊັ່ນສະມະນະພາມຜູ້ຈະເລີນລາງພວກ ສັນໂພຊະນາອາຫານທີ່ເຂົາໃຫ້ດ້ວຍສັດທາແລ້ວ ຍັງເບິ່ງການລະຫຼິ້ນອັນເປັນຂ້າເສິກຕໍ່ກຸສົນແນວນີ້ ຄື ການຟ້ອນ ການຂັບຮ້ອງ ການເສບດົນຕີ ການລຳ ການເລົ່ານິທານ ການຫຼິ້ນຕົບມື ການຫຼິ້ນປຸກຜີ ການຫຼິ້ນຕີກອງ ການສ້າງສາບ້ານເມືອງໃຫ້ສວຍງາມ ການລະຫຼິ້ນຂອງຄົນຈັນຖານ ການຫຼິ້ນໄມ້ໂຢກເຢກ ການລະຫຼິ້ນງັນສົບ ການຊົນຊ້າງ ການຊ່ວງມ້າ ການຊົນຄວາຍ ການຊົນໂຄ ການຊົນແບ້ ການຊົນແກະ ການຊົນໄກ່ ການຕີນົກກະທາ ການຫຼິ້ນລາຄອມ ການຊົກມວຍ ມວຍປໍ້າ ການອອກຮົບ ການກວດພົນສວນສະນາມ ການຈັດກະບວນທັບ ການກວດກາກອງທັບ

[໑໘໘] ໔. ພິກຂຸ ເວັ້ນຂາດຈາກການຂວນຂວາຍໃນການຫຼິ້ນ ການພະນັນອັນເປັນເຫດແຫ່ງຄວາມປະໝາດ ຢ່າງເຊັ່ນ ສະມະນະພາມຜູ້ຈະເລີນລາງພວກ ສັນໂພຊະນາຫານທີ່ເຂົາໃຫ້ດ້ວຍສັດທາແລ້ວ ຍັງຂວນຂວາຍໃນການຫຼິ້ນ ການພະນັນອັນເປັນເຫດແຫ່ງຄວາມປະໝາດແນວນີ້ ຄື ຫຼິ້ນໝາກດ້ານແຖວລະ ໘ ຕາ ຫຼື ໑໐ ຕາ ຫຼິ້ນໝາກເກັບ ຫຼິ້ນດວນ ຫຼິ້ນໝາກໄຫວ ຫຼິ້ນໂຢນບ້ວງ ຫຼິ້ນໄມ້ຍູ້ສ້າວ ຫຼິ້ນກຳຫວາຍ ຫຼິ້ນສະກາ ຫຼິ້ນເປົ່າໃບໄມ້ ຫຼິ້ນໄຖນ້ອຍ ໆ ຫຼິ້ນຕີລັງກາ

ຫຼິ້ນກັງຫັນ ຫຼິ້ນຜອງຊາຍ ຫຼິ້ນລົດນ້ອຍ ໆ ຫຼິ້ນທະນູອັນນ້ອຍ ໆ ຫຼິ້ນຂຽນທວາຍ ຫຼິ້ນທວາຍໃຈ ຫຼິ້ນຮຽນແບບຄົນພິການ

[໑໙໙] ໕. ພິກຂຸ ເວັ້ນຂາດຈາກບ່ອນນອນອັນສູງໃຫຍ່ ຢ່າງເຊັ່ນ ສະມະນະພາມຜູ້ຈະເລີນລາງພວກ ສັນໂພຊະນາຫານທີ່ເຂົາໃຫ້ດ້ວຍສັດທາແລ້ວ ຍັງໃຊ້ບ່ອນນອນສູງໃຫຍ່ມີແບວນີ້ ຄື ຕຽງມີຂາສູງເກີນຂະໜາດ ຕຽງມີຂາເປັນຮູບສັດຮ້າຍ ພົມຂົນສັດ ເຄື່ອງປູຂົນແກະລາຍງົດງາມ ເຄື່ອງປູຂົນແກະສີຂາວ ເຄື່ອງປູມີລາຍຮູບດອກໄມ້ ເຄື່ອງປູຍັດດ້ວຍງິ້ວ ເຄື່ອງປູຂົນແກະງົດງາມດ້ວຍຮູບສັດຮ້າຍມີຮູບສີຫະແລະເສືອ ເຄື່ອງປູຂົນແກະມີຂົນ ໔ ຂ້າງ ເຄື່ອງປູຂົນແກະມີຂົນທາງດຽວ ເຄື່ອງປູປັກແສ່ວດ້ວຍໄໝປະດັບຣັດຕະນະ ເຄື່ອງປູຜ້າໄໝປະດັບດ້ວຍຣັດຕະນະ ເຄື່ອງປູຂົນແກະຂະໜາດໃຫຍ່ມີນາງຟ້ອນ ໑໖ ຄົນລ່າຍລຳ ເຄື່ອງປູເທິງຫຼັງຊ້າງ ເຄື່ອງປູເທິງຫຼັງມ້າ ເຄື່ອງປູໃນລົດ ເຄື່ອງປູເຮັດດ້ວຍໜັງເສືອ ເຄື່ອງປູໜັງເຫຼັງນອິ້ມ ເຄື່ອງປູມີເພດານ ເຄື່ອງປູມີໝອນ ໔ ຂ້າງ

[໔໐໐] ໖. ພິກຂຸ ເວັ້ນຂາດຈາກການຂວນຂວາຍໃນການປະດັບຕົກແຕ່ງກາຍຢ່າງເຊັ່ນ ສະມະນະພາມຜູ້ຈະເລີນລາງພວກ ສັນໂພຊະນາອາຫານທີ່ເຂົາໃຫ້ດ້ວຍສັດທາແລ້ວຍັງຂວນຂວາຍໃນການປະດັບຕົກແຕ່ງກາຍແບວນີ້ ຄື ອົບຜິວ ນວດ ອາບນ້ຳຫອມເພາະກາຍ ແຍງແວ່ນ ແຕ້ມຄິ້ວ ທັດດອກໄມ້ ທາຜິວ ຜັດໜ້າ ທາສົບ ປະດັບຂໍ້ມື ສວມໃສ່ກັງວ ໃຊ້ໄມ້ການເຖົາ ໃຊ້ຫຼັກຢາ ຖືງ້າວ ຖືຫອກ ໃຊ້ຂັ້ນທົ່ມ ໃສ່ເກີບງົດງາມໃສ່ຂອບໜ້າຜາກ ປັກປີ່ນເກົ້າ ໃຊ້ພັດ ແລະ ແສ້ຂົນຫາງຈາມະຣີ ນຸ່ງຫົ່ມຜ້າຂາວຫາງຍາວ

[໔໐໑] ໗. ພິກຂຸ ເວັ້ນຂາດຈາກເດຣັດສານກະຖາ ຢ່າງເຊັ່ນສະມະນະພາມຜູ້ຈະເລີນລາງພວກສັນໂພຊະນາຫານທີ່ເຂົາໃຫ້ດ້ວຍສັດທາແລ້ວ ຍັງເວົ້າເດຣັດສານກະຖາແບວນີ້ຄື ເລື້ອງພຣະຣາຊາ ເລື້ອງໂຈນ ເລື້ອງມະຫາອຳນາດ ເລື້ອງກອງທັບ ເລື້ອງໄພ ເລື້ອງການສູ້ຮົບ ເລື້ອງເຂົ້າ ເລື້ອງນ້ຳ ເລື້ອງຜ້າ ເລື້ອງບ່ອນນອນ ເລື້ອງພວງດອກໄມ້ ເລື້ອງຂອງຫອມ ເລື້ອງຍາດພີ່ນ້ອງ ເລື້ອງຍານພາຫານະ ເລື້ອງບ້ານ ເລື້ອງນິຄົມ ເລື້ອງເມືອງຫຼວງ ເລື້ອງຊົນນະບົດ ເລື້ອງສະຕີ ເລື້ອງບຸຣຸດ ເລື້ອງຄົນກ້າຫານ ເລື້ອງຮ່ອມ ເລື້ອງທ່ານ້ຳ ເລື້ອງຄົນທີ່ລ່ວງລັບໄປແລ້ວ ເລື້ອງຕ່າງ ໆ ເລື້ອງໂລກ ເລື້ອງທະເລ ເລື້ອງຄວາມຈະເລີນແລະຄວາມເສື່ອມ

[໔໐໔] ໘. ພິກຂຸ ເວັ້ນຂາດຈາກການເວົ້າຜິດຖຽງຂັດແຍກກັນ ຢ່າງເຊັ່ນ ສະມະນະພາມຜູ້ຈະເລີນລາງພວກ ສັນໂພຊະນາຫານທີ່ເຂົາໃຫ້ດ້ວຍສັດທາແລ້ວຍັງເວົ້າຜິດຖຽງຂັດແຍກກັນແບວນີ້ ຄື ທ່ານບໍ່ຮູ້ທົ່ວເຖິງທຳວິໄນນີ້ ແຕ່ເຮົາຮູ້ທົ່ວເຖິງ ທ່ານຈະຮູ້ທົ່ວເຖິງທຳວິໄນນີ້ໄດ້ຢ່າງໃດ ທ່ານປະຕິບັດຜິດແຕ່ເຮົາປະຕິບັດຖືກ ຄຳເວົ້າຂອງເຮົາມີປະໂຫຍດ ແຕ່ຄຳເວົ້າຂອງທ່ານບໍ່ມີປະໂຫຍດ ຄຳທີ່ຄວນເວົ້າກ່ອນທ່ານກັບເວົ້າພາຍຫຼັງ ຄຳທີ່ຄວນເວົ້າພາຍຫຼັງທ່ານກັບເວົ້າເສຍ

ກ່ອນ ເລື່ອງທີ່ທ່ານເຄີຍລຶງໄດ້ຜັນປ່ຽນໄປແລ້ວ ເຮົາຈັບຜິດຄຳເວົ້າຂອງທ່ານໄດ້ແລ້ວ ເຮົາຂົ່ມທ່ານໄດ້ແລ້ວ ຖ້າທ່ານມີຄວາມສາມາດກໍຈົ່ງຫາທາງແກ້ຄຳເວົ້າ ຫຼື ຖອນຕົນໃຫ້ພົ້ນຜິດເຖີ້ນ

[໔໐໓] ໙. ພິກຂຸ ເວັ້ນຂາດຈາກການເຮັດໜ້າທີ່ເປັນໂຕແທນ ແລະ ຜູ້ສື່ສານຢ່າງເຊັ່ນ ສະມະນະພາມຜູ້ຈະເລີນລາງພວກສັນໂພຊະນາຫານ ທີ່ເຂົາໃຫ້ດ້ວຍສັດທາແລ້ວ ຍັງທຳໜ້າທີ່ເປັນໂຕແທນ ແລະຜູ້ສື່ສານແບບນີ້ ຄື ຮັບເປັນສື່ໃຫ້ພຣະຣາຊາ ຣາຊະມະຫາອຳມາດ ກະສັດພາມ ຄະຫະບໍດີແລະກຸມານວ່າ “ທ່ານຈົ່ງໄປບ່ອນນີ້ ຫຼື ບ່ອນນັ້ນ ຈົ່ງນຳເອົາສິ່ງນີ້ໄປ ຈົ່ງນຳສິ່ງນີ້ມາ ຈາກບ່ອນນັ້ນໃຫ້ແກ່ເຮົາ” ຫຼື

[໔໐໔] ໑໐. ພິກຂຸ ເວັ້ນຂາດຈາກການເວົ້າຫຼອກລວງ ແລະ ການເວົ້າລຽບຄຽງຢ່າງເຊັ່ນ ສະມະນະພາມຜູ້ຈະເລີນລາງພວກ ສັນໂພຊະນາອາຫານທີ່ເຂົາໃຫ້ດ້ວຍສັດທາ ແລ້ວຍັງເວົ້າຫຼອກລວງ ລຽບຄຽງຫວ່ານລ້ອມ ແລະ ເວົ້າເຈາະຈີ້ມ ສະແຫວງຫາລາບຕໍ່ລາບເພາະຍາກໄດ້ຫຼາຍ ທັງໝົດນີ້ຄືສີນຂອງພິກຂຸ

**ມັດຊິມະສີນ ຈົບ**

## ມະຫາສີນ

[໔໐໕] ໑. ພິກຂຸ ເວັ້ນຂາດຈາກການລ້ຽງຊີບຜິດທາງດ້ວຍເດຣັດສານວິຊາ ຢ່າງເຊັ່ນສະມະນະພາມຜູ້ຈະເລີນລາງພວກ ສັນໂພຊະນາອາຫານທີ່ເຂົາໃຫ້ດ້ວຍສັດທາແລ້ວ ຍັງລ້ຽງຊີບຜິດທາງດ້ວຍເດຣັດສານວິຊາແບບນີ້ ຄື ທວາຍອະໄວຍະວະ ທວາຍຕຳໜິ ທວາຍໂຊກລາງ ທວາຍຝັນ ທວາຍລັກສະນະ ທວາຍໜູກັດຜ້າ ທຳພິທີບູຊາໄຟ ພິທີເບີກແວ່ນວຽນທຽນ ພິທີຫວ່ານຂີ້ແກບບູຊາໄຟ ພິທີຫວ່ານຮຳບູຊາໄຟ ພິທີຫວ່ານເຂົ້າສານບູຊາໄຟ ພິທີຕື່ມເນີຍບູຊາໄຟ ພິທີຕື່ມນ້ຳມັນບູຊາໄຟ ພິທີເປົ່າເຄື່ອງເຊ່ນບູຊາໄຟ ພິທີບະດ້ວຍເລືອດ ເປັນໝໍເບິ່ງອະໄວຍະວະ ເປັນໝໍເບິ່ງພື້ນທີ່ ເປັນໝໍເບິ່ງການປົກຄອງ ເປັນໝໍເຮັດສະເນ່ ເປັນໝໍເວດມົນໄລ່ຜີ ເປັນໝໍຕັ້ງທໍເທວະດາ ເປັນໝໍງູ ເປັນໝໍພິດ ເປັນໝໍແມງງອດ ເປັນໝໍໜູ ເປັນໝໍທວາຍສຽງນົກ ເປັນໝໍທວາຍສຽງກາ ເປັນໝໍທວາຍອາຍຸ ເປັນໝໍເສັກປ້ອງກັນລູກທະນູ ເປັນໝໍທວາຍສຽງສັດຮ້ອງ

[໔໐໖] ໒. ພິກຂຸ ເວັ້ນຂາດຈາກການລ້ຽງຊີບຜິດທາງ ດ້ວຍເດຣັດສານວິຊາ ຢ່າງເຊັ່ນ ສະມະນະພາມຜູ້ຈະເລີນລາງພວກ ສັນໂພຊະນາຫານທີ່ເຂົາໃຫ້ດ້ວຍສັດທາແລ້ວ ຍັງລ້ຽງຊີບຜິດທາງດ້ວຍເດຣັດສານວິຊາແບບນີ້ ຄື ທວາຍລັກສະນະແກ້ວມະນີ ລັກສະນະຜ້າ ລັກສະນະໄມ້ຄອນຍາວ ລັກສະນະສາດຕາວຸດ ລັກສະນະດາບ ລັກສະນະສອນ ລັກສະນະທະນູ ລັກສະນະອາວຸດ ລັກສະນະສະຕີ ລັກສະນະບຸຣຸດ ລັກສະນະເດັກຊາຍ ລັກສະນະເດັກຍິງ ລັກສະນະຂ້າທາດຊາຍ ລັກສະນະຂ້າທາດຍິງ ລັກສະນະຊ້າງ ລັກສະນະມ້າ ລັກສະນະຄວາຍ ລັກສະນະງົວ

ອຸສະພະ ລັກສະນະງົວສາມັນ ລັກສະນະແບ້ ລັກສະນະແກະ ລັກສະນະໄກ່ ລັກສະນະນົກກະທາ ລັກສະນະແລ່ນ ລັກສະນະຕາງຫູ ລັກສະນະເຕົ່າ ລັກສະນະສັດ

[໔໐໗] ໓. ພິກຂຸ ເວັ້ນຂາດຈາກການລ້ຽງຊີບຜິດທາງ ດ້ວຍເດຣັດສານວິຊາ ຢ່າງເຊັ່ນສະມະນະພາມຜູ້ຈະເລີນລາງພວກ ສັນໂພຊະນາອາຫານທີ່ເຂົາໃຫ້ດ້ວຍສັດທາແລ້ວ ຍັງລ້ຽງຊີບຜິດທາງ ດ້ວຍເດຣັດສານວິຊາແບບນີ້ ຄື ເບິ່ງຣຶກກອງທັບວ່າ ພຣະຣາຊາຈັກສະເດັດ ຫຼື ບໍ່ສະເດັດ ພຣະຣາຊາໃນອານາຈັກ ຈັກຊົງຍົກທັບເຂົ້າໄກ້ຊາຍແດນ ພຣະຣາຊານອກອານາຈັກຈັກຊົງລ່າຖອຍ ພຣະຣາຊານອກອານາຈັກ ຈັກຊົງຍົກທັບມາໄກ້ປູຕູເມືອງ ພຣະຣາຊາໃນອານາຈັກ ຈັກຊົງລ່າຖອຍ ໄຊຊະນະຈັກຕົກເປັນຂອງພຣະຣາຊາໃນອານາຈັກ ຄວາມພ່າຍແພ້ຈັກມີແກ່ພຣະຣາຊານອກອານາຈັກ ໄຊຊະນະຈັກຕົກເປັນຂອງພຣະຣາຊານອກອານາຈັກ ຄວາມພ່າຍແພ້ຈັກມີແກ່ພຣະຣາຊາໃນອານາຈັກ ພຣະຣາຊາອົງນີ້ຈັກຊົງຊະນະ ພຣະຣາຊາອົງນີ້ຈັກຊົງພ່າຍແພ້

[໔໐໘] ໔. ພິກຂຸ ເວັ້ນຂາດຈາກການລ້ຽງຊີບຜິດທາງ ດ້ວຍເດຣັດສານວິຊາ ຢ່າງເຊັ່ນສະມະນະພາມຜູ້ຈະເລີນລາງພວກ ສັນໂພຊະນາຫານທີ່ເຂົາໃຫ້ດ້ວຍສັດທາແລ້ວຍັງລ້ຽງຊີບຜິດທາງດ້ວຍເດຣັດສານວິຊາແບບນີ້ ຄື ພະຍາກອນວ່າ ຈັກມີຈັນທະຄາດ (ກົບກິນເດືອນ) ສຸຣິຍະຄາດ (ກົບກິນຕາເວັນ) ນັກຂັດຕະຄາດ ດວງຈັນ ດວງອາທິດ ຈັກໂຄຈອນຖືກທາງ ຫຼື ຜິດທາງດາວນັກຂັດຕະຈັກໂຄຈອນຖືກທາງ ຫຼື ຜິດທາງ ຈັກມີອຸກກາບາດ ແລະ ດາວຕົກ ແຜ່ນດິນໄຫວ ຟ້າຮ້ອງ ດວງຈັນ ດວງອາທິດ ແລະ ດາວນັກຂັດຕະຈັກຂຶ້ນຕົກ ມົວໝອງ ຊັດແຈ້ງສົດໃສ ຈັນຊົງຄາດ ສຸຣິຍະຄາດ ຫຼື ນັກຂັດຕະຄາດ ຈັກມີຜົນແບບນີ້ ດວງຈັນດວງອາທິດ ຫຼືດາວນັກຂັດຕະໂຄຈອນຖືກທາງ ຈັກມີຜົນແບບນີ້ ໂຄຈອນຜິດທາງ ຈັກມີຜົນແບບນີ້ ອຸກກາບາດ ແລະ ດາວຕົກ ແຜ່ນດິນໄຫວ ຟ້າຮ້ອງຈັກມີຜົນແບບນີ້ ດວງຈັນດວງອາທິດ ແລະ ດາວນັກຂັດຕະຂຶ້ນ ຕົກ ມົວໝອງ ຊັດແຈ້ງ ສົດໃສ ຈັກມີຜົນແບບນີ້

[໔໐໙] ໕. ພິກຂຸ ເວັ້ນຂາດຈາກການລ້ຽງຊີບຜິດທາງ ດ້ວຍເດຣັດສານວິຊາ ຢ່າງເຊັ່ນສະມະນະພາມຜູ້ຈະເລີນລາງພວກ ສັນໂພຊະນາອາຫານທີ່ເຂົາໃຫ້ດ້ວຍສັດທາ ແລ້ວຍັງລ້ຽງຊີບຜິດທາງ ດ້ວຍເດຣັດສານວິຊາແບບນີ້ ຄື ພະຍາກອນວ່າຝົນຈະດີ ຝົນຈະແລ້ງ ຈັກຫາພິກສາຫານໄດ້ງ່າຍ ຈັກຫາພິກສາຫານໄດ້ຍາກ ຈັກມີຄວາມສະຫງົບຮົ່ມເຢັນ ຈັກມີໄພ ຈັກມີໂຣຄາພະຍາດ ຈັກບໍ່ມີພະຍາດ ການຄຳນວນດ້ວຍການນັບນິ້ວ (ມຸດທາ) ການຄຳນວນດ້ວຍວິທີຄິດໃນໃຈ (ຄະນະນາ) ການຄຳນວນດ້ວຍວິທີຄາດຄະເນດ້ວຍສາຍຕາ (ສັງຂານ) ວິຊາກາບກອນ ແລະ ວິຊາວ່າດ້ວຍພື້ນແຜ່ນໂລກ

[໔໑໐] ຜ. ພິກຂຸ ເວັ້ນຂາດ ຈາກການລ້ຽງຊີບຜິດທາງ ດ້ວຍເດຣັດສານວິຊາ ຢ່າງເຊັ່ນສະມະນະພາມຜູ້ຈະເລີນລາງພວກ ສັນໂພຊະນາຫານທີ່ເຂົາໃຫ້ດ້ວຍສັດທາແລ້ວ ຍັງລ້ຽງຊີບຜິດທາງດ້ວຍເດຣັດສານວິຊາແນວນີ້ ຄື ໃຫ້ຣືກອາວາຫະມຸງຄຸນ (ຊາຍນໍາຍິງໄປຢູ່ນໍາ) ຣືກວິວາຫະມຸງຄຸນ (ຍິງນໍາຊາຍໄປຢູ່ນໍາ) ຣືກຫົວລຽງໝອນ ຣືກປະຣ້າງ ຣືກໂຮມຊັບ ຣືກໃຊ້ຈ່າຍຊັບ ຣືກເຮັດໃຫ້ໂຊກດີ ຣືກເຮັດໃຫ້ໂຊກຮ້າຍ ໃຫ້ຢາລອມລູກ ເປົ່າມົນໃຫ້ລີ້ນແຂງ ເປົ່າມົນໃຫ້ຄາງແຂງ ເປົ່າມົນໃຫ້ມືສັ່ນ ເປົ່າມົນໃຫ້ຄາງສັ່ນ ເປົ່າມົນໃຫ້ຫູອື້ ເປັນໝໍເບິ່ງລູກແກ້ວ ໃຊ້ຍິງສາວເປັນນາງທຽມ ເປັນໝໍທຽມ ບວງສວງດວງອາທິດ ແລະທ້າວມະຫາພົມ ເປົ່າມົນພົ່ນໄຟ ເຮັດພິທີເອີ້ນຂວັດ

[໔໑໑] ກ. ພິກຂຸເວັ້ນຂາດຈາກການລ້ຽງຊີບຜິດທາງ ດ້ວຍເດຣັດສານວິຊາຢ່າງເຊັ່ນສະມະນະພາມຜູ້ຈະເລີນລາງພວກ ສັນໂພຊະນາອາຫານທີ່ເຂົາໃຫ້ດ້ວຍສັດທາແລ້ວ ຍັງລ້ຽງຊີບຜິດທາງດ້ວຍເດຣັດສານວິຊາແນວນີ້ ຄື ເຮັດພິທີບະ ພິທີແກ້ບະ ຈົບມົນຂັບຜີ ຕັ້ງຫໍເທວະດາ ເຮັດກະເທືອຍໃຫ້ເປັນຊາຍ ເຮັດຊາຍໃຫ້ເປັນກະເທືອຍ ເຮັດພິທີປຸກເຮືອນ ພິທີບວງສວງເຈົ້າທີ່ ເປົ່ານໍ້າມົນ ທົດນໍ້າມົນ ພິທີບູຊາໄຟ ແຕ່ງຢາໃຫ້ຮາກອອກ ແຕ່ງຢາຖ່າຍ ແຕ່ງຢາແກ້ພະຍາດລົມຕີຂຶ້ນທາງເທິງ ແຕ່ງຢາແກ້ພະຍາດລົມຕີລົງທາງຕ່ໍາ ແຕ່ງຢາແກ້ປວດຫົວ ແຕ່ງນໍ້າມັນຢອດຫູແຕ່ງນໍ້າມັນຢອດຕາ ແຕ່ງຢານັດ ແຕ່ງຢາຢອດຕາ ຢາທາຕາ ເປັນໝໍຕາ ໝໍຜ່າຕັດ ໝໍຖືຮັກສາເດັກນ້ອຍ (ກຸມາຣະເວດ) ການໃຫ້ພື້ນເມືອງ ແລະ ຢາລ້າງບາດແຜ ທັງໝົດນີ້ຄືສິນຂອງພິກຂຸ.

[໔໑໒] ມະຫາບໍພິດ ພິກຂຸຜູ້ສົມບູນດ້ວຍສິນແນວນີ້ ຍ່ອມບໍ່ປະສົບໄພອັນຕະລາຍຈາກການສັງລວມໃນສິນເລີຍ ປຽບຄື ກະສັດຜູ້ໄດ້ຮັບມູນທາພິເສກ ເປັນພຣະຣາຊາ ກໍາຈັດຂ້າເສິກໄດ້ທັງໝົດໂດຍທໍາ ຍ່ອມບໍ່ປະສົບໄພອັນຕະລາຍຈາກຂ້າເສິກນັ້ນອີກ ພິກຂຸ ຜູ້ສົມບູນດ້ວຍອະຣິຍະສິນຂັນແນວນີ້ ຍ່ອມສະເຫວີຍສຸກອັນບໍ່ມີໂທດໃນພາຍໃນ ມະຫາບໍພິດ ພິກຂຸຊື່ວ່າ ສົມບູນດ້ວຍສິນເປັນແນວນີ້ແລ

**ມະຫາສິນຈົບ**

## ອິນຊີຍະສັງວອນ

[໔໑໓] ມະຫາບໍພິດ ພິກຂຸຊື່ວ່າຄຸ້ມຄອງທະວານໃນອິນຊີທັງຫຼາຍເປັນແນວໃດ ຄື ພິກຂຸໃນທໍາວິໄນນີ້ ເຫັນຮູບດ້ວຍຕາແລ້ວບໍ່ໂຮມຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອສັງລວມໃນຈັກຂຸນຊີເຊິ່ງເມື່ອບໍ່ສັງລວມແລ້ວ ກໍຈະເປັນເຫດໃຫ້ຖືກບາບອະກຸສົນທໍາ ຄື ອະພິຊາ ແລະ ໂທມະນັດຄອບງໍາໄດ້ ຈຶ່ງຖືຮັກສາຈັກຂຸນຊີ ເຖິງຄວາມສັງລວມໃນຈັກຂຸນຊີ ຟັງສຽງດ້ວຍຫູ ຯລຯ ດົມກິ່ນດ້ວຍດັງ ຯລຯ ຊີມຣົດດ້ວຍລີ້ນ ຯລຯ ສໍາຜັດຖືກໂຜດຖັບພະດ້ວຍກາຍ ຯລຯ ຮູ້ທໍາມາຣົມດ້ວຍໃຈແລ້ວ ບໍ່ໂຮມຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອສັງລວມໃນມະນິນຊີ ເຊິ່ງເມື່ອບໍ່ສັງລວມ

ແລ້ວ ກໍຈະເປັນເຫດໃຫ້ຖືກບາບອະກຸສົນທຳ ຄື ອະພິຊາ ແລະ ໂທມະນັດຄອບງຳໄດ້ ຈຶ່ງຖືຮັກສາມະນິນຊີ ເຖິງຄວາມສັງລວມໃນມະນິນຊີ ພິກຂຸຜູ້ປະກອບດ້ວຍຄວາມສັງລວມອິນຊີ ອັນເປັນອະຣິຍະນີ້ ຍ່ອມສະເຫວີຍສຸກອັນບໍ່ປະປົນກັບກິເລດໃນພາຍໃນ ມະຫາບໍພິດ ພິກຂຸຊື່ວ່າຄຸ້ມຄອງທະວານໃນອິນຊີທັງຫຼາຍເປັນແນວນີ້ແລ

## ສະຕິສຳປະຊັນຍະ

[໔໑໔] ມະຫາບໍພິດ ພິກຂຸຊື່ວ່າ ປະກອບດ້ວຍສະຕິສຳປະຊັນຍະເປັນແນວໃດ ຄື ພິກຂຸໃນທຳວິໄນນີ້ ທຳຄວາມຮູ້ສຶກໂຕໃນການກ້າວໄປ ການຖອຍກັບ ການແນມເບິ່ງ ການຫຼຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດ ແລະ ຈີວອນ ການສັນ ການດື່ມ ການຫຍ້ຳ ການກືນ ການຖ່າຍອຸດຈາຣະ ຖ່າຍປັດສາວະ ການຍ່າງ ການຢືນ ການນັ່ງ ການນອນ ການຕື່ນ ການເວົ້າ ການນິ່ງ ມະຫາບໍພິດ ພິກຂຸຊື່ວ່າ ປະກອບດ້ວຍສະຕິສຳປະຊັນຍະເປັນແນວນີ້ແລ

## ສັນໂດດ

[໔໑໕] ມະຫາບໍພິດ ພິກຂຸຊື່ວ່າ ຜູ້ສັນໂດດເປັນແນວໃດ ຄື ພິກຂຸໃນທຳວິໄນນີ້ ສັນໂດດດ້ວຍຈີວອນມີພໍຄຸມກາຍ ແລະ ບິນທະບາດພໍອີ່ມທ້ອງ ຈະທ່ຽວໄປໃນທີ່ໃດ ໆ ກໍໄປໄດ້ທັນທີ ຄືນົກບິນໄປມີແຕ່ປີກເປັນພາຣະ ມະຫາບໍພິດພິກຂຸຊື່ວ່າ ເປັນຜູ້ສັນໂດດເປັນແນວນີ້ແລ

## ການລະນິວອນ ໕

[໔໑໖] ພິກຂຸນັ້ນ ປະກອບດ້ວຍອະຣິຍະສີນຂັນ ອະຣິຍະອິນຊີສັງວອນ ອະຣິຍະສະຕິສຳປະຊັນຍະ ແລະ ອະຣິຍະສັນໂດດແນວນີ້ແລ້ວ ພັກຢູ່ໃນເສນາສະນະອັນງຽບສະຫງັດໄດ້ແກ່ປ່າເຫງົ້າໄມ້ ພູ ເງື້ອບຜາ ຖ້ຳ ປ່າຊ້າ ປ່າຕຶບ ບ່ອນແຈ້ງ ກອງເຟືອງ ເມື່ອກັບມາຈາກບິນທະບາດສັນອາຫານເສັດແລ້ວ ນັ່ງຂັດສະມາທິ ຕັ້ງກາຍກົງ ດຳຣົງສະຕິໄວ້ສະເພາະໜ້າ

[໔໑໗] ທ່ານລະອະພິຊາ (ຄວາມເພ່ງເລັງຢາກໄດ້ຂອງເຂົາ) ໃນໂລກ ມີໃຈປາສະຈາກອະພິຊາຢູ່ ຊຳຣະຈິດໃຫ້ບໍລິສຸດຈາກອະພິຊາ ລະຄວາມມຸ້ງຮ້າຍ ຄື ພະຍາບາດ ມີຈິດບໍ່ພະຍາບາດ ມຸ້ງປະໂຫຍດເກື້ອກູນແກ່ສັບພະສັດຢູ່ ຊຳຣະຈິດໃຫ້ບໍລິສຸດຈາກຄວາມມຸ້ງຮ້າຍ ຄື ພະຍາບາດ ລະຖີນະມິດທະ (ຄວາມທໍ້ດທູ່ແລະເຊື່ອງຊຶມ) ປາສະຈາກຖີນະມິດທະກຳນົດແສງສະຫວ່າງມີສະຕິສຳປະຊັນຍາຢູ່ ຊຳຣະຈິດໃຫ້ບໍລິສຸດຈາກຖີນະມິດທະ ລະອຸດທັດຈະກຸກກຸດຈະ (ຄວາມຟຸ້ງຊ່ານແລະລຳຄານໃຈ) ເປັນຜູ້ບໍ່ຟຸ້ງຊ່ານ ມີຈິດສະຫງົບຢູ່ພາຍໃນ ຊຳຣະຈິດໃຫ້ບໍລິສຸດຈາກອຸດທັດຈະກຸກກຸດຈະ ລະວິຈິກິດສາ (ຄວາມລັງເລສົງໃສ) ຂ້າມວິຈິກິດສາໄດ້ແລ້ວ ບໍ່ມີວິຈິກິດສາໃນກຸສົນທຳ ຊຳຣະຈິດໃຫ້ບໍລິສຸດຈາກວິຈິກິດສາ

# ອຸບປະມານິວອນ ໕

[໔໑໘] ປຽບຄື ຄົນກູ້ໜີ້ມາລົງທຶນຈົນປະສົບຜົນສຳເລັດ ໃຊ້ໜີ້ເກົ່າທີ່ເປັນຕົ້ນທຶນຈົນໝົດ ເກັບກຳໄລທີ່ເຫຼືອໄວ້ເປັນຄ່າລ້ຽງດູບຸດພັນລະຍາ ເຂົາຄິດວ່າ "ແຕ່ກ່ອນເຮົາກູ້ໜີ້ມາລົງທຶນວຽກງານປະສົບຜົນສຳເລັດໄດ້ດີ ໄດ້ໃຊ້ໜີ້ເກົ່າທີ່ຢືມມາລົງທຶນໝົດແລ້ວ ແລະ ກໍຍັງມີເຫຼືອໄວ້ເປັນຄ່າລ້ຽງດູບຸດພັນລະຍາ" ເພາະຄວາມບໍ່ມີໜີ້ສິນເປັນເຫດ ເຂົາຈຶ່ງໄດ້ຮັບຄວາມເບີກບານໃຈ ແລະ ຄວາມສຸກໃຈ

[໔໑໙] ປຽບຄື ຄົນປ່ວຍໄຂ້ອາການໜັກ ບໍລິໂພກອາຫານບໍ່ໄດ້ ບໍ່ມີກຳລັງ ຕໍ່ມາຫາຍປ່ວຍບໍລິໂພກອາຫານໄດ້ກັບມີກຳລັງຄືນມາຄືເກົ່າ ເຂົາຈຶ່ງຄິດວ່າ "ແຕ່ກ່ອນເຮົາປ່ວຍອາການໜັກບໍລິໂພກອາຫານບໍ່ໄດ້ ບໍ່ມີກຳລັງ ແຕ່ເວລານີ້ຫາຍປ່ວຍ ບໍລິໂພກອາຫານໄດ້ ມີກຳລັງເປັນປົກກະຕິ" ເພາະການຫາຍຈາກພະຍາດເປັນເຫດ ເຂົາຈຶ່ງໄດ້ຮັບຄວາມເບີກບານໃຈ ແລະຄວາມສຸກໃຈ

[໔໒໐] ປຽບຄື ຄົນຖືກໃສ່ໂທດຖືກຄຸມຂັງໃນຄຸກ ຕໍ່ມາພົ້ນໂທດອອກຈາກຄຸກໂດຍສະວັດດີພາບ ບໍ່ຕ້ອງເສຍຄ່າໃຊ້ຈ່າຍໃດ ໆ ເຂົາຄິດວ່າ "ແຕ່ກ່ອນເຮົາຖືກໃສ່ໂທດຖືກຄຸມຂັງໃນຄຸກ ແຕ່ເວລານີ້ພົ້ນໂທດອອກຈາກຄຸກໂດຍສະວັດດີພາບ ບໍ່ຕ້ອງເສຍຄ່າໃຊ້ຈ່າຍໃດ ໆ" ເພາະການພົ້ນຈາກຄຸກເປັນເຫດ ເຂົາຈຶ່ງໄດ້ຮັບຄວາມເບີກບານໃຈ ແລະ ຄວາມສຸກໃຈ

[໔໒໑] ປຽບຄື ຄົນທີ່ຕົກເປັນຂ້າທາດ ເພິ່ງໂຕເອງບໍ່ໄດ້ ຕ້ອງເພິ່ງຜູ້ອື່ນ ຈະໄປໃສມາໃສຕາມໃຈມັກກໍບໍ່ໄດ້ ຕໍ່ມາພົ້ນຈາກຄວາມເປັນທາດ ເພິ່ງໂຕເອງໄດ້ ບໍ່ຕ້ອງເພິ່ງຜູ້ອື່ນເປັນອິດສະຣະພາບຈະໄປໃສກໍໄດ້ຕາມໃຈມັກ ເຂົາຄິດວ່າ "ແຕ່ກ່ອນ ເຮົາເປັນຂ້າທາດເພິ່ງໂຕເອງບໍ່ໄດ້ຕ້ອງເພິ່ງຜູ້ອື່ນຈະໄປໃສຕາມໃຈມັກບໍ່ໄດ້ ແຕ່ເວລານີ້ ພົ້ນຈາກຄວາມເປັນທາດ ເພິ່ງຕົວເອງໄດ້ແລ້ວ ບໍ່ຕ້ອງເພິ່ງຜູ້ອື່ນ ເປັນອິດສະຣະພາບ ຈະໄປໃສກໍໄດ້ຕາມໃຈມັກ" ເພາະການໄດ້ອິດສະຣະພາບເປັນເຫດ ເຂົາຈຶ່ງໄດ້ຮັບຄວາມເບີກບານໃຈ ແລະ ຄວາມສຸກໃຈ

[໔໒໒] ປຽບຄື ຄົນມີຊັບສົມບັດ ເດີນທາງໄກກັນດານ ຫາອາຫານໄດ້ຍາກ ມີໄພສະເພາະໜ້າ ຕໍ່ມາຂ້າມພົ້ນທາງກັນດານນັ້ນໄປໄດ້ ເຖິງໝູ່ບ້ານອັນສະຫງົບຮົ່ມເຢັນ ປອດໄພໂດຍສະວັດດີພາບ ເຂົາຄິດວ່າ "ແຕ່ກ່ອນເຮົາມີຊັບສົມບັດ ເດີນທາງໄກກັນດານ ຫາອາຫານໄດ້ຍາກ ມີໄພສະເພາະໜ້າ ແຕ່ໃນເວລານີ້ ໄດ້ຂ້າມພົ້ນທາງກັນດານນັ້ນມາໄດ້ແລ້ວ ມາຮອດໝູ່ບ້ານອັນສະຫງົບ ຮົ່ມເຢັນປອດໄພ ໂດຍສະວັດດີພາບ" ເພາະການພົບພູມສະຖານອັນຮົ່ມເຢັນເປັນເຫດ ເຂົາຈຶ່ງໄດ້ຮັບຄວາມເບີກບານໃຈ ແລະ ຄວາມສຸກໃຈ

[໔໔໓] ມະຫາບໍພິດ ພິກຂຸພິຈາລະນາເຫັນນິວອນ ໕ ທີ່ຕົນຍັງລະບໍ່ໄດ້ ຄື ການເປັນໜີ້ເປັນພະຍາດ ການຕິດຄຸກ ການເປັນຂ້າທາດ ແລະ ຫົນທາງໄກກັນດານ

[໔໔໔] ມະຫາບໍພິດ ພິກຂຸພິຈາລະນາເຫັນນິວອນ ໕ ທີ່ ຕົນລະໄດ້ແລ້ວ ຄື ຄວາມບໍ່ມີໜີ້ ຄວາມບໍ່ມີພະຍາດ ການພົ້ນໂທດຈາກຄຸກ ຄວາມເປັນອິດສະຣະພາບ ແລະ ພູມສະຖານອັນສະຫງົບຮົ່ມເຢັນ

[໔໔໕] ເມື່ອພິກຂຸນັ້ນ ພິຈາລະນາເຫັນນິວອນ ໕ ທີ່ຕົນລະໄດ້ແລ້ວ ຍ່ອມເກີດຄວາມເບີກບານໃຈ ເມື່ອເບີກບານໃຈ ກໍຍ່ອມເກີດປີຕິ ເມື່ອໃຈມີປີຕິ ກາຍຍ່ອມສະຫງົບ ເມື່ອມີກາຍສະຫງົບ ຍ່ອມໄດ້ຮັບຄວາມສຸກ ເມື່ອມີຄວາມສຸກຈິດຍ່ອມຕັ້ງໝັ້ນ

## ປະຖົມມະຊານ

[໔໔໖] ພິກຂຸນັ້ນ ສະຫງັດຈາກກາມ ແລະ ອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມມະຊານທີ່ມີວິຕົກ ວິຈານ ປີຕິ ແລະ ສຸກອັນເກີດຈາກວິເວກຢູ່ ເມື່ອເຮັດກາຍນີ້ໃຫ້ຊຸ່ມຊື່ນເອີບອີ່ມດ້ວຍປີຕິ ແລະສຸກ ອັນເກີດຈາກວິເວກ ໄຫລວຽນທົ່ວຮ່າງກາຍຢູ່ ບໍ່ມີສ່ວນໃດຂອງຮ່າງກາຍທີ່ປີຕິ ແລະ ສຸກອັນເກີດຈາກວິເວກຈະບໍ່ສຳຜັດຖືກ

[໔໔໗] ປຽບຄື ພະນັກງານອາບນ້ຳ ຫຼື ລູກມືພະນັກງານອາບນ້ຳ ຜູ້ຊຳນານ ຖອກຜົງຫຸກໂຕລົງໃນພາຊະນະສຳລິດແລ້ວ ເອົານ້ຳພົມໃຫ້ຕິດເປັນກ້ອນ ພໍຮອດຍາມແລງກ້ອນຜົງຫຸກໂຕທີ່ມີຢາງຊືມໄປຈັບຕິດກັນໝົດ ບໍ່ກະຈາຍອອກສັນໃດ ພິກຂຸເຮັດກາຍນີ້ໃຫ້ຊຸ່ມຊື່ນເອີບອີ່ມດ້ວຍປີຕິ ແລະ ສຸກ ອັນເກີດຈາກວິເວກ ໄຫລວຽນທົ່ວຮ່າງກາຍຢູ່ ບໍ່ມີສ່ວນໃດຂອງຮ່າງກາຍທີ່ປີຕິ ແລະ ສຸກ ກໍສັນນັ້ນ ຂໍ້ນີ້ຈັດເປັນຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກ ເຊິ່ງດີກວ່າ ແລະ ປະນີດກວ່າຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກໃນຂໍ້ກ່ອນ ໆ

## ທຸຕິຍະຊານ

[໔໔໘] ຍັງມີອີກ ມະຫາບໍພິດ ເພາະວິຕົກວິຈານສະຫງົບລະງັບໄປ ພິກຂຸບັນລຸທຸຕິຍະຊານ ມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງ ຜຸດຂຶ້ນບໍ່ມີວິຕົກ ບໍ່ມີວິຈານມີ ແຕ່ປີຕິ ແລະ ສຸກ ອັນເກີດຈາກສະມາທິຢູ່ ທ່ານເຮັດກາຍນີ້ໃຫ້ຊຸ່ມຊື່ນເອີບອີ່ມດ້ວຍປີຕິ ແລະ ສຸກອັນເກີດຈາກສະມາທິ ໄຫລວຽນທົ່ວຮ່າງກາຍຢູ່ ບໍ່ມີສ່ວນໃດຂອງຮ່າງກາຍທີ່ປີຕິ ແລະ ສຸກອັນເກີດຈາກສະມາທິຈະບໍ່ສຳຜັດຖືກຕ້ອງ

[໔໔໗] ປຽບຄື ວັງນໍ້າເລິກເປັນວັງວົນ ບໍ່ມີກະແສນໍ້າອື່ນໄຫລເຂົ້າມາໄດ້ ບໍ່ວ່າທາງຕາເວັນອອກ ທາງໃຕ້ ທາງຕາເວັນຕົກ ແລະ ທາງເໜືອ ຝົນກໍບໍ່ຕົກໃສ່ຫ້ວງນໍ້ານັ້ນ ແຕ່ມີກະແສນໍ້າເຢັນພຸດຂຶ້ນຈາກຫ້ວງນໍ້ານັ້ນ ແລ້ວເຮັດໃຫ້ຫ້ວງນໍ້ານັ້ນໃຫ້ເຕັມບໍລິບູນໄປດ້ວຍນໍ້າເຢັນ ບໍ່ມີສ່ວນໃດຂອງຫ້ວງນໍ້ານັ້ນທີ່ກະແສນໍ້າເຢັນນັ້ນ ຈະບໍ່ສຳຜັດຖືກ ສັນໃດ ພິກຂຸ ເຮັດກາຍນີ້ໃຫ້ຊຸ່ມຊື່ນ ເອີບອີ່ມດ້ວຍປີຕິ ແລະ ສຸກ ອັນເກີດຈາກສະມາທິ ໄຫລວຽນທົ່ວຮ່າງກາຍຢູ່ ບໍ່ມີສ່ວນໃດຂອງຮ່າງກາຍນີ້ທີ່ປີຕິ ແລະ ສຸກ ອັນເກີດຈາກສະມາທິ ຈະບໍ່ສຳຜັດຖືກຕ້ອງສັນນັ້ນ ຂໍ້ນີ້ ຈັດເປັນຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກ ເຊິ່ງດີກວ່າ ແລະ ປະນີດກວ່າຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກໃນຂໍ້ກ່ອນ ໆ

## ຕະຕິຍະຊານ

[໔໙໐] ຍັງມີອີກ ມະຫາບໍພິດ ເພາະປີຕິຈາງຄາຍໄປ ພິກຂຸມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານ ທີ່ພຣະອະຣິຍະທັງຫຼາຍສັນລະເສີນວ່າ ຜູ້ມີອຸເປກຂາມີສະຕິຢູ່ເປັນສຸກ ທ່ານເຮັດກາຍນີ້ໃຫ້ຊຸ່ມຊື່ນ ເອີບອີ່ມ ດ້ວຍສຸກ ອັນບໍ່ມີປີຕິໄຫລວຽນທົ່ວຮ່າງກາຍຢູ່ ບໍ່ມີສ່ວນໃດຂອງຮ່າງກາຍທີ່ສຸກອັນບໍ່ມີປີຕິຈະບໍ່ສຳຜັດຖືກຕ້ອງ

[໔໙໑] ປຽບຄື ໃນກໍບົວຂຽວ (ອຸບົນ) ກໍບົວຫຼວງ (ປະທຸມ) ຫຼື ກໍບົວຂາວ (ບຸນຖະຣິກ) ດອກບົວຂຽວ ດອກບົວຫຼວງ ຫຼື ດອກບົວຂາວບາງເຫຼົ່າ ທີ່ເກີດ ຈະເລີນໃຫຍ່ຂຶ້ນໃນນໍ້າ ຍັງບໍ່ພົ້ນຈາກນໍ້າ ຈົມຢູ່ໃຕ້ນໍ້າ ມີນໍ້າຫຼໍ່ລ້ຽງໄວ້ ດອກບົວເຫຼົ່ານັ້ນ ຊຸ່ມຊື່ນ ເອີບອາບ ດ້ວຍນໍ້າເຢັນ ຕັ້ງແຕ່ຍອດເຖິງເຫງົ້າ ບໍ່ມີສ່ວນໃດທີ່ນໍ້າເຢັນຈະບໍ່ສຳຜັດຖືກ ສັນໃດ ພິກຂຸ ເມື່ອເຮັດກາຍນີ້ໃຫ້ຊຸ່ມຊື່ນ ເອີບອີ່ມ ດ້ວຍສຸກອັນບໍ່ມີປີຕິ ຮູ້ສຶກຊາບຊ່ານຢູ່ ບໍ່ມີສ່ວນໃດຂອງຮ່າງກາຍທີ່ຄວາມສຸກອັນບໍ່ມີປີຕິຈະບໍ່ສຳຜັດຖືກຕ້ອງ ສັນນັ້ນ ຂໍ້ນີ້ ຈັດເປັນຜົນແຫ່ງຄວາມເປັນສະມະນະທີ່ເຫັນໄດ້ປະຈັກເຊິ່ງດີກວ່າ ແລະ ປະນີດກວ່າຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກໃນຂໍ້ກ່ອນ ໆ

## ຈະຕຸຕຖະຊານ

[໔໙໔] ຍັງມີອີກ ມະຫາບໍພິດ ເພາະລະຄວາມສຸກ ແລະ ຄວາມທຸກໄດ້ ເພາະໂສມະນັດ ແລະ ໂທມະນັດດັບໄປກ່ອນ ພິກຂຸບັນລຸຈະຕຸດຖະຊານທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດ ເພາະອຸເປກຂາຢູ່ ທ່ານມີໃຈອັນບໍລິສຸດຜຸດຜ່ອງແຜ່ໄປທົ່ວກາຍນີ້ ບໍ່ມີສ່ວນໃດຂອງຮ່າງກາຍທີ່ໃຈອັນບໍລິສຸດຜຸດຜ່ອງຈະບໍ່ສຳຜັດຖືກ

[໔໙໙] ປຽບຄື ຄົນນັ່ງຢູ່ໃຊ້ຜ້າຂາວຄຸມຮ່າງກາຍໄປຈົດຮອດຫົວ ບໍ່ມີສ່ວນໃດຂອງຮ່າງກາຍທີ່ຜ້າຂາວຈະບໍ່ກວມສັນໃດ ພິກຂຸມີໃຈອັນບໍລິສຸດຜຸດຜ່ອງແຜ່ໄປທົ່ວກາຍນີ້ ບໍ່ມີສ່ວນໃດຂອງຮ່າງກາຍ ທີ່ໃຈອັນບໍລິສຸດຜຸດຜ່ອງຈະບໍ່ສຳຜັດຖືກ ສັນນັ້ນ ຂໍ້ນີ້ ຈັດເປັນຜົນແຫ່ງຄວາມ

ເປັນສະມະນະທີ່ເຫັນປະຈັກ ເຊິ່ງດີກວ່າ ແລະ ປະນີດກວ່າຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກໃນຂໍ້ກ່ອນ ໆ

## ວິດຊາ ໘ ປະການ

### ໑. ວິປັດສະນາຍານ

[໔໓໔] ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດຍົວະຍວນປາສະຈາກຄວາມເສົ້າໝອງ ອ່ອນນຸ້ມເໝາະແກ່ການໃຊ້ງານ ຕັ້ງໝັ້ນຢູ່ບໍ່ຫວັ່ນໄຫວຢູ່ແບບນີ້ ພິກຂຸນັ້ນ ນ້ອມຈິດໄປເພື່ອຍານະທັດສະນະ ຮູ້ຊັດແຈ້ງແນວນີ້ວ່າ "ກາຍຂອງເຮົານີ້ໂຮມກັນເປັນຮູບຮ່າງ ປະກອບຂຶ້ນຈາກມະຫາພູຕະຮູບ ໔ ເກີດຈາກບິດາ ມານດາ ໃຫຍ່ຂຶ້ນໄດ້ຍ້ອນເຂົ້າສຸກ ແລະເຂົ້າໜົມສົດ ບໍ່ທ່ຽງແທ້ ມີອັນຕ້ອງແຕກກະຈັດກະຈາຍໄປໃນທີ່ສຸດເປັນທຳມະດາ ວິນຍານຂອງເຮົາອາໄສ ແລະຕິດພັນຢູ່ໃນກາຍນີ້"

[໔໓໕] ປຽບຄື ແກ້ວໄພທູນ ອັນງົດງາມ ຕາມທຳມະຊາດມີແປດຫຼ່ຽມ ທີ່ເຈຍຣະໄນດີແລ້ວ ເຫຼື້ອມສ່ອງແສງເປັນປະກາຍ ໄດ້ສັດສ່ວນມີດ້າຍສີຂຽວ ເຫຼືອງ ແດງ ຂາວ ຫຼື ສີນວນຮ້ອຍຢູ່ທາງໃນ ຄົນຕາເຖິງຈັບແກ້ວໄພທູນນັ້ນວາງໄວ້ໃນມື ແລ້ວພິຈາລະນາເຫັນວ່າ "ແກ້ວໄພທູນອັນງົດງາມຕາມທຳມະຊາດມີແປດຫຼ່ຽມທີ່ເຈຍຣະໄນດີແລ້ວ ເຫຼື້ອມສ່ອງແສງເປັນປະກາຍໄດ້ສັດສ່ວນມີດ້າຍສີຂຽວ ເຫຼືອງ ແດງ ຂາວ ຫຼື ສີນວນຮ້ອຍຢູ່ທາງໃນ" ສັນໃດ ເມື່ອຈິດເປັນສະມາທິບໍລິສຸດຜຸດຜ່ອງ ບໍ່ມີກິເລດຍົວະຍວນ ປາສະຈາກຄວາມເສົ້າໝອງ ອ່ອນນຸ້ມເໝາະແກ່ການໃຊ້ງານ ຕັ້ງໝັ້ນຢູ່ບໍ່ຫວັ່ນໄຫວແນວນີ້ ພິກຂຸ ນ້ອມຈິດໄປເພື່ອຍານະທັດສະນະ ຮູ້ຊັດແຈ້ງແນວນີ້ວ່າ "ກາຍຂອງເຮົານີ້ ໂຮມກັນເປັນຮູບຮ່າງ ປະກອບຂຶ້ນຈາກມະຫາພູຕະຮູບ ໔ ເກີດຈາກບິດາ ມານດາ ໃຫຍ່ຂຶ້ນໄດ້ຍ້ອນເຂົ້າສຸກ ແລະ ເຂົ້າໜົມສົດ ບໍ່ທ່ຽງແທ້ແນ່ນອນ ຕ້ອງໄດ້ຮັກສາ ມີອັນຈະຕ້ອງແຕກກະຈັດກະຈາຍສະຫຼາຍຫາຍໄປໃນທີ່ສຸດ ເປັນທຳມະດາ ວິນຍານຂອງເຮົາອາໄສ ແລະ ຕິດພັນຢູ່ໃນກາຍນີ້" ສັນນັ້ນ ຂໍ້ນີ້ ຈັດເປັນຜົນແຫ່ງຄວາມເປັນສະມະນະ ທີ່ເຫັນປະຈັກເຊິ່ງດີກວ່າ ແລະ ປະນີດກວ່າ ຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກໃນຂໍ້ກ່ອນ ໆ

### ໒. ມະໂນມະຍິດທິຍານ

[໔໓໖] ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດຍົວະຍວນປາສະຈາກຄວາມເສົ້າໝອງ ອ່ອນນຸ້ມເໝາະແກ່ການໃຊ້ງານ ຕັ້ງໝັ້ນຢູ່ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນ ນ້ອມຈິດໄປເພື່ອເນຣະມິດກາຍ ທີ່ເກີດແຕ່ໃຈ ຄື ເນຣະມິດກາຍອື່ນຈາກກາຍນີ້ ມີຮູບທີ່ເກີດດ້ວຍໃຈ ມີອະໄວຍະວະຄົບຖ້ວນ ມີອິນຊີບໍ່ບົກພ່ອງ

[໔໓໗] ປຽບຄື ຄົນດຶງໄສ້ຫຍ້າປ້ອງອອກຈາກປ້ອງ ເຂົາເຫັນວ່າ "ນີ້ແມ່ນຫຍ້າປ້ອງ ນີ້ແມ່ນໄສ້ ຫຍ້າປ້ອງເປັນຢ່າງໜຶ່ງ ໄສ້ເປັນອີກຢ່າງໜຶ່ງ ແຕ່ໄສ້ຖືກດຶງອອກມາຈາກຫຍ້າປ້ອງນັ້ນເອງ" ປຽບຄືຄົນດຶງດາບອອກຈາກຝັກ ເຂົາເຫັນວ່າ "ນີ້ຄືດາບ ນີ້ຄືຝັກຂອງດາບ ດາບເປັນຢ່າງໜຶ່ງ ຝັກກໍເປັນອີກຢ່າງໜຶ່ງ ແຕ່ດາບຖືກດຶງອອກມາຈາກຝັກນັ້ນເອງ" ຫຼື ປຽບຄື ຄົນດຶງງູອອກຈາກໜັງທີ່ຖືກລອກອອກມາ ເຂົາເຫັນວ່າ"ນີ້ຄືໂຕງູ ນີ້ຄືໜັງງູ ງູເປັນຢ່າງໜຶ່ງ ໜັງງູກໍເປັນອີກຢ່າງໜຶ່ງ ແຕ່ໜັງງູຖືກດຶງອອກຈາກໂຕງູນັ້ນເອງ" ສັນໃດ ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງບໍ່ມີກິເລດຍົວະຍວນ ປາສະຈາກຄວາມເສົ້າໝອງອ່ອນນຸ້ມເໝາະແກ່ການໃຊ້ງານ ຕັ້ງໝັ້ນຢູ່ບໍ່ຫວັ່ນໄຫວແນວນີ້ ພິກຂຸ ເມື່ອນ້ອມຈິດໄປເພື່ອເນຣະມິດກາຍທີ່ເກີດແຕ່ໃຈ ຄື ເນຣະມິດກາຍອື່ນຈາກກາຍນີ້ ມີຮູບທີ່ເກີດຈາກໃຈ ມີອະໄວຍະວະຄົບຖ້ວນມີອິນຊີບໍ່ບົກຜ່ອງ ສັນນັ້ນ ຂໍ້ນີ້ ຈັດເປັນຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກ ເຊິ່ງດີກວ່າແລະປະນີດກວ່າ ຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກໃນຂໍ້ກ່ອນ ໆ

## ໓. ອິດທິວິທະຍານ

[໔໓໗] ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດຍົວະຍວນປາສະຈາກຄວາມເສົ້າໝອງ ອ່ອນນຸ້ມເໝາະແກ່ການໃຊ້ງານ ຕັ້ງໝັ້ນຢູ່ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນ ນ້ອມຈິດໄປເພື່ອອິດທິວິທະຍານ ສະແດງລິດໄດ້ຫຼາຍຢ່າງ ຄື ຄົນດຽວສະແດງເປັນຫຼາຍຄົນໄດ້ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ສະແດງໃຫ້ປາກົດ ຫຼື ໃຫ້ຫາຍໄປກໍໄດ້ ຊອດຝາກຳແພງ ແລະ ພູໄປໄດ້ບໍ່ຕິດຂັດຄືໄປໃນທີ່ວ່າງກໍໄດ້ ຜຸດຂຶ້ນ ຫຼື ດຳລົງໃນແຜ່ນດິນ ຄື ມຸດຂຶ້ນລົງໃນນ້ຳກໍໄດ້ ຍ່າງເທິງນ້ຳໂດຍທີ່ນ້ຳບໍ່ແຍກຄືຍ່າງເທິງແຜ່ນດິນກໍໄດ້ ນັ່ງຂັດສະມາທິເຫາະໄປໃນອາກາດຄືນົກບິນໄປກໍໄດ້ ໃຊ້ຝ່າມືລູບຄຳດວງຈັນ ດວງອາທິດອັນມີລິດຫຼາຍ ມີອານຸພາບຫຼາຍກໍໄດ້ ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກກໍໄດ້

[໔໓໘] ປຽບຄື ຊ່າງໝໍ້ ຫຼື ລູກມືຊ່າງໝໍ້ ຜູ້ຊຳນານໃນການປັ້ນໝໍ້ ເມື່ອນວດດິນໜຽວດີແລ້ວປັ້ນເຮັດເປັນພາຊະນະທີ່ຕ້ອງການໃຫ້ສຳເລັດໄດ້ໂດຍງ່າຍ ປຽບຄື ຊ່າງງາຊ້າງ ຫຼື ລູກມືຊ່າງງາຊ້າງຜູ້ຊຳນານ ເມື່ອແຕ່ງງາດີແລ້ວ ໃຊ້ເຮັດເປັນເຄື່ອງງາຊະນິດທີ່ຕ້ອງການໃຫ້ສຳເລັດໄດ້ໂດຍງ່າຍ ປຽບຄືຊ່າງຄຳ ຫຼື ລູກມືຊ່າງຄຳຜູ້ຊຳນານ ເມື່ອຫຼອມຄຳດີແລ້ວ ໃຊ້ເຮັດເປັນຄຳຮູບປະພັນຊະນິດທີ່ຕ້ອງການໃຫ້ສຳເລັດໄດ້ ສັນໃດ ເມື່ອຈິດເປັນສະມາທິບໍລິສຸດຜຸດຜ່ອງ ບໍ່ມີກິເລດຍົວະຍວນ ປາສະຈາກຄວາມເສົ້າໝອງ ອ່ອນນຸ້ມເໝາະແກ່ການໃຊ້ງານຕັ້ງໝັ້ນຢູ່ບໍ່ຫວັ່ນໄຫວແນວນີ້ ພິກຂຸນ້ອມຈິດໄປເພື່ອອິດທິວິທະຍານ ສະແດງລິດໄດ້ຫຼາຍຢ່າງຄືຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ສະແດງໃຫ້ປາກົດ ຫຼື ໃຫ້ຫາຍໄປກໍໄດ້ ຍ່າງຊອດຝາກຳແພງ ແລະ ພູໄປໄດ້ໂດຍບໍ່ຕິດຂັດຄືຍ່າງໄປໃນທີ່ວ່າງກໍໄດ້ ຜຸດຂຶ້ນ ຫຼື ດຳລົງໃນແຜ່ນດິນຄືມຸດຂຶ້ນມຸດລົງໃນນ້ຳກໍໄດ້ ຍ່າງເທິງນ້ຳໂດຍທີ່ນ້ຳບໍ່ແຍກຄືຍ່າງເທິງແຜ່ນດິນກໍໄດ້ ນັ່ງ

ຂັດສະມາທິເຫາະໄປໃນອາກາດຄືນົກບິນໄປກໍໄດ້ ໃຊ້ຝ່າມືລູບຄໍາດວງຈັນດວງອາທິດ ອັນມີລິດຫຼາຍ ມີອານຸພາບຫຼາຍກໍໄດ້ ໃຊ້ອໍານາດທາງກາຍຫາຍໂຕໄປຈົນເຖິງພົມມະໂລກກໍໄດ້ ສັນນັ້ນ ຂໍ້ນີ້ຈັດເປັນຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກ ເຊິ່ງດີກວ່າແລະປະນີດກວ່າຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກໃນຂໍ້ກ່ອນ ໆ

## ໔. ທິບພະໂສຕະທາດຍານ

[໔໐] ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດຍົວະຍວນປາສະຈາກຄວາມເສົ້າໝອງ ອ່ອນນຸ້ມເໝາະແກ່ການໃຊ້ງານ ຕັ້ງໝັ້ນຢູ່ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນນ້ອມຈິດໄປເພື່ອທິບພະໂສຕະທາດຍານ ໄດ້ຍິນສຽງ ໒ ຊະນິດ ສຽງທິບ ແລະ ສຽງມະນຸດ ທັງຢູ່ໄກ ແລະ ໃກ້ດ້ວຍຫູທິບອັນບໍລິສຸດເໜືອມະນຸດ

[໔໑] ປຽບຄື ຄົນເດີນທາງໄກ ໄດ້ຍິນສຽງກອງ ສຽງຕະໂພນ ສຽງສັງ ສຽງກອງສອງໜ້າ ສຽງກອງຫາງ ກໍເຂົ້າໃຈວ່ານັ້ນແມ່ນສຽງກອງ ສຽງຕະໂພນ ສຽງສັງ ສຽງກອງສອງໜ້າ ສຽງກອງຫາງ ສັນໃດ ເມື່ອຈິດເປັນສະມາທິບໍລິສຸດຜຸດຜ່ອງ ບໍ່ມີກິເລດຍົວະຍວນ ປາສະຈາກຄວາມເສົ້າໝອງ ອ່ອນນຸ້ມເໝາະແກ່ການໃຊ້ງານ ຕັ້ງໝັ້ນບໍ່ຫວັ່ນໄຫວແນວນີ້ ພິກຂຸນ້ອມຈິດໄປເພື່ອທິບພະໂສຕະທາດຍານ ໄດ້ຍິນສຽງ ໒ ຊະນິດ ສຽງທິບ ແລະ ສຽງມະນຸດທັງທີ່ຢູ່ໄກ ແລະ ໃກ້ ດ້ວຍຫູທິບອັນບໍລິສຸດເໜືອມນຸດ ສັນນັ້ນ ຂໍ້ນີ້ ຈັດເປັນຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກ ເຊິ່ງດີກວ່າ ແລະ ປະນີດກວ່າຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກໃນຂໍ້ກ່ອນ ໆ

## ໕. ເຈໂຕປະຣິຍະຍານ

[໔໒] ເມື່ອຈິດເປັນສະມາທິບໍລິສຸດຜຸດຜ່ອງ ບໍ່ມີກິເລດຍົວະຍວນປາສະຈາກຄວາມເສົ້າໝອງ ອ່ອນນຸ້ມເໝາະແກ່ການໃຊ້ງານ ຕັ້ງໝັ້ນຢູ່ບໍ່ຫວັ່ນໄຫວແນວນີ້ ພິກຂຸນ້ອມຈິດໄປເພື່ອເຈໂຕປະຣິຍະຍານ ກໍານົດຮູ້ຈິດຂອງສັດ ແລະ ຄົນອື່ນ ດ້ວຍຈິດຂອງຕົນ ຈິດມີຣາຄະກໍຮູ້ວ່າມີຣາຄະ ຫຼື ປາສະຈາກຣາຄະກໍຮູ້ວ່າປາສະຈາກຣາຄະ ຈິດມີໂທສະກໍຮູ້ວ່າມີໂທສະ ຫຼື ປາສະຈາກໂທສະ ກໍຮູ້ວ່າປາສະຈາກໂທສະ ຈິດມີໂມຫະກໍຮູ້ວ່າມີໂມຫະ ຫຼື ປາສະຈາກໂມຫະ ກໍຮູ້ວ່າປາສະຈາກໂມຫະ ຈິດຫົດຫູ່ກໍຮູ້ວ່າຫົດຫູ່ ຫຼື ຟຸ້ງຊ່ານກໍຮູ້ວ່າຟຸ້ງຊ່ານ ຈິດເປັນມະຫັກຄະຕະກໍຮູ້ວ່າເປັນມະຫັກຄະຕະ ຫຼື ບໍ່ເປັນມະຫັກຄະຕະກໍຮູ້ວ່າບໍ່ເປັນມະຫັກຄະຕະ ຈິດມີຈິດອື່ນຍິ່ງກວ່າກໍຮູ້ວ່າມີຈິດອື່ນຍິ່ງກວ່າ ຫຼື ບໍ່ມີຈິດອື່ນຍິ່ງກວ່າກໍຮູ້ວ່າບໍ່ມີຈິດອື່ນຍິ່ງກວ່າ ຈິດເປັນສະມາທິກໍຮູ້ວ່າເປັນສະມາທິ ຫຼື ບໍ່ເປັນສະມາທິກໍຮູ້ວ່າບໍ່ເປັນສະມາທິ ຈິດຫຼຸດພົ້ນກໍຮູ້ວ່າຫຼຸດພົ້ນ ຫຼື ບໍ່ຫຼຸດພົ້ນກໍຮູ້ວ່າບໍ່ຫຼຸດພົ້ນ

[໔໔໓] ປຽບຄື ຊາຍໜຸ່ມ ຍິງສາວ ທີ່ມັກການແຕ່ງໂຕເມື່ອແຍງເບິ່ງເງົາໜ້າຂອງຕົນໃນແວ່ນໃສສະອາດ ຫຼື ໃນພາຊະນະມີນ້ຳໃສ ເມື່ອແນມເຫັນໜ້າມີໄຝ ຫຼື ຝ້າກໍຮູ້ວ່າມີໄຝຝ້າ ຫຼື ບໍ່ມີໄຝຝ້າ ກໍຮູ້ວ່າບໍ່ມີໄຝຝ້າ ສັນໃດ ເມື່ອຈິດເປັນສະມາທິບໍລິສຸດຜຸດຜ່ອງ ບໍ່ມີກິເລດຍົວະຍວນປາສະຈາກຄວາມເສົ້າໝອງ ອ່ອນນຸ້ມເໝາະແກ່ການໃຊ້ງານຕັ້ງໝັ້ນຢູ່ ບໍ່ຫວັ່ນໄຫວແນວນີ້ ພິກຂຸນ້ອມຈິດໄປເພື່ອເຈໂຕປະຣິຍະຍານ ກຳນົດຮູ້ຈິດຂອງສັດ ແລະ ຄົນອື່ນດ້ວຍຈິດຂອງຕົນ ເມື່ອຈິດມີຣາຄະກໍຮູ້ວ່າມີຣາຄະ ຫຼືປາສະຈາກຣາຄະກໍຮູ້ວ່າປາສະຈາກຣາຄະ ຈິດມີໂທສະກໍຮູ້ວ່າມີໂທສະ ຫຼື ປາສະຈາກໂທສະກໍຮູ້ວ່າປາສະຈາກໂທສະ ຈິດມີໂມຫະກໍຮູ້ວ່າມີໂມຫະ ຫຼື ປາສະຈາກໂມຫະກໍຮູ້ວ່າປາສະຈາກໂມຫະ ຈິດຫົດຫູ່ກໍຮູ້ວ່າຫົດຫູ່ ຫຼື ຟຸ້ງຊ່ານກໍຮູ້ວ່າຟຸ້ງຊ່ານ ຈິດເປັນມະຫັກຄະຕະກໍຮູ້ວ່າເປັນມະຫັກຄະຕະ ຫຼື ບໍ່ເປັນມະຫັຄຄະຕະກໍຮູ້ວ່າບໍ່ເປັນມະຫັກຄະຕະ ຈິດມີຈິດອື່ນຍິ່ງກວ່າກໍຮູ້ວ່າມີຈິດອື່ນຍິ່ງກວ່າ ຫຼື ບໍ່ມີຈິດອື່ນຍິ່ງກວ່າກໍຮູ້ວ່າບໍ່ມີຈິດອື່ນຍິ່ງກວ່າ ຈິດເປັນສະມາທິກໍຮູ້ວ່າເປັນສະມາທິ ຫຼື ບໍ່ເປັນສະມາທິກໍຮູ້ວ່າບໍ່ເປັນສະມາທິ ຈິດຫຼຸດພົ້ນກໍຮູ້ວ່າຫຼຸດພົ້ນ ຫຼື ບໍ່ຫຼຸດພົ້ນກໍຮູ້ວ່າບໍ່ຫຼຸດພົ້ນສັນນັ້ນ ຂໍ້ນີ້ ຈັດເປັນຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກເຊິ່ງດີກວ່າ ແລະ ປະນີດກວ່າຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກໃນຂໍ້ກ່ອນ ໆ

## ໖. ປຸບເພນິວາສານຸດສະຕິຍານ

[໔໔໔] ເມື່ອຈິດເປັນສະມາທິບໍລິສຸດຜຸດຜ່ອງ ບໍ່ມີກິເລດຍົວະຍວນ ປາສະຈາກຄວາມເສົ້າໝອງ ອ່ອນນຸ້ມເໝາະແກ່ການໃຊ້ງານ ຕັ້ງໝັ້ນຢູ່ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນ ນ້ອມຈິດໄປເພື່ອປຸບເພນິວາສານຸດສະຕິຍານ ລະລຶກຊາດກ່ອນໄດ້ຫຼາຍຊາດຄື ໑ ຊາດແດ່ ກໍມີ ໒ ຊາດແດ່ ກໍມີ ໓ ຊາດແດ່ ກໍມີ ໔ ຊາດແດ່ ກໍມີ ໕ ຊາດແດ່ ກໍມີ ໑໐ ຊາດແດ່ ກໍມີ ໒໐ ຊາດແດ່ ກໍມີ ໓໐ ຊາດແດ່ ກໍມີ ໔໐ ຊາດແດ່ ກໍມີ ໕໐ ຊາດແດ່ ກໍມີ ໑໐໐ ຊາດແດ່ ກໍມີ ໑,໐໐໐ ຊາດແດ່ ກໍມີ ໑໐໐,໐໐໐ ຊາດແດ່ ກໍມີ ຕະຫຼອດສັງວັດຕະກັບເປັນຈຳນວນຫຼາຍແດ່ ຕະຫຼອດວິວັດຕະກັບເປັນຈຳນວນຫຼາຍແດ່ ຕະຫຼອດສັງວັຕຕະກັບ ແລະ ວິວັດຕະກັບເປັນຈຳນວນຫຼາຍແດ່ ວ່າ "ໃນພົບນັ້ນເຮົາມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະ ມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນກໍໄປເກີດໃນພົບນັ້ນ ແມ່ນໃນພົບນັ້ນ ເຮົາກໍມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານສະເຫວີຍສຸກທຸກ ແລະ ມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນ ຈຶ່ງມາເກີດໃນພົບນີ້" ພິກຂຸນັ້ນ ລະລຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປ ແລະຊີວະປະຫວັດແນວນີ້

[໔໔໕] ປຽບຄື ຄົນຍ່າງຈາກບ້ານຕົນເອງໄປບ້ານອື່ນ ແລ້ວຈາກບ້ານນັ້ນໄປຫາບ້ານອື່ນອີກ ຈາກບ້ານນັ້ນກັບມາຫາບ້ານຂອງຕົນເອງ ແລ້ວລະລຶກໄດ້ແນວນີ້ວ່າ "ເຮົາໄດ້ຈາກບ້ານຕົນໄປບ້ານນັ້ນ ໃນບ້ານນັ້ນເຮົາໄດ້ ໄດ້ຢືນ ໄດ້ນັ່ງ ໄດ້ເວົ້າ ໄດ້ມິດຢູ່ແນວນັ້ນ ໆ ເຮົາໄດ້ຈາກແມ່ນບ້ານນັ້ນໄປຫາບ້ານນັ້ນ ແມ່ນໃນບ້ານນັ້ນເຮົາກໍໄດ້ ໄດ້ຢືນ ໄດ້ນັ່ງ ໄດ້ເວົ້າ ໄດ້ຫິດຢູ່ແນວນັ້ນ ໆ ແລ້ວກັບຈາກບ້ານນັ້ນກັບມາບ້ານຂອງຕົນເອງ" ສັນໃດ ເມື່ອຈິດເປັນສະມາທິບໍລິສຸດຜຸດຜ່ອງ ບໍ່

ມີກິເລດຍົວະຍວນ ປາສະຈາກຄວາມເສົ້າໝອງ ອ່ອນນຸ້ມເໝາະແກ່ການໃຊ້ງານ ຕັ້ງໝັ້ນຢູ່ ບໍ່ຫວັ່ນໄຫວແນວນີ້ ພິກຂຸນ້ອມຈິດໄປເພື່ອປຸບເພນິວາສານຸດສະຕິຍານ ລະລຶກຊາດກ່ອນໄດ້ຫຼາຍຊາດຄື ໑ ຊາດແດ່ ກໍມີ ໔ ຊາດແດ່ ກໍມີ ໗ລ໗ ຕະຫຼອດສັງວັຕຕະກັບ ແລະ ວິວັດຕະກັບເປັນຈຳນວນຫຼາຍແດ່ວ່າ "ໃນພົບນັ້ນເຮົາມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະ ມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນ ກໍໄປເກີດໃນພົບນັ້ນ ແມ່ນໃນພົບນັ້ນ ເຮົາກໍມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະ ມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນ ຈຶ່ງມາເກີດໃນພົບນີ້" ພິກຂຸນັ້ນ ລະລຶກຊາດກ່ອນໄດ້ຫຼາຍຊາດ ພ້ອມລັກສະນະທົ່ວໄປແລະ ຊີວະປະຫວັດແນວນີ້ ສັນນັ້ນ ຂໍ້ນີ້ ຈັດເປັນຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກເຊິ່ງດີກວ່າ ແລະ ປະນີດກວ່າຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກໃນຂໍ້ກ່ອນ ໆ

## ກ. ທິບພະຈັກຂຸຍານ

[໔໘ຜ] ເມື່ອຈິດເປັນສະມາທິບໍລິສຸດຜຸດຜ່ອງ ບໍ່ມີກິເລດຍົວະຍວນ ປາສະຈາກຄວາມເສົ້າໝອງ ອ່ອນນຸ້ມເໝາະແກ່ການໃຊ້ງານ ຕັ້ງໝັ້ນຢູ່ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນນ້ອມຈິດໄປເພື່ອຈູຕູປະປາຕະຍານ ເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດໃນຊັ້ນຕ່ຳ ແລະ ຊັ້ນສູງ ງາມແລະບໍ່ງາມເກີດດີແລະເກີດບໍ່ດີດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ເຫັນເຖິງໝູ່ສັດຜູ້ເປັນໄປຕາມກຳວ່າ "ໝູ່ສັດທີ່ປະກອບກາຍທຸຈະ ຣິດ ວະຈີທຸຈະຣິດ ແລະ ມະໂນທຸຈະຣິດ ກ່າວຮ້າຍພຣະອະຣິຍະມີຄວາມເຫັນຜິດ ແລະຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຜິດ ເມື່ອພວກເຂົາເຫຼົ່ານັ້ນຫຼັງຈາກຕາຍແລ້ວ ຈະໄປເກີດໃນອະບາຍທຸຄະຕິວິນິບາດນະຣົກ ແຕ່ໝູ່ສັດທີ່ປະກອບກາຍສຸດຈະຣິດ ວະຈີສຸດຈະຣິດ ແລະ ມະໂນສຸດຈະຣິດ ບໍ່ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນດີ ແລະຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນດີນັ້ນ ເມື່ອພວກເຂົາເຫຼົ່ານັ້ນຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະຫວັນ" ທ່ານເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດທັງຊັ້ນຕ່ຳ ແລະ ຊັ້ນສູງງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ເຮັດເຖິງໝູ່ສັດຜູ້ເປັນໄປຕາມກຳແນວນີ້ແລ

[໔໘ກ] ປຽບຄື ຜາສາດທີ່ຕັ້ງຢູ່ໃນທາງສາມແຍກກາງເມືອງຫຼວງ ຄົນຕາດີຢືນເທິງຜາສາດນັ້ນ ເຫັນຜູ້ຄົນກຳລັງຍ່າງເຂົ້າໄປໃນເຮືອນແດ່ ຍ່າງອອກຈາກເຮືອນແດ່ ສັນຈອນຢູ່ຕາມຖະໜົນແດ່ ນັ່ງຢູ່ຂ້າງທາງສາມແຍກກາງເມືອງຫຼວງແດ່ ກໍຮູ້ວ່າ "ຄົນເຫຼົ່ານີ້ເຂົ້າໄປໃນເຮືອນ ຄົນເຫຼົ່ານີ້ອອກຈາກເຮືອນ ຄົນເຫຼົ່ານີ້ສັນຈອນຢູ່ຕາມຖະໜົນ ຄົນເຫຼົ່ານີ້ນັ່ງຢູ່ຂ້າງທາງສາມແຍກກາງເມືອງຫຼວງ" ສັນໃດ ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງບໍ່ມີກິເລດຍົວະຍວນ ປາສະຈາຄວາມເສົ້າໝອງ ອ່ອນນຸ້ມເໝາະແກ່ການໃຊ້ງານ ຕັ້ງໝັ້ນຢູ່ບໍ່ຫວັ່ນໄຫວແນວນີ້ ພິກຂຸນ້ອມຈິດໄປເພື່ອຈູຕູປະປາຕະຍານ ເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດ ເໜືອມະນຸດຮູ້ເຫັນເຖິງໝູ່ສັດ ຜູ້ເປັນໄປຕາມກຳວ່າ

"ໝູ່ສັດທີ່ປະກອບດ້ວຍກາຍທຸຈະຣິດ ວະຈີທຸຈະຣິດ ແລະ ມະໂນທຸຈະຣິດ ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຜິດ ແລະ ຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຜິດນັ້ນ ເມື່ອພວກເຂົາເຫຼົ່ານັ້ນ ຫຼັງຈາກຕາຍແລ້ວຈະໄປບັງເກີດໃນອະບາຍທຸກຄະຕິວິນິບາດນະຣົກ ແຕ່ໝູ່ສັດເຫຼົ່າໃດທີ່ປະກອບດ້ວຍກາຍສຸດຈະຣິດ ວະຈີສຸດຈະຣິດ ແລະມະໂນສຸດຈະຣິດ ບໍ່ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນດີ ແລະ ຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນດີນັ້ນ ເມື່ອພວກເຂົາເຫຼົ່ານັ້ນ ຫຼັງຈາກຕາຍແລ້ວຈະໄປບັງເກີດໃນສຸກຄະຕິໂລກສະຫວັນ" ທ່ານເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດ ເໜືອມະນຸດຮູ້ຊັດເຖິງໝູ່ສັດ ຜູ້ເປັນໄປຕາມກຳແນວນີ້ແລ ສັນນັ້ນ ຂໍ້ນີ້ ຈັດເປັນຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກ ເຊິ່ງດີກວ່າ ແລະ ປະນີດກວ່າ ຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກໃນຂໍ້ກ່ອນ ໆ

## ໗. ອາສະວັກຂະຍະຍານ

[໘໔໗] ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດຍົວະຍວນປາສະຈາກຄວາມເສົ້າໝອງ ອ່ອນນຸ້ມເໝາະແກ່ການໃຊ້ງານ ຕັ້ງໝັ້ນຢູ່ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນນ້ອມຈິດໄປເພື່ອອາສະວັກຂະຍະຍານ ຮູ້ຊັດຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸທັຍ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ ນີ້ອາສະວະ ນີ້ອາສະວະສະມຸທັຍ ນີ້ອາສະວະນິໂຣທະ ນີ້ອາສະວະນິໂຣທະຄາມິນີປະຕິປະທາ" ເມື່ອພິກຂຸນັ້ນຮູ້ເຫັນຢູ່ແນວນີ້ ຈິດຍ່ອມຫຼຸດພົ້ນຈາກກາມາສະວະ ພະວາສະວະ ແລະ ອະວິດຊາສະວະ ເມື່ອຈິດຫຼຸດພົ້ນແລ້ວກໍຮູ້ວ່າຫຼຸດພົ້ນແລ້ວ ຮູ້ຊັດແຈ້ງລົງໄປວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ໄດ້ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ"

[໘໔໘] ປຽບຄື ສະນ້ຳໃສສະອາດບໍ່ຂຸ່ນມົວເທິງຈອມພູ ຄົນຕາດີຢືນຢູ່ຂອບສະນັ້ນສາມາດແນມເຫັນຫອຍໂຂ່ງ ແລະຫອຍກາບກີ້ ຫີນແຮ່ ແລະ ກ້ອນຫີນ ຫຼື ຝູງປາກຳລັງລອຍໄປມາຢູ່ແດ່ ຢຸດຢູ່ແດ່ໃນສະນັ້ນ ກໍຄິດແນວນີ້ວ່າ "ສະນ້ຳນີ້ໃສສະອາດແທ້ນໍ ບໍ່ຂຸ່ນມົວແນມເຫັນຫອຍໂຂ່ງ ແລະຫອຍກາບກີ້ ຫີນແຮ່ ແລະ ກ້ອນຫີນ ຝູງປາເຫຼົ່ານີ້ກຳລັງລອຍຫຼິ້ນໄປມາຢູ່ກໍມີ ຢຸດຢູ່ກໍມີ" ສັນໃດ ເມື່ອຈິດເປັນສະມາທິບໍລິສຸດຜຸດຜ່ອງ ບໍ່ມີກິເລດຍົວະຍວນ ປາສະຈາກຄວາມເສົ້າໝອງ ອ່ອນນຸ້ມເໝາະແກ່ການໃຊ້ງານ ຕັ້ງໝັ້ນຢູ່ບໍ່ຫວັ່ນໄຫວແນວນີ້ ພິກຂຸນ້ອມຈິດໄປເພື່ອອາສະວັກຂະຍະຍານ ຮູ້ຊັດຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸທັຍ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ ນີ້ອາສະວະ ນີ້ອາສະວະສະມຸທັຍ ນີ້ອາສະວະນິໂຣທະ ນີ້ອາສະວະນິໂຣທະຄາມິນີປະຕິປະທາ" ເມື່ອພິກຂຸນັ້ນຮູ້ເຫັນຢູ່ແນວນີ້ຈິດຍ່ອມຫຼຸດພົ້ນຈາກກາມາສາວະແລະອະວິດຊາສາວະ ເມື່ອຈິດຫຼຸດພົ້ນແລ້ວກໍຮູ້ວ່າຫຼຸດພົ້ນແລ້ວ ຮູ້ຊັດແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ທຳກິດທີ່ຄວນທຳສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ"

ສັນນັ້ນ ຂໍ້ນີ້ຈັດເປັນຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກ ເຊິ່ງດີກວ່າ ແລະ ປະນີດກວ່າຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກໃນຂໍ້ກ່ອນ ໆ

ມະຫາບໍພິດ ບໍ່ມີຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກຢ່າງອື່ນ ທີ່ຍອດຢ້ຽມຍິ່ງໄປກວ່ານີ້ ຫຼື ປະນີດ ປະເສີດໄປກວ່າຜົນແຫ່ງຄວາມເປັນສະມະນະທີ່ເຫັນປະຈັກໃນຂໍ້ນີ້ອີກແລ້ວ

## ພຣະເຈົ້າອະຊາຕະສັດຕູຊົງປະກາດພຣະອົງເປັນອຸປາສົກ

[໘໕໐] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ ພຣະເຈົ້າອະຊາດສັດຕູເວເທຫິບຸດໄດ້ຂາບທູນວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ພາສິດຂອງພຣະຜູ້ມີພຣະພາກເຈົ້າຊັດແຈ້ງ ມ່ວນຫຼາຍ ຂ້າແຕ່ ພຣະອົງຜູ້ຈະເລີນ ພາສິດຂອງພຣະຜູ້ມີພຣະພາກເຈົ້າຊັດແຈ້ງມ່ວນຫຼາຍ ພຣະຜູ້ມີພຣະພາກເຈົ້າ ຊົງປະກາດທຳຊັດແຈ້ງໂດຍປະການຕ່າງ ໆ ປຽບຄື ບຸກຄົນຫງາຍຂອງທີ່ງ້ວມຢູ່ ເປີດຂອງທີ່ປິດ ບອກທາງແກ່ຜູ້ຫຼົງທາງ ຫຼື ເຍືອງໄຟໃນທີ່ມືດໂດຍຕັ້ງໃຈວ່າ ຄົນມີຕາດີຈັກເຫັນຮູບໄດ້ ຂ້ານ້ອຍນີ້ ຂໍເຖິງພຣະຜູ້ມີພຣະພາກເຈົ້າ ພ້ອມທັງພຣະທຳ ແລະ ພຣະສົງ ເປັນສະຣະນະ ຂໍພຣະຜູ້ມີພຣະພາກເຈົ້າ ຈົ່ງຊົງຈຳຂ້ານ້ອຍໄວ້ວ່າ ເປັນອຸປາສົກຜູ້ເຖິງສະຣະນະນັບຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ ຂ້າແຕ່ ພຣະອົງຜູ້ຈະເລີນ ຄວາມຜິດໄດ້ຄອບງຳຂ້ານ້ອຍຜູ້ໂງ່ຈ້າເບົາປັນຍາແລ້ວ ທີ່ໄດ້ປົງພຣະຊົນພຣະຣາດຊະບິດາຜູ້ຊົງທຳ ເພາະຕ້ອງການຄວາມເປັນໃຫຍ່ ຂ້າແຕ່ ພຣະອົງຜູ້ຈະເລີນ ຂໍພຣະອົງໂຜດຊົງຮັບຮູ້ຄວາມຜິດນີ້ຂອງຂ້ານ້ອຍຕາມຄວາມເປັນຈິງນີ້ເຖີ້ນ ເພື່ອເປີດໂອກາດໃຫ້ຂ້ານ້ອຍໄດ້ເປັນຜູ້ສັງລວມຕໍ່ໄປ

[໘໕໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຈະເລີນພອນມະຫາບໍພິດ ຄວາມຜິດໄດ້ຄອບງຳພຣະອົງຜູ້ໂງ່ຈ້າເບົາປັນຍາແລ້ວ ທີ່ໄດ້ປົງພຣະຊົນພຣະຣາດຊະບິດາຜູ້ຊົງທຳ ເພາະຕ້ອງການຄວາມເປັນໃຫຍ່ ແຕ່ພຣະອົງຊົງເຫັນຄວາມຜິດນັ້ນວ່າເປັນຄວາມຜິດແລ້ວ ຊົງໄດ້ສາລະພາບຕາມຄວາມເປັນຈິງ ດັ່ງນັ້ນ ອາດຕະມາພາບ ຂໍຮັບຮູ້ຄວາມຜິດນັ້ນຂອງພຣະອົງ ກໍຜູ້ທີ່ເຫັນຄວາມຜິດວ່າເປັນຄວາມຜິດ ແລ້ວສາລະພາບອອກມາຕາມຄວາມເປັນຈິງ ຮັບວ່າຈະສັງລວມຕໍ່ໄປ ວິທີນີ້ເປັນຄວາມຈະເລີນໃນອະຣິຍະວິໄນຂອງພຣະອະຣິຍະເຈົ້າທັງຫຼາຍ

[໘໕໘] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພຣະເຈົ້າອະຊາດສັດຕູເວເທຫິບຸດໄດ້ຂາບທູນວ່າ "ຖ້າແນວນັ້ນ ບັດນີ້ ຂ້ານ້ອຍຂໍທູນລາກັບ ເພາະມີກິດ ມີວຽກ ມີໜ້າທີ່ ທີ່ຈະຕ້ອງເຮັດອີກຫຼາຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຂໍພຣະອົງ ຈົ່ງຊົງກຳນົດເວລາທີ່ສົມຄວນໃນບັດນີ້ເຖີ້ນມະຫາບໍພິດ"

ພຣະເຈົ້າອະຊາດສັດຕູເວເທຫິບຸດ ຊົງຊື່ນຊົມຍິນດີພາສິດຂອງພຣະຜູ້ມີພຣະພາກແລ້ວ ໄດ້ສະເດັດລຸກຈາກທີ່ປະທັບ ຊົງຂາບພຣະຜູ້ມີພຣະພາກ ທຳປະທັກສິນແລ້ວສະເດັດຈາກໄປ

[໘໕໓] ເມື່ອພຣະອົງສະເດັດຈາກໄປບໍ່ດົນ ພຣະຜູ້ມີພຣະພາກເຈົ້າ ຕັດຮຽກພິກຂຸມາຮັບສັ່ງວ່າ "ພິກຂຸທັງຫຼາຍ ພຣະຣາຊາອົງນີ້ ຖືກກຳຈັດເສຍແລ້ວ ຖືກທຳລາຍເສຍແລ້ວ ຫາກພຣະອົງຈັກບໍ່ປົງພຣະຊົນພຣະຣາດຊະບິດາຜູ້ຊົງທຳ ທຳຈັກສຸອັນປາສະຈາກທຸລິຄືກິເລດ ປາສະຈາກມົນທິນ ຈັກເກີດຂຶ້ນແກ່ພຣະອົງໃນທີ່ປະທັບແຫ່ງນີ້

ເມື່ອພຣະຜູ້ມີພຣະພາກເຈົ້າຕັດໄວຍາກະຣະນະພາສິດນີ້ຈົບລົງ ພິກຂຸເຫຼົ່ານັ້ນໄດ້ມີໃຈຍິນດີຕ່າງຊື່ນຊົມໃນພຸດທະພາສິດນັ້ນແລ

**ສາມັນຍະຜົນສູດທີ່ ໘ ຈົບ**

# ໓. ອັມພັດຖະສູດ

## ວ່າດ້ວຍຊາຍໜຸ່ມຊື່ອຳພັດຖະ

[໘໕໔] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ສະເດັດຈາຣິກໄປໃນແຄວ້ນໂກສົນ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ມີປະມານ ໕໐໐ ອົງ ສະເດັດເຖິງໝູ່ບ້ານພາມຊາວໂກສົນຊື່ອິດສານັງຄະລະຄາມປະທັບຢູ່ໃນປ່າອິດສານັງຄະລະວັນໃກ້ອິດສານັງຄະນະຄາມ

## ເລື່ອງພາມໂປກະຂະຣະສາຕິ

[໘໕໕] ສະໄໝນັ້ນ ພາມໂປກະຂະຣະສາຕິປົກຄອງເມືອງອຸກກັດຖະ ເຊິ່ງມີປະຊາກອນແລະສັດລ້ຽງເປັນຈຳຫຼວງຫຼາຍ ມີພືດພັນທັນຍາຫານ ແລະ ນ້ຳ ຫຍ້າອຸດົມສົມບູນເປັນພຣະຣາດຊະຊັບທີ່ພຣະເຈົ້າປະເສນທິໂກສົນ ພຣະຣາດຊະທານປູນບຳເໜັດໃຫ້ເປັນພົມໄທ (ສ່ວນພິເສດ) ພາມໂປກະຂະຣະສາຕິໄດ້ຟັງຂ່າວວ່າ "ທ່ານພຣະສະມະນະໂຄດົມເປັນສັກກະຍະບຸດ ສະເດັດອອກບວດຈາກສາກະຍະຕະກູນ ສະເດັດຈາຣິກຢູ່ໃນແຄວ້ນໂກສົນພ້ອມດ້ວຍພິກຂຸສົງໝູ່ໃຫຍ່ມີປະມານ ໕໐໐ ອົງ ສະເດັດເຖິງອິສານັງຄະນະຄາມໂດຍລຳດັບ ປະທັບຢູ່ໃນປ່າອິສານັງຄະນະວັນໃກ້ອິສານັງຄະນະຄາມ ທ່ານພຣະໂຄດົມນັ້ນມີກິດຕິສັບອັນງາມ ຊ່າລືໄປແບບນີ້ວ່າ ແມ່ນ

ເພາະເຫດນີ້ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງ ໂດຍຊອບ ພຽບພ້ອມດ້ວຍວິດຊາແລະ ຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງຍອດຢ້ຽມ ເປັນສາດສະດາຂອງເທວະດາ ແລະ ມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ພຣະອົງຊົງຮູ້ແຈ້ງໂລກນີ້ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະ ໝູ່ສັດ ພ້ອມທັງສະມະນະພາມ ເທວະດາແລະມະນຸດທັງຫຼາຍ ດ້ວຍພຣະອົງເອງແລ້ວ ຊົງປະກາດໃຫ້ຜູ້ອື່ນຮູ້ນຳ ຊົງສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະ ມີຄວາມງາມໃນທີ່ສຸດ ຊົງປະກາດພົມມະຈັນພ້ອມທັງອັດຖະ ແລະພະຍັນຊະນະ ບໍລິສຸດ ບໍລິບູນຄົບຖ້ວນ ການໄດ້ພົບພຣະອະຣະຫັນທັງຫຼາຍແບບນີ້ເປັນ ຄວາມດີແທ້ແລ

## ເລື້ອງອຳພັດທະມານົບ

[໔໕໖] ເວລານັ້ນ ອຳພັດທະມານົບຜູ້ເປັນລູກສິດຂອງພາມໂປກະຂະຣະສາຕິ ເປັນຜູ້ຄົງແກ່ຮຽນ ຊົງຈຳມົນຈົບໄຕຣເພດພ້ອມທັງນິຄັນຖຸສາດ ເກຕຸບສາດ ອັກສອນສາດ ແລະ ປະຫວັດສາດ ຮູ້ໂຕບົດ ແລະ ໄວຍາກອນ ຊຳນານໂລກາຍະຕະສາດ ແລະ ການທວາຍລັກສະນະມະຫາບຸຣຸດ ອາຈານຍ້ອງຍໍ ແລະ ໂຕເຂົາເອງກໍຍອມຮັບວ່າໂຕເອງຮູ້ໃນວິດຊາ ໓ ປະການທີ່ເປັນຂອງອາຈານຂອງຕົນວ່າເປັນຜູ້ຮູ້ເທົ່າກັນກັບທີ່ອາຈານຮູ້

[໔໕໗] ຄັ້ງນັ້ນ ພາມໂປກະຂະຣະສາຕິໄດ້ຮຽກອຳພັດທະມານົບມາບອກວ່າ "ອຳພັດຖະທ່ານພຣະສະມະນະໂຄດົມພຣະອົງນັ້ນ ເປັນສັກກະຍະບຸດ ສະເດັດອອກບວດຈາກສາກະຍະຕະກູນ ສະເດັດຈາຣິກຢູ່ໃນແຄວັນໂກສົນ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ມີປະມານ ໕໐໐ ອົງ ສະເດັດເຖິງອິດສານັງຄະລະຄາມໂດຍລຳດັບ ປະທັບຢູ່ໃນປ່າອິດສານັງຄະລະວັນໃກ້ອິດສານັງຄະລະຄາມ ທ່ານພຣະໂຄດົມນັ້ນ ມີກິດຕິສັບອັນງາມຊ່າລືໄປແບບນີ້ວ່າ "ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຊອບ ພຽບພ້ອມດ້ວຍວິດຊາ ແລະ ຈາຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງຍອດຢ້ຽມ ເປັນສາດສະ ດາຂອງເທວະດາ ແລະ ມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ພຣະອົງຊົງຮູ້ແຈ້ງໂລກນີ້ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະ ໝູ່ສັດ ພ້ອມທັງສະມະນະພາມ ເທວະດາ ແລະ ມະນຸດ ດ້ວຍພຣະອົງເອງ ແລ້ວຊົງປະກາດໃຫ້ຜູ້ອື່ນຮູ້ນຳ ຊົງສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນທີ່ສຸດ ຊົງປະກາດພົມມະຈັນ ພ້ອມທັງອັດຖະ ແລະ ພະຍັນຊະນະ ບໍລິສຸດບໍລິບູນຄົບຖ້ວນ ການໄດ້ພົບພຣະອະຣະຫັນທັງຫຼາຍແບບນີ້ເປັນຄວາມດີແທ້" ມາເຖີ້ນ ອຳພັດທະມານົບທ່ານຈົ່ງເຂົ້າໄປເຝົ້າພຣະສະມະນະໂຄດົມເຖິງບ່ອນປະທັບ ເມື່ອແລ້ວຈົ່ງພະຍາຍາມທຳຄວາມ

ຮູ້ຈັກພຣະສະມະນະໂຄດົມໃຫ້ໄດ້ ພວກເຮົາຈະໄດ້ຮູ້ຈັກທ່ານພຣະໂຄດົມວ່າ ກິດຕິສັບຂອງທ່ານພຣະໂຄດົມທີ່ຊ່າລືຢູ່ແນວນັ້ນ ແມ່ນມີແທ້ຫຼືບໍ່? ທ່ານພຣະໂຄດົມຊົງເປັນແນວນັ້ນແທ້ຫຼືບໍ່?

[໔໕໗] ອຳພັດທະມານົບຮຽນຖາມວ່າ "ທ່ານຂ້ານ້ອຍ ຕ້ອງເຮັດຢ່າງໃດເຮົາຈຶ່ງຈະຮູ້ຈັກທ່ານພຣະໂຄດົມໄດ້ວ່າ ອັນກິດຕິສັບຂອງທ່ານພຣະໂຄດົມທີ່ຊ່າລືຢູ່ແນວນັ້ນ ແມ່ນມີແທ້ຫຼືບໍ່? ທ່ານພຣະໂຄດົມຊົງເປັນແນວນັ້ນແທ້ຫຼືບໍ່?"

ພາມໂປກະຂະຣະສາຕິຕອບວ່າ "ອຳພັດຖະ ພຣະມະຫາບຸຣຸດຜູ້ປະກອບດ້ວຍລັກສະນະມະຫາບຸຣຸດ ໓໒ ປະການ ທີ່ປາກົດໃນມົນຂອງເຮົານັ້ນ ຍ່ອມມີຄະຕິ ໒ ຢ່າງບໍ່ເປັນຢ່າງອື່ນຄື (໑) ຖ້າຊົງຢູ່ຄອງເຮືອນຈະໄດ້ເປັນພຣະເຈົ້າມະຫາຈັກກະພັດຜູ້ຊົງທຳ ຄອງຣາດໂດຍທຳ ຊົງເປັນໃຫຍ່ໃນແຜ່ນດິນ ມີມະຫາສະມຸດ ໔ ເປັນຂອບເຂດ ເມື່ອຊົງໄດ້ຮັບໄຊຊະນະແລ້ວ ຈະຊົງມີຣາຊະອານາຈັກໝັ້ນຄົງສົມບູນດ້ວຍແກ້ວ (ຣັດຕະນະ) ໗ ປະການ ຄື ຈັກແກ້ວ ຊ້າງແກ້ວ ມ້າແກ້ວ ມະນີແກ້ວ ນາງແກ້ວ ຄະຫະບໍດີແກ້ວ ປະຣິນາຍົກແກ້ວ ແລະ ຈະຊົງມີພຣະຣາຊະບຸດຫຼາຍກວ່າ ໑,໐໐໐ ອົງ ເຊິ່ງລ້ວນແຕ່ກ້າຫານມີຮູບຊົງສົມເປັນວິລະກະສັດ ສາມາດຢ່ຳຍີຄວບຄຸມຣາດຊະສັດຕູໄດ້ທັງໝົດ ພຣະອົງຈະຊົງຊະນະໂດຍທຳ ບໍ່ຕ້ອງໃຊ້ອາດຍາ ຫຼື ສາດຕາວຸດປະຫັດປະຫານສັດຕູ ຄອບຄອງແຜ່ນດິນມີສາຄອນເປັນຂອບເຂດ (໒) ຖ້າພຣະອົງສະເດັດອອກຈາກພຣະຣາດຊະວັງໄປບວດເປັນບັນພະຊິດ ຈະຊົງບັນລຸທຳເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າ ຜູ້ບໍ່ມີກິເລດໃນໂລກ ເຮົາເປັນຜູ້ໃຫ້ມົນ ແຕ່ທ່ານເປັນຜູ້ຮັບມົນ

[໔໕໙] ອຳພັດທະມານົບຮັບຄຳແລ້ວລຸກຈາກບ່ອນນັ່ງ ໄຫວ້ພາມໂປກະຂະຣະສາຕິທຳປະທັກສິນແລ້ວຂຶ້ນຍານພາຫະນະທຽມດ້ວຍລາໄປພ້ອມດ້ວຍມານົບຫຼາຍຄົນ ມຸ່ງໜ້າກົງໄປຫາປ່າອິດສານັງຄະລະວັນ ຈົນສຸດທາງຍານພາຫະນະຈະແລນໄປໄດ້ແລ້ວ ໄດ້ລົງຈາກຍານພາຫະນະຍ່າງເຂົ້າໄປຫາໃນພຣະອາຣາມ

ເວລານັ້ນ ພິກຂຸຫຼາຍອົງ ກຳລັງຍ່າງຈົງກົມຢູ່ກາງແຈ້ງ ອຳພັດທະມານົບເຂົ້າໄປຫາພິກຂຸເຫຼົ່ານັ້ນ ເຖິງທີ່ຈົງກົມແລ້ວຖາມຂຶ້ນວ່າ "ທ່ານຜູ້ຈະເລີນ ເວລານີ້ ທ່ານພຣະໂຄດົມພຣະອົງນັ້ນປະທັບຢູ່ໃສ ພວກເຮົາມານີ້ກໍເພື່ອຈະຂໍເຂົ້າເຝົ້າທ່ານພຣະໂຄດົມພຣະອົງນັ້ນ"

[໔໖໐] ພິກຂຸເຫຼົ່ານັ້ນ ຄິດວ່າ "ອຳພັດທະມານົບຄົນນີ້ ເກີດໃນຕະກູນທີ່ມີຊື່ສຽງ ທັງເປັນສິດຂອງພາມໂປກະຂະຣະສາຕິຜູ້ໂດ່ງດັ່ງ ເມື່ອພຣະຜູ້ມີພຣະພາກເຈົ້າຊົງສົນທະນາກັບກຸນລະບຸດຜູ້ນີ້ຈະບໍ່ໜັກພຣະທັຍ" ຈຶ່ງຕອບໄປວ່າ "ອຳພັດຖະ ນັ້ນ ພຣະວິຫານທີ່ທ່ານເຫັນອັດປະຕູໄວ້ຢູ່ນັ້ນແຫຼະ ທ່ານຈົ່ງຍ່າງໄປຫາພຣະວິຫານນັ້ນ ດ້ວຍສຽງຍ່າງຄ່ອຍ ໆ ເບົາ ໆ ເມື່ອຮອດປະຕູແລ້ວໃຫ້ຢືນຢຸດຢູ່ໜ້າປະຕູ ແລ້ວໃຫ້ສັນຍານດ້ວຍການອະແຮ່ມຂຶ້ນບາດໜຶ່ງກ່ອນແລ້ວຈຶ່ງເຄາະບານປະຕູ ພຣະຜູ້ມີພຣະພາກຈັກຊົງໄຂປະຕູຕອນຮັບທ່ານ ດ້ວຍອາການຢ່າງນີ້.

[໔໖໑] ຕໍ່ມາ ອຳພັດທະມານົບ ຍ່າງເຂົ້າໄປທາງຫາພຣະວິຫານນັ້ນ ດ້ວຍອາການອັນງຽບສະຫງົບ ສັງລວມຍ່າງເຂົ້າໄປ ໃຊ້ສຽງອະແຮ່ມໃຫ້ສັນຍານກ່ອນຈຶ່ງເຄາະບານປະຕູ ພຣະຜູ້ມີພຣະພາກເຈົ້າ ຊົງໄຂປະຕູໃຫ້ອຳພັດທະມານົບ ໆ ພ້ອມດ້ວຍໝູ່ຄະນະທີ່ຕິດຕາມມາພາກັນຍ່າງເຂົ້າໄປໃນວິຫານ ສົນທະນາປາໄສທັກທວາຍກັບພຣະຜູ້ມີພຣະພາກພໍຄຸ້ນເຄີຍດີແລ້ວ ຈຶ່ງພາກັນນັ່ງລົງໃນທີ່ສົມຄວນສ່ວນຂອງຕົນ

ແຕ່ມີອຳພັດທະມານົບຜູ້ດຽວທີ່ຍ່າງແດ່ ຢືນແດ່ ເວົ້າສົນທະນາໄປນຳກັບພຣະຜູ້ມີພຣະພາກເຈົ້າຜູ້ປະທັບນັ່ງຢູ່

[໔໖໔] ພຣະຜູ້ມີພຣະພາກເຈົ້າຕັດຖາມອຳພັດທະມານົບວ່າ "ອຳພັດຖະ ທ່ານເຄີຍສົນທະນາກັບພາມຜູ້ແກ່ ຜູ້ເຖົ້າອາຍຸຫຼາຍກວ່າ ຜູ້ເປັນອາຈານ ແລະ ປາຣະມາຈານດ້ວຍອາການຍ່າງແດ່ ຢືນແດ່ ສົນທະນາໄປນຳກັບເຮົາຜູ້ນັ່ງຢູ່ແນວນີ້ຫຼືບໍ່?"

## ອຳພັດທະມານົບເວົ້າຂົ່ມສາກະຍະວົງວ່າເປັນຄົນຮັບໃຊ້ເທື່ອທີ ໑

[໔໖໕] ອຳພັດທະມານົບຕອບວ່າ "ບໍ່ແມ່ນແນວນັ້ນ ທ່ານພຣະໂຄດົມຄວາມຈິງແລ້ວພາມຜູ້ຍ່າງຢູ່ ຈຶ່ງສົມຄວນສົນທະນາກັບພາມຜູ້ຍ່າງຢູ່ ພາມຜູ້ຢືນ ຈຶ່ງສົມຄວນສົນທະນາກັບພາມຜູ້ຢືນຢູ່ ພາມຜູ້ນັ່ງ ຈຶ່ງສົມຄວນສົນທະນາກັບພາມຜູ້ນັ່ງຢູ່ ພາມຜູ້ນອນຢູ່ ຈຶ່ງສົມຄວນສົນທະນາກັບພາມຜູ້ນອນຢູ່ ແຕ່ຂ້າພະເຈົ້າກຳລັງສົນທະນາກັບສະມະນະຫົວໂລ້ນ ຜູ້ເປັນຄົນຮັບໃຊ້ ເປັນຄົນວັນນະຕ່ຳ (ກັນຫະໂຄດ) ເກີດຈາກພຣະບາດຂອງທ້າວມະຫາພົມ ເຊັ່ນທ່ານພຣະໂຄດົມຢູ່ ຈຶ່ງບໍ່ຈຳເປັນຕ້ອງປະຕິບັດຕາມທຳນຽມນັ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຳພັດຖະ ທ່ານມານີ້ເພາະມີທຸຣະຍາກສົນທະນາທຳ ກໍຄວນລະລຶກເຖິງທຸຣະນັ້ນໄວ້ໃຫ້ດີ ທ່ານທັງຫຼາຍ ອຳພັດທະມານົບຜູ້ນີ້ ບໍ່ໄດ້ຮັບການອົບຮົມ ແຕ່ສຳຄັນຕົນວ່າໄດ້ຮັບການອົບຮົມມາດີ ແທ້ຈິງແລ້ວບໍ່ມີຫຍັງເລີຍ ນອກຈາກມາລະຍາດຂອງຄົນທີ່ບໍ່ໄດ້ຮັບການອົບຮົມ

[໔໖໔] ທັນທີທີ່ຖືກພຣະຜູ້ມີພຣະພາກເຈົ້າຕັດວ່າ ເປັນຄົນບໍ່ໄດ້ຮັບການອົບຮົມອຳພັດທະມານົບກໍຄຽດ ບໍ່ພໍໃຈ ເພື່ອຈະຂົ່ມຂູ່ພຣະຜູ້ມີພຣະພາກ ເພື່ອຈະວ່າຮ້າຍພຣະຜູ້ມີພຣະພາກເຈົ້າຈຶ່ງຄິດວ່າ "ເຮົາຈະເຮັດໃຫ້ພຣະສະມະນະໂຄດົມເສຍຫາຍ" ຈຶ່ງໄດ້ກ່າວແກ່ພຣະຜູ້ມີພຣະພາກເຈົ້າວ່າ "ທ່ານພຣະໂຄດົມ ຄົນຜູ້ເປັນຊາດສາກະຍະດຸຮ້າຍຫຍາບຊ້າ ວູ່ວາມ ເວົ້າລາມປາມເປັນຄົນຮັບໃຊ້ ແຕ່ບໍ່ຍອມສັກກາຣະເຄົາຣົບນັບຖື ບູຊານອບນ້ອມພວກພາມ ການທີ່ຄົນຊາດສາກະຍະ ເຊິ່ງເປັນຄົນດຸຮ້າຍ ຫຍາບຊ້າ ວູ່ວາມ ເວົ້າລາມປາມ ເປັນຄົນຮັບໃຊ້ ບໍ່ຍອມສັກກາຣະເຄົາຣົບນັບຖືບູຊານອບນ້ອມພວກພາມເປັນການບໍ່ເໝາະສົມ ບໍ່ຄວນເລີຍ

ນີ້ເປັນເທື່ອທີ ໑ ທີ່ອຳພັດທະມານົບເວົ້າຂົ່ມສາກະຍະວົງວ່າເປັນຄົນຮັບໃຊ້

## ອຳພັດທະມານົບເວົ້າຂົ່ມສາກະຍະວົງວ່າເປັນຄົນຮັບໃຊ້ເທື່ອທີ ໔

[໔໖໕] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ອຳພັດຖະ ພວກເຈົ້າສາກະຍະໄດ້ເຮັດຜິດອັນໃດຕໍ່ທ່ານ"

ເຂົາທູນຕອບວ່າ "ທ່ານພຣະໂຄດົມ ຄັ້ງໜຶ່ງ ຂ້າພະເຈົ້າເດີນທາງໄປເມືອງກະບິນລະພັດດ້ວຍວຽກຂອງພາມໂປກະຂະຣະສາຕິຜູ້ເປັນອາຈານ ໄດ້ເຂົ້າໄປໃນຫ້ອງພຣະໂຮງຂອງພວກສາກະຍະ ເວລານັ້ນພວກສາກະຍະ ແລະ ສາກະຍະກຸມານຈຳນວນຫຼາຍກຳລັງນັ່ງໃຊ້ນິ້ວມືສະກິດກັນ ຫຍອກລໍ້ຫຼີ້ນກັນຢູ່ເທິງອາສະນະສູງໃນຫ້ອງພຣະໂຮງນັ້ນ ເຫັນວ່າ ນັ້ນ ເປັນການຫົວຂວັນຂ້າພະເຈົ້າຢ່າງແນ່ນອນ ບໍ່ມີໃຜເຊື້ອເຊີນໃຫ້ຂ້າພະເຈົ້ານັ່ງເລີຍ ທ່ານພຣະໂຄດົມ ການທີ່ຄົນຊາດສາກະຍະເຊິ່ງເປັນຄົນດຸຮ້າຍ ຫຍາບຊ້າ ວູ່ວາມ ເວົ້າລາມປາມ ເປັນຄົນຮັບໃຊ້ ບໍ່ຍອມສັກກາຣະເຄົາຣົບນັບຖືບູຊານອບນ້ອມພວກພາມ ເປັນການບໍ່ເໝາະສົມບໍ່ຄວນເລີຍ

ນີ້ເປັນເທື່ອທີ ໔ ທີ່ອຳພັດທະມານົບເວົ້າຂົ່ມສາກະຍະວົງວ່າເປັນຄົນຮັບໃຊ້

## ອຳພັດທະມານົບເວົ້າຂົ່ມສາກະຍະວົງວ່າເປັນຄົນຮັບໃຊ້ເທື່ອທີ ໓

[໔໖໖] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຳພັດຖະ ແມ່ນນາງນົກໄສ້ຍັງເວົ້າໄດ້ຕາມປາດຖະໜາໃນຮັງຂອງຕົນ ກໍນັ້ນເມືອງກະບິນລະພັດເປັນຖິ່ນຂອງພວກສາກະຍະ ທ່ານອຳພັດຖະບໍ່ໜ້າຈະກິນແໜງໃຈສົງໄສເພາະເລື້ອງເລັກໜ້ອຍພຽງເທົ່ານີ້ເລີຍ

ເຂົາກ່າວວ່າ "ທ່ານພຣະໂຄດົມວັນນະ ໔ ເຫຼົ່ານີ້ ຄື ກະສັດ ພາມ ແພດ ແລະ ສູດໃນວັນນະທັງ ໔ ນີ້ ແທ້ຈິງແລ້ວ ໓ ວັນນະ ຄື ກະສັດ ແພດ ສູດ ເປັນຄົນຮັບໃຊ້ຂອງພາມ ການທີ່ຄົນຊາດສາກະຍະ ເຊິ່ງເປັນຄົນດຸຮ້າຍ ຫຍາບຊ້າ ວູ່ວາມ ເວົ້າລາມປາມ ເປັນຄົນຮັບໃຊ້ ບໍ່ຍອມສັກກາຣະເຄົາຣົບນັບຖືບູຊານອບນ້ອມພວກພາມ ເປັນການບໍ່ເໝາະບໍ່ຄວນເລີຍ

ນີ້ເປັນເທື່ອທີ ໓ ທີ່ອຳພັດທະມານົບເວົ້າຂົ່ມສາກະຍະວົງວ່າເປັນຄົນຮັບໃຊ້

## ພຣະພຸດທະດຳຣັດວ່າອຳພັດທະມານົບເປັນລູກຂອງຍິງຮັບໃຊ້

[໔໖໗] ລຳດັບນັ້ນ ພຣະຜູ້ມີພຣະພາກ ຊົງພຣະດຳລິໃນໃຈວ່າ "ອຳພັດທະມານົບຜູ້ນີ້ມັກຢຽດຢາມພວກສາກະຍະຮຸນແຮງວ່າ ເປັນຄົນຮັບໃຊ້ ທາງທີ່ດີເຮົາຄວນຖາມເຖິງຕະກູນມານົບຜູ້ນີ້ເບິ່ງກ່ອນ" ຈຶ່ງຕັດຖາມວ່າ "ອຳພັດຖະທ່ານມີຕະກູນ (ໂຄດ) ເປັນຢ່າງໃດ?"

ເຂົາທູນຕອບວ່າ "ທ່ານພຣະໂຄດົມ ຕະກູລຂອງຜູ້ຂ້າແມ່ນກັນຫາຍະນະຕະກູນ (ກັນຫາຍະນະໂຄດ)

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຳພັດຖະ ເມື່ອທ່ານລະລຶກເຖິງຕະກູນເກົ່າແກ່ຂອງບິດາມານດາຂອງທ່ານເບິ່ງຈະຮູ້ວ່າ ພວກສາກະຍະເປັນລູກເຈົ້າ ແຕ່ທ່ານເປັນລູກຂອງແມ່ຍິງຮັບໃຊ້ຂອງພວກສາກະຍະ ກໍພວກສາກະຍະພາກັນອ້າງເຖິງພຣະເຈົ້າໂອກກາກະຣາດວ່າ ເປັນບັນພະບຸລຸດຂອງຕົນ

ອຳພັດຖະເລື້ອງເຄີຍມີມາແລ້ວ ພຣະເຈົ້າໂອກກາກະຣາດມີພຣະປະສົງຈະພຣະຣາດຊະທານລາດຊະສົມບັດໃຫ້ແກ່ພຣະໂອຣົດຂອງພຣະມະເຫສີຜູ້ເປັນທີ່ໂປດປານ ຈຶ່ງຮັບສັ່ງໃຫ້ເນຣະເທດພຣະຣາດຊະກຸມານທັງ ໔ ພຣະອົງ ມີພຣະອຸກກາມຸກະຣາດຊະກຸມານ ພຣະກອນກັນຖຸຣາດຊະກຸມານ ພຣະຫັດຖີນິກະຣາດຊະກຸມານ ພຣະສີນີປຸຣະຣາດຊະກຸມານອອກຈາກຣາຊະອານາເຂດ ພຣະຣາດຊະກຸມານເຫຼົ່ານັ້ນ ເມື່ອຖືກເນຣະເທດອອກຈາກຣາຊະອານາເຂດແລ້ວ ກໍສະເດັດອອກໄປອາໄສຢູ່ໃນປ່າໄມ້ສາກະໃຫຍ່ແຄມຝັ່ງສະໂບກຂະຣະນີເຊີງພູຫິມະພານ ຊົງຢູ່ຮ່ວມເປັນຜົວເມຍກັນກັບພຣະພະຄິນີຂອງພຣະອົງເອງເພາະຢ້ານວ່າພຣະເຊື່ອຊາດຈະປົນກັບຜູ້ອື່ນ

ຕໍ່ມາ ພຣະເຈົ້າໂອກກາກະຣາດຕັດຖາມໝູ່ອຳມາດຣາດຊະບໍຣິພານວ່າ "ເວລານີ້ພວກກຸມານພາກັນໄປຢູ່ໃສ"

ພວກອຳມາດຣາດຊະບໍຣິພານຂາບທູນວ່າ "ຂ້າແຕ່ ມະຫາຣາດເວລານີ້ ພຣະຣາດຊະກຸມານພຳນັກຢູ່ໃນປ່າໄມ້ສາກະໃຫຍ່ແຄມຝັ່ງສະໂບກຂະຣະນີເຊີງພູຫິມະພານ ຊົງຢູ່ຮ່ວມເປັນຜົວເມຍກັນກັບພຣະພະຄິນີຂອງພຣະອົງເອງ ເພາະຢ້ານພຣະເຊື້ອຊາດຈະປົນກັບຜູ້ອື່ນ"

ພຣະເຈົ້າໂອກກາກະຣາດ ຈຶ່ງຊົງເປ່ງພຣະອຸທານຂຶ້ນວ່າ "ທ່ານທັງຫຼາຍ ພວກກຸມານມີຄວາມສາມາດ (ສາກະຍະ) ພວກກຸມານມີຄວາມສາມາດຍອດຢ້ຽມ (ບໍຣົມມະສາກະຍະ)"

ພວກທີ່ຊື່ວ່າສາກະຍະໄດ້ເກີດມີຂຶ້ນຕັ້ງແຕ່ບັດນັ້ນເປັນຕົ້ນມາ ແລະພຣະເຈົ້າໂອກກາກະຣາດພຣະອົງນັ້ນກໍຄືບັນພະບຸລຸດຂອງພວກສາກະຍະ

ພຣະເຈົ້າໂອກກາກະຣາດມີແມ່ຍິງຮັບໃຊ້ຄົນໜຶ່ງຊື່ທິສາ ນາງໄດ້ໃຫ້ກຳເນີດລູກຊາຍຄົນໜຶ່ງຊື່ກັນຫະ ກັນຫະພໍເກີດມາກໍເວົ້າຂຶ້ນວ່າ "ແມ່ຈົ່ງລ້າງເຮົາ ຈົ່ງໃຫ້ເຮົາອາບນ້ຳ ຈົ່ງປົດເປື້ອງເຮົາຈາກສິ່ງໂສໂຄກນີ້ ເຮົາເກີດມາເພື່ອເປັນປະໂຫຍດແກ່ແມ່" ມະນຸດສະໄໝນັ້ນຮຽກຜີສາດວ່າ "ກັນຫະ (ພວກດຳ) ຄື ກັບທີ່ມະນຸດສະໄໝນີ້ຮຽກຜີວ່າ "ຜີສາດ" ມະນຸດເຫຼົ່ານັ້ນກ່າວກັນວ່າ "ເດັກຄົນນີ້ພໍເກີດມາກໍເວົ້າໄດ້ເລີຍ ກັນຫະເກີດແລ້ວ ຜີສາດເກີດແລ້ວ" ຕະກູນພວກທີ່ຊື່ວ່າກັນ

ຫາຍະນະໄດ້ເກີດຂຶ້ນມານັບຕັ້ງແຕ່ເວລານັ້ນເປັນຕົ້ນມາ ແລະ ເດັກກັນຫະນັ້ນກໍຄືບັນພະບຸລຸດຂອງພວກກັນຫາຍະນະ

ອຳພັດຖະ ເມື່ອທ່ານລະລຶກເຖິງຕະກູນເກົ່າແກ່ຂອງບິດາ ມານດາຂອງທ່ານແລ້ວ ຈະຮູ້ວ່າ ພວກສາກະຍະເປັນລູກເຈົ້າ ແຕ່ທ່ານເປັນລູກຂອງແມ່ຍິງຮັບໃຊ້ຂອງພວກສາກະຍະ

[໔໙໗] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ ມານົບເຫຼົ່ານັ້ນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ທ່ານພຣະໂຄດົມ ຢ່າໄດ້ຢຽດຢາມອຳພັດທະມານົບຮຸນແຮງດ້ວຍຄຳວ່າເປັນລູກຂອງແມ່ຍິງຮັບໃຊ້ເລີຍ ອຳພັດທະມານົບມີຊາດຕະກູນດີ ເປັນລູກຜູ້ມີຕະກູນ ໄດ້ສຶກສາມາຫຼາຍເປັນຄົນເວົ້າມ່ວນ ສະຫຼາດ ແລະ ສາມາດເຈຣະຈາໂຕ້ຕອບກັບທ່ານພຣະໂຄດົມໄດ້

[໔໙໘] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດກັບພວກມານົບເຫຼົ່ານັ້ນວ່າ "ມານົບຖ້າພວກທ່ານຄິດວ່າ" ອຳພັດທະມານົບມີຊາດຕະກູນຕ່ຳ ບໍ່ແມ່ນລູກຜູ້ມີຕະກູນ ສຶກສາມາໜ້ອຍເວົ້າໄປເພາະຄວາມໂງ່ຈ້າ ແລະ ບໍ່ສາມາດເຈຣະຈາໂຕ້ຕອບກັບເຮົາໄດ້" ອຳພັດທະມານົບຈົ່ງຢຸດພວກທ່ານຈົ່ງເຈຣະຈາໂຕ້ຕອບກັບເຮົາແທນ ແຕ່ຫາກພວກທ່ານຄິດວ່າ "ອຳພັດທະມານົບມີຊາດຕະກູນດີ ເປັນລູກຜູ້ມີຕະກູນ ສຶກສາມາຫຼາຍ ເວົ້າມ່ວນ ສະຫຼາດ ແລະສາມາດເຈຣະຈາໂຕ້ຕອບກັບທ່ານພຣະໂຄດົມໄດ້" ພວກທ່ານກໍຈົ່ງຢຸດ ອຳພັດທະມານົບກໍຈົ່ງເຈຣະຈາໂຕ້ຕອບກັບເຮົາຕໍ່ໄປ

ມານົບເຫຼົ່ານັ້ນຂາບທູນວ່າ "ທ່ານພຣະໂຄດົມ ອຳພັດທະມານົບມີຊາດຕະກູນດີເປັນລູກຜູ້ມີຕະກູນ ສຶກສາມາຫຼາຍ ເວົ້າມ່ວນ ສະຫຼາດ ແລະ ສາມາດເຈຣະຈາໂຕ້ຕອບກັບທ່ານພຣະໂຄດົມໄດ້ ພວກຂ້າພະເຈົ້າຈັກຢຸດມິດຢູ່ ອຳພັດທະມານົບຈົ່ງເຈຣະຈາໂຕ້ຕອບກັບທ່ານພຣະໂຄດົມຕໍ່ໄປ□

[໔໗໐] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດກະອຳພັດທະມານົບວ່າ "ອຳພັດຖະບັນຫາອັນຊອບທຳຂໍ້ນີ້ມາເຖິງທ່ານແລ້ວ ທ່ານແມ່ນບໍ່ຕ້ອງການກໍຕ້ອງຕອບ ເພາະຖ້າບໍ່ຕອບຂືນເວົ້າຫຼົບຫຼີກໄປແນວອື່ນກໍດີ ມິດຢູ່ຊື່ ໆ ກໍດີ ຫຼື ໜີໄປກໍດີ ຫົວຂອງທ່ານຈະແຕກອອກເປັນ ໗ ສ່ຽງໃນທີ່ນີ້ ອຳພັດຖະທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ ທ່ານເຄີຍໄດ້ຟັງພວກພາມຜູ້ແກ່ ຜູ້ເຖົ້າ ຜູ້ເປັນອາຈານ ແລະ ປາຣະມາຈານເລົ່າກັນມາແນວໃດ ພວກກັນຫາຍະນະເກີດຈາກໃຜກ່ອນ ໃຜຄືບັນພະບຸລຸດຂອງພວກກັນຫາຍະນະ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດຖາມແນວນີ້ ອຳພັດທະມານົບໄດ້ເສີຍຢູ່ ພຣະຜູ້ມີພຣະພາກໄດ້ຕັດຖາມອີກເປັນເທື່ອທີ ໔ ວ່າ "ອຳພັດຖະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ ທ່ານເຄີຍໄດ້ຟັງພວກພາມຜູ້ແກ່ ຜູ້ເຖົ້າ ຜູ້ເປັນອາຈານ ແລະ ປາຣະມາຈານເລົ່າກັນມາແນວໃດ ພວກກັນຫາຍະນະເກີດຈາກໃຜກ່ອນ ໃຜຄືບັນພະບຸລຸດຂອງພວກກັນຫາຍະນະ"

ແມ່ນເທື່ອທີ ໔ ອຳພັດທະມານົບກໍຍັງຄົງເສີຍຢູ່

ລຳດັບນັ້ນ ພຣະຜູ້ມີພຣະພາກ ຈຶ່ງຕັດວ່າ "ອຳພັດຖະ ທ່ານຈົ່ງຕອບດ່ຽວນີ້ ເວລານີ້ບໍ່ແມ່ນເວລາທີ່ທ່ານຈະເສີຍຢູ່ ເພາະຜູ້ທີ່ຖືກຕະຖາຄົດຖາມບັນຫາອັນຊອບທຳເຖິງ ໓ ຄັ້ງ ຖ້າບໍ່ຍອມຕອບຫົວຂອງເຂົາຜູ້ນັ້ນຈະແຕກເປັນ ໗ ສ່ຽງໃນບ່ອນນີ້ແລ

[໔໗໑] ໃນຂະນະນັ້ນ ມີຍັກວະຊິຣະປານີຖືຄ້ອນເຫຼັກອັນໃຫຍ່ມີໄຟລຸກໂຊດຊ່ວງຢືນຢູ່ໃນອາກາດທາງເທິງ ອຳພັດທະມານົບຄິດ ວ່າ "ຫາກເຮົາອຳພັດທະມານົບນີ້ ຖືກພຣະຜູ້ມີພຣະພາກເຈົ້າຕັດຖາມບັນຫາອັນຊອບທຳເຖິງ ໓ ຄັ້ງ ແຕ່ບໍ່ຍອມຕອບ ຈະຕ້ອງຖືກທຸບຫົວ ແຕກອອກເປັນ ໗ ສ່ຽງໃນບ່ອນນີ້ຢ່າງແນ່ນອນ"

ອັນໜຶ່ງ ມີແຕ່ ພຣະຜູ້ມີພຣະພາກເຈົ້າ ແລະ ອຳພັດທະມານົບເທົ່ານັ້ນ ທີ່ແນມເຫັນຍັກວະຊິຣະປານີຕົນນັ້ນ

[໔໗໔] ເວລານັ້ນ ອຳພັດທະມານົບຕົກໃຈຢ້ານ ຈົນຂົນຫົວລຸກ ຈຶ່ງເຂົ້າໄປໃກ້ຫວັງໃຈວ່າຈະໃຫ້ພຣະຜູ້ມີພຣະພາກເປັນທີ່ປົກປ້ອງ ເປັນທີ່ຄຸ້ມຄອງ ແລະ ເປັນທີ່ຍຶດໜ່ຽວ ໄດ້ທູນຖາມຂຶ້ນວ່າ "ທ່ານພຣະໂຄດົມຕັດຖາມອັນໃດ ໂຜດຕັດຖາມອີກຄັ້ງເຖີ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຳພັດຖະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ ທ່ານເຄີຍໄດ້ຟັງພວກພາມຜູ້ແກ່ຜູ້ເຖົ້າ ຜູ້ເປັນອາຈານ ແລະ ປາຣະມາຈານເລົ່າກັນມາແນວໃດ ພວກກັນຫາຍະນະເກີດຈາກໃຜກ່ອນ ໃຜເປັນບັນພະບຸລຸດຂອງພວກກັນຫາຍະນະ?"

ອຳພັດທະມານົບຂາບທູນຕອບວ່າ "ທ່ານພຣະໂຄດົມ ຂ້າພະເຈົ້າໄດ້ຟັງມາຢ່າງນັ້ນຄືກັນກັບທີ່ທ່ານພຣະໂຄດົມຕັດຖາມນັ້ນແລ ພວກກັນຫາຍະນະເກີດມາຈາກທ້າວກັນຫະ ກ່ອນນັ້ນທ້າວກັນຫະເປັນບັນພະບຸລຸດຂອງພວກກັນຫາຍະນະ"

## ເລື້ອງອຳພັດທະວົງ

[໔໗໓] ເມື່ອອຳພັດທະມານົບຂາບທູນແນວນີ້ ພວກມານົບໄດ້ສົ່ງສຽງອື້ອຶງນອງນັນວ່າ "ໄດ້ຮູ້ວ່າອຳພັດທະມານົບ ມີຊາດຕະກູນຕ່ຳ ບໍ່ແມ່ນລູກຜູ້ມີຕະກູນສູງ ເປັນລູກຍິງຮັບໃຊ້ຂອງພວກສາກະຍະ ໄດ້ຮູ້ວ່າ ພວກສາກະຍະເປັນໂອຣົດຂອງເຈົ້ານາຍຂອງອຳພັດທະມານົບ ແຕ່ພວກເຮົາກັບເຂົ້າໃຈຜິດຄິດໄປວ່າ ທ່ານພຣະສະມະນະໂຄດົມ ຜູ້ເປັນທຳວາທີວ່າ ຄວນຖືກຮຸກຮານ

[໔໗໔] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງພຣະດຳລິແນວນີ້ວ່າ "ມານົບເຫຼົ່ານີ້ຢຽດຢາມອຳພັດທະມານົບຮຸນແຮງວ່າ ເປັນລູກຂອງຍິງຮັບໃຊ້ທາງທີ່ດີເຮົາຄວນຊ່ວຍປົດເປື້ອງ" ຈຶ່ງຕັດກະມານົບເຫຼົ່ານັ້ນວ່າ "ມານົບ ພວກທ່ານຢ່າຢຽດຢາມອຳພັດທະມານົບຮຸນແຮງວ່າ ເປັນລູກຂອງຍິງຮັບໃຊ້ເລີຍ ເພາະທ້າວກັນຫະນັ້ນ ຕໍ່ມາໄດ້ເປັນຣືສີຄົນສຳຄັນ ໄດ້ເດີນທາງໄປສູ່ທັກຂີນາຊົນນະບົດຮຽນພົມມັນຕະຣະ ແລ້ວເຂົ້າເຝົ້າພຣະເຈົ້າໂອກກາກະຣາດ ຂາບທູນຂໍພຣະຣາດຊະທິດາພຣະນາມວ່າມັດທູປີ ພຣະເຈົ້າໂອກກາກະຣາດຊົງໂກດບໍ່ພໍພຣະທັຍຕັດວ່າ "ເຮີ້ຍ ໆ ເຈົ້າຄົນນີ້ມັນເປັນໃຜກັນ ກໍແຄ່ລູກຂອງຍິງຮັບໃຊ້ຈະມາຂໍມັດທູປີທິດາຂອງເຮົາໄດ້ຈັ່ງໃດ" ຈຶ່ງຊົງຂື້ນພຣະແສງສອນງ້າງກຽມຍິງອອກໄປ ແຕ່ບໍ່ອາດຈະຊົງຍິ່ງສອນອອກໄປໄດ້ ແລະ ທັງບໍ່ອາດລຸດຂັນສອນລົງໄດ້ຄ້າງຢູ່ແນວນັ້ນ

ທັນໃດນັ້ນ ໝູ່ອຳມາດຣາດຊະບໍຣິພານເຂົ້າໄປຫາກັນຫະຣືສີກ່າວວ່າ "ຂ້າແຕ່ ທ່ານຜູ້ຈະເລີນ ຂໍໃຫ້ພຣະຣາຊາຈົ່ງຊົງພຣະຈະເລີນ ໆ"

ຣືສີກ່າວວ່າ "ພຣະຣາຊາຈະຊົງ ພຣະຈະເລີນ ແຕ່ຖ້າພຣະຣາຊາຈະຊົງຍິ່ງສອນລົງໄປທາງລຸ່ມແຜ່ນດິນຈະຍຸບຕົວລົງທົ່ວພຣະຣາດຊະອານາເຂດ"

ໝູ່ອຳມາດຣາດຊະບໍຣິພານກ່າວຕື່ມອີກວ່າ "ຂ້າແຕ່ ທ່ານຜູ້ຈະເລີນ ຂໍໃຫ້ພຣະຣາຊາຈົ່ງຊົງພຣະຈະເລີນ ຂໍໃຫ້ບ້ານເມືອງຈົ່ງມີຄວາມປອດໄພ"

ຣືສີກ່າວຂຶ້ນອີກເຊັ່ນກັນວ່າ "ພຣະຣາຊາຈະຊົງພຣະຈະເລີນ ບ້ານເມືອງກໍຈະມີຄວາມປອດໄພ ແຕ່ຖ້າພຣະຣາຊາຈະຊົງຍິ່ງສອນຂຶ້ນໄປທາງເທິງ ຝົນຈະບໍ່ຕົກທົ່ວພຣະຣາດຊະອານາເຂດເປັນເວລາຕະຫຼອດ ໗ ປີ"

ໝູ່ອຳມາດຣາດຊະບໍຣິພານກ່າວຂໍອີກໄປວ່າ "ຂ້າແຕ່ ທ່ານຜູ້ຈະເລີນ ຂໍພຣະຣາຊາຈົ່ງຊົງພຣະຈະເລີນ ຂໍໃຫ້ບ້ານເມືອງຈົ່ງມີຄວາມປອດໄພ ຂໍໃຫ້ຝົນຈົ່ງຕົກຕາມລະດູການເຖີ້ນ"

ຣືສີກ່າວຕອບຂຶ້ນອີກວ່າ "ພຣະຣາຊາຈະຊົງພຣະຈະເລີນ ບ້ານເມືອງຈະມີຄວາມປອດໄພ ຝົນກໍຈະຕົກຕາມລະດູການ ກໍຕໍ່ເມື່ອພຣະຣາຊາຈະຊົງວາງພຣະແສງສອນໄວ້ທີ່ພຣະຣາດຊະກຸມານພຣະອົງໃຫຍ່ ດ້ວຍມຸ້ງພຣະທັຍວ່າ ພຣະຣາດຊະກຸມານຈັກມີຄວາມຈະເລີນ ຈັກຫາຍຈາກຄວາມຫວາດຜະຫວາ"

ໝູ່ອຳມາດຣາດຊະບໍຣິພານ ຂາບທູນພຣະເຈົ້າໂອກກາກະຣາດວ່າ "ຂໍພຣະຣາຊາຊົງວາງພຣະແສງສອນໄວ້ທີ່ພຣະຣາດຊະກຸມານພຣະອົງໃຫຍ່ ດ້ວຍມຸ້ງພຣະທັຍວ່າພຣະຣາດຊະກຸມານຈັກມີຄວາມຈະເລີນ ຈັກຫາຍຈາກຄວາມຢ້ານສັ່ນ"

ພຣະເຈົ້າໂອກກາກະຣາດ ຈຶ່ງຊົງວາງພຣະແສງສອນໄວ້ທີ່ພຣະຣາດຊະກຸມານພຣະອົງໃຫຍ່ ພຣະຣາດຊະກຸມານກໍຊົງເປັນຜູ້ມີຄວາມຈະເລີນ ຫາຍຈາກຄວາມຢ້ານສັ່ນ ພຣະເຈົ້າໂອກກາກະຣາດຊົງຕົກພຣະທັຍ ຢ້ານກົວມີຂົນລຸກຊູຊັນເພາະຖືກຂົ່ມຂູ່ດ້ວຍພົມມະທັນ ຈຶ່ງໄດ້ພຣະຣາດຊະທານພຣະນາງມັດທູປີຣາດຊະທິດາແກ່ຣືສີນັ້ນໄປ

ມານົບ ພວກທ່ານຢ່າຢຽດຢາມ ອຳພັດທະມານົບຮຸນແຮງດ້ວຍຄຳວ່າເປັນລູກຂອງຍິງຮັບໃຊ້ເລີຍ ເພາະທ້າວກັນຫະນັ້ນໄດ້ເຄີຍເປັນຣືສີຄົນສຳຄັນມາແລ້ວ

## ຄວາມເປັນກະສັດປະເສີດທີ່ສຸດ

[໔໗໕] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດກັບອຳພັດທະມານົບວ່າ "ອຳພັດຖະທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ ຖ້າຫາກວ່າຂັດຕິຍະກຸມານໃນໂລກນີ້ຢູ່ຮ່ວມກັບນາງພາມມະນະກັນຍາຈົນມີບຸດ ບຸດທີ່ເກີດຈາກນາງພາມມະນະກັນຍາກັບຂັດຕິຍະກຸມານຄວນຈະໄດ້ນັ່ງຮ່ວມກັນ ຫຼື ກິນດື່ມຮ່ວມກັນ ກັບພວກພາມແດ່ຫຼືບໍ່?"

"ເຂົາຂາບທູນວ່າ "ຄວນຈະໄດ້ ທ່ານພຣະໂຄດົມ"

"ພາມ ຄວນຈະເຊີນເຂົາໃຫ້ມາບໍລິໂພກໃນງານລ້ຽງ ເພື່ອຜູ້ຕາຍ ງານມຸງຄຸນ ງານພິທີຍັນ ຫຼື ງານລ້ຽງແຂກແດ່ຫຼືບໍ່?"

"ຄວນເຊີນໃຫ້ມາບໍລິໂພກ"

"ພາມ ຄວນຈະບອກມົນໃຫ້ເຂົາຫຼືບໍ່?"

"ຄວນຈະບອກ"

"ເຂົາຄວນຖືກຫ້າມກ່ຽວຂ້ອງກັບສະຕີຫຼືບໍ່?"

"ບໍ່ຄວນຖືກຫ້າມ"

"ເຂົາຄວນຈະໄດ້ຮັບອະພິເສກເປັນກະສັດຫຼືບໍ່?"

"ບໍ່ຄວນຈະໄດ້ຮັບ"

"ຂໍ້ນັ້ນເພາະເຫດໃດ"

"ເພາະເຂົາບໍ່ບໍລິສຸດດ້ວຍສາຍເລືອດທາງມານດາ"

"ອຳພັດຖະທ່ານເຂົ້າໃຈເລື້ອງນັ້ນວ່າຢ່າງໃດ ພາມມະນະກຸມານໃນໂລກນີ້ຢູ່ຮ່ວມກັບນາງຂັດຕິຍະກັນຍາຈົນມີບຸດ ບຸດທີ່ເກີດຈາກນາງຂັດຕິຍະກັນລະຍາກັບພາມມະນະກຸມານຄວນຈະໄດ້ນັ່ງຮ່ວມກັນ ຫຼື ກິນດື່ມຮ່ວມກັນກັບພວກພາມແດ່ຫຼືບໍ່?"

"ຄວນຈະໄດ້ ທ່ານພຣະໂຄດົມ"

"ພາມຄວນຈະເຊີນເຂົາໃຫ້ມາບໍລິໂພກໃນງານລ້ຽງ ເພື່ອຜູ້ຕາຍ ງານມຸງຄຸນ ງານຍັນພິທີ ຫຼືງານລ້ຽງແຂກແດ່ຫຼືບໍ່"

"ຄວນເຊີນໃຫ້ມາບໍລິໂພກ"

"ພາມຄວນຈະບອກມົນໃຫ້ເຂົາຫຼືບໍ່?"

"ຄວນຈະບອກ"

"ເຂົາຄວນຖືກຫ້າມກ່ຽວຂ້ອງກັບສະຕີຫຼືບໍ່?"

"ບໍ່ຄວນຖືກຫ້າມ"

"ເຂົາຄວນຈະໄດ້ຮັບອະພິເສກເປັນກະສັດຫຼືບໍ່?"

"ບໍ່ຄວນຈະໄດ້ຮັບ"

"ຂໍ້ນັ້ນເພາະເຫດໃດ?"

"ເພາະສາຍເລືອດເຂົາບໍ່ບໍລິສຸດທາງບິດາ"

[໔໗໖] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຳພັດຖະ ເມື່ອທຽມຍິງກັບຍິງ ທຽມຊາຍກັບຊາຍ ກະສັດພວກດຽວເທົ່ານັ້ນທີ່ຈັດວ່າປະເສີດ ພາມຈັດວ່າຕ່ຳກວ່າ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ? ພວກພາມໃນໂລກນີ້ແຖຫົວພາມຄົນໜຶ່ງ ມອມໄມ້ກ້ານເຖົ່າໃຫ້ແລ້ວເນຣະເທດອອກຈາກແວ່ນແຄວ້ນ ຫຼືຈາກເມືອງ ເພາະຄວາມຜິດບາງຢ່າງ ພາມຄົນນັ້ນຄວນຈະໄດ້ນັ່ງຮ່ວມກັນ ຫຼື ກິນດື່ມຮ່ວມກັນກັບພວກພາມແດ່ຫຼືບໍ່?"

"ບໍ່ຄວນໄດ້ ທ່ານພຣະໂຄດົມ"

"ພາມຄວນຈະເຊີນເຂົາໃຫ້ມາບໍລິໂພກໃນງານລ້ຽງ ເພື່ອຜູ້ຕາຍ ງານມຸງຄຸນ ງານຍັນພິທີ ຫຼືງານລ້ຽງແຂກແດ່ຫຼືບໍ່?"

"ບໍ່ຄວນເຊີນໃຫ້ມາບໍລິໂພກ"

"ພາມຄວນຈະບອກມົນໃຫ້ເຂົາຫຼືບໍ່?"

"ບໍ່ຄວນບອກ"

"ເຂົາຄວນຖືກຫ້າມກ່ຽວຂ້ອງກັບສະຕີຫຼືບໍ່?"

"ຄວນຖືກຫ້າມ"

ອຳພັດຖະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ? ພວກກະສັດໃນໂລກນີ້ປົງພຣະເກສາກະສັດອົງໜຶ່ງແລ້ວ ມອມໄມ້ການເຖົ່າໃຫ້ເນຣະເທດອອກຈາກແວ່ນແຄວ້ນ ຫຼື ຈາກເມືອງເພາະຄວາມຜິດບາງຢ່າງ ກະສັດອົງນັ້ນ ຄວນຈະໄດ້ນັ່ງຮ່ວມ ຫຼື ກິນດື່ມຮ່ວມກັນກັບພວກພາມແດ່ຫຼືບໍ່?"

"ຄວນຈະໄດ້ ທ່ານພຣະໂຄດົມ"

"ພາມຄວນຈະເຊີນເຂົາໃຫ້ມາບໍລິໂພກໃນງານລ້ຽງເພື່ອຜູ້ຕາຍ ງານມຸງຄຸນ ງານຍັນພິທີ ຫຼື ງານລ້ຽງແຂກແດ່ຫຼືບໍ່?"

"ຄວນເຊີນໃຫ້ມາບໍລິໂພກ"

"ພາມຄວນຈະບອກມົນໃຫ້ເຂົາຫຼືບໍ່?"

"ຄວນຈະບອກ"

"ເຂົາຄວນຖືກຫ້າມກ່ຽວຂ້ອງກັບສະຕີຫຼືບໍ່?"

"ບໍ່ຄວນຖືກຫ້າມ"

[໔໗໗] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຳພັດຖະ ກະສັດທີ່ຖືກກະສັດນຳກັນປົງພຣະເກສາມອມໄມ້ກ້ານເຖົ່າໃຫ້ແລ້ວ ເນຣະເທດອອກຈາກແວ່ນແຄວ້ນ ຫຼື ຈາກເມືອງຊື່ວ່າເປັນຜູ້ເຖິງຄວາມຕົກຕ່ຳຢ່າງຍິ່ງ ກະສັດເມື່ອເຖິງຄວາມຕົກຕ່ຳຢ່າງຍິ່ງແນວນີ້ ກໍຍັງຈັດວ່າປະເສີດຢູ່ ພາມຕ່າງຫາກທີ່ຍັງຕ່ຳກວ່າ ສົມດັ່ງຄາຖາທີ່ສະນັງກຸມານພົມກ່າວໄວ້ວ່າ"

"ໃນໝູ່ຊົນທີ່ຖືຕະກູນເປັນໃຫຍ່ ກະສັດຈັດວ່າປະເສີດທີ່ສຸດ ສ່ວນທ່ານຜູ້ພຽບພ້ອມດ້ວຍວິດຊາ ແລະຈະຣະນະຈັດວ່າ ເປັນຜູ້ປະເສີດທີ່ສຸດໃນໝູ່ເທວະດາ ແລະ ມະນຸດ"

"ອຳພັດຖະສະນັງກຸມານພົມກ່າວຄາຖານັ້ນໄວ້ດີ ບໍ່ແມ່ນບໍ່ດີໄດ້ກ່າວໄວ້ສຳຜັດຖືກ ບໍ່ແມ່ນບໍ່ສຳຜັດຖືກ ມີປະໂຫຍດ ບໍ່ແມ່ນບໍ່ມີປະໂຫຍດ ເຮົາເຫັນນຳ ແມ່ນເຮົາກໍຈະກ່າວຢ່າງດຽວກັນນັ້ນວ່າ"

ໃນໝູ່ຊົນທີ່ຖືຕະກູນເປັນໃຫຍ່ ກະສັດຈັດວ່າປະເສີດທີ່ສຸດ ສ່ວນທ່ານຜູ້ພຽບພ້ອມດ້ວຍວິດຊາ ແລະຈະຣະນະຈັດວ່າ ເປັນຜູ້ປະເສີດທີ່ສຸດໃນໝູ່ເທວະດາ ແລະ ມະນຸດ"

## ເລື້ອງວິດຊາແລະຈະຣະນະ

[໔໗໘] ອຳພັດທະມານົບທູນຖາມວ່າ "ທ່ານພຣະໂຄດົມກໍຈະຣະນະນັ້ນ ເປັນແນວໃດ? ວິດຊານັ້ນເປັນແນວໃດ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອຳພັດຖະ ໃນວິດຊາສົມບັດ ແລະ ຈະຣະນະສົມບັດອັນເປັນຄຸນຍອດຢ້ຽມ ບໍ່ອ້າງຊາດ ບໍ່ອ້າງຕະກູນ ຫຼື ບໍ່ອ້າງຄວາມຖືໂຕວ່າ ທ່ານຄູ່ຄວນກັບເຮົາ ຫຼື ທ່ານບໍ່ຄູ່ຄວນກັບເຮົາ ແຕ່ໃນທີ່ທີ່ມີອາວາຫະມຸງຄຸນ ວິວາຫະມຸງຄົນ ຫຼື ອາວາຫະມຸງຄຸນ ແລະ ວິວາຫະມຸງຄົນ ເຂົາຈຶ່ງອ້າງຊາດ ອ້າງຕະກູນ ຫຼື ອ້າງຄວາມຖືໂຕວ່າ ທ່ານຄູ່ຄວນກັບເຮົາ ຫຼື ທ່ານບໍ່ຄູ່ຄວນກັບເຮົາ ອຳພັດຖະຊົນທີ່ຍຶດຕິດເພາະອ້າງຊາດ ຍຶດຕິດເພາະອ້າງຕະກູນ ຍຶດຕິດເພາະອ້າງຄວາມຖືໂຕ ຫຼືຍຶດຕິດຢູ່ກັບອາວາຫະມຸງຄຸນ ແລະ ວິວາຫະມຸງຄົນ ຊື່ວ່າ ຍັງຢູ່

ຫ່າງໄກຈາກວິດຊາສົມບັດ ແລະ ຈະຣະນະສົມບັດ ອັນເປັນຄຸນຍອດຢ້ຽມ ອຳພັດຖະ ການເຮັດໃຫ້ແຈ້ງວິດຊາສົມບັດ ແລະ ຈະຣະນະສົມບັດ ອັນເປັນຄຸນຍອດຢ້ຽມຍ່ອມມີໄດ້ ເພາະລະການຢຶດຕິດເພາະອ້າງຊາດ ການຢຶດຕິດເພາະອ້າງຕະກູນການ ຢຶດຕິດເພາະອ້າງຄວາມຖືໂຕ ແລະການຢຶດຕິດຢູ່ກັບອາວາຫະມຸງຄຸນ ແລະ ວິວາຫະມຸງຄົນແລ້ວເທົ່ານັ້ນ"

[໘໗໙] ອຳພັດທະມານົບທູນຖາມວ່າ "ທ່ານພຣະໂຄດົມ ຈະຣະນະນັ້ນເປັນແນວໃດ? ວິດຊານັ້ນເປັນແນວໃດ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ຕະຖາຄົດອຸບັດຂຶ້ນມາໃນໂລກນີ້ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍຕົນເອງໂດຍຊອບ ຯລຯ (ເພິ່ງນຳຂໍ້ຄວາມເຕັມໃນສາມັນຍະຜົນສູດມາໃສ່ໄວ້ໃນທີ່ນີ້)

ພິກຂຸນັ້ນ ສະຫງັດຈາກກາມ ແລະ ອະກຸສົນທຳທັງຫຼາຍ ແລ້ວບັນລຸປະຖົມມະຊານທີ່ມີວິຕົກ ວິຈານ ປິຕິ ແລະ ສຸກອັນເກີດຈາກວິເວກຢູ່ ຯລຯ ຂໍ້ນີ້ຈັດເປັນຈະຣະນະຢ່າງໜຶ່ງຂອງພິກຂຸນັ້ນ

ຍັງມີອີກ ອຳພັດຖະ ເພາະວິຕົກວິຈານສະຫງົບລະງັບໄປ ພິກຂຸບັນລຸທຸຕິຍະຊານມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນມາ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປິຕິ ແລະ ສຸກອັນເກີດຈາກສະມາທິຢູ່ ຯລຯ ຂໍ້ນີ້ຈັດເປັນຈະຣະນະຢ່າງໜຶ່ງຂອງພິກຂຸນັ້ນ

ຍັງມີອີກອຳພັດຖະ ເພາະປິຕິຈາງຄາຍໄປ ພິກຂຸມີອຸເປກຂາ ມີສະຕິສຳປະຊັນຍະສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານ ທີ່ ພຣະອະຣິຍະທັງຫຼາຍສັນລະເສີນວ່າ ຜູ້ມີອຸເປກຂາມີສະຕິຢູ່ເປັນສຸກ ຯລຯ ຂໍ້ນີ້ຈັດເປັນຈະຣະນະຢ່າງໜຶ່ງຂອງພິກຂຸນັ້ນ

ຍັງມີອີກອຳພັດຖະ ເພາະລະສຸກ ແລະ ທຸກໄດ້ ເພາະໂສມະນັດ ແລະ ໂທມະນັດດັບໄປກ່ອນ ແລ້ວພິກຂຸບັນລຸຈະຕຸດຖະຊານທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດ ເພາະອຸເປກຂາຢູ່ ຯລຯ ຂໍ້ນີ້ຈັດເປັນຈະຣະນະຢ່າງໜຶ່ງຂອງພິກຂຸນັ້ນ

ເມື່ອຈິດເປັນສະມາທິບໍລິສຸດຜຸດຜ່ອງ ບໍ່ມີກິເລດຍົວະຍວນ ປາສະຈາກຄວາມເສົ້າໝອງອ່ອນນຸ້ມ ເໝາະແກ່ການໃຊ້ງານ ຕັ້ງໝັ້ນຢູ່ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນ ນ້ອມຈິດໄປເພື່ອຍານະທັດສະນະ ຯລຯ ຂໍ້ນີ້ ຈັດເປັນວິດຊາຢ່າງໜຶ່ງຂອງພິກຂຸນັ້ນ

ຯລຯ ຮູ້ຊັດແຈ້ງວ່າ ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ ຂໍ້ນີ້ຈັດເປັນວິດຊາຢ່າງໜຶ່ງຂອງພິກຂຸນັ້ນ

"ອຳພັດຖະທີ່ສະແດງມາທັງໝົດນີ້ຈັດເປັນວິດຊາ"

ອຳພັດຖະ ພິກຂຸຜູ້ປະຕິບັດແນວນີ້ຮຽກວ່າ ຜູ້ພຽບພ້ອມດ້ວຍວິດຊາແດ່ ວ່າເປັນຜູ້ພຽບພ້ອມດ້ວຍຈະຣະນະແດ່ ວ່າເປັນຜູ້ພຽບພ້ອມດ້ວຍວິດຊາ ແລະ ຈະຣະນະແດ່ ອຳພັດຖະວິດຊາສົມບັດ ແລະຈະຣະນະສົມບັດຢ່າງອື່ນ ເຊິ່ງເໜືອກວ່າ ແລະ ປະນີດກວ່າວິດຊາສົມບັດ ແລະ ຈະຣະນະສົມບັດນີ້ ບໍ່ມີອີກແລ້ວ

"ທາງເສື່ອມ ໔ ປະການແຫ່ງວິດຊາສົມບັດ ແລະ ຈະຣະນະສົມບັດ"

[໔໗໐] ອຳພັດຖະວິດຊາສົມບັດ ແລະ ຈະຣະນະສົມບັດອັນຍອດຢ້ຽມນີ້ ມີທາງເສື່ອມຢູ່ ໔ ປະການ ໔ ປະການນັ້ນ ມີອັນໃດແດ່? ມີຄື

(໑) ສະມະນະ ຫຼື ພາມລາງຄົນໃນໂລກນີ້ ເມື່ອຍັງບໍ່ບັນລຸວິດຊາສົມບັດ ແລະຈະຣະນະສົມບັດອັນຍອດຢ້ຽມນີ້ ຈຶ່ງຫາບຫີ້ວບໍຣິຂານຂອງດາບົດເຂົ້າໄປສູ່ປ່າ ດ້ວຍຕັ້ງໃຈວ່າຈັກບໍລິໂພກແຕ່ໝາກໄມ້ທີ່ຫຼົ່ນຕົກລົງມາ ເຂົາປາດຖະໜາພຽງແຕ່ເປັນຜູ້ຮັບໃຊ້ຂອງທ່ານທີ່ພຽບພ້ອມດ້ວຍວິດຊາ ແລະ ຈະຣະນະເທົ່ານັ້ນ ຂໍ້ນີ້ເປັນທາງເສື່ອມປະການທີ່ ໑ ແຫ່ງວິດຊາສົມບັດ ແລະ ຈະຣະນະສົມບັດອັນຍອດຢ້ຽມ

(໒) ອີກຢ່າງໜຶ່ງ ສະມະນະ ຫຼື ພາມລາງຄົນໃນໂລກນີ້ ເມື່ອຍັງບໍ່ບັນລຸວິດຊາສົມບັດ ແລະຈະຣະນະສົມບັດ ອັນຍອດຢ້ຽມນີ້ ທັງບໍ່ສາມາດຈະຫາໝາກໄມ້ທີ່ຫຼົ່ນລົງມາບໍລິໂພກໄດ້ ຈຶ່ງຖືສຽມ ແລະ ກະຕ່າເຂົ້າໄປສູ່ປ່າດ້ວຍຕັ້ງໃຈວ່າ ຈັກບໍລິໂພກເຫງົ້າຮາກໄມ້ ແລະ ໝາກໄມ້ ເຂົາປາດຖະໜາພຽງແຕ່ເປັນຜູ້ຮັບໃຊ້ຂອງທ່ານທີ່ພຽບພ້ອມດ້ວຍວິດຊາ ແລະ ຈະຣະນະເທົ່ານັ້ນ ຂໍ້ນີ້ເປັນທາງເສື່ອມປະການທີ່ ໒ ແຫ່ງວິດຊາສົມບັດ ແລະ ຈະຣະນະສົມບັດອັນຍອດຢ້ຽມ

(໓) ອີກຢ່າງໜຶ່ງ ສະມະນະ ຫຼື ພາມລາງຄົນໃນໂລກນີ້ ເມື່ອຍັງບໍ່ບັນລຸວິດຊາສົມບັດ ແລະຈະຣະນະສົມບັດອັນຍອດຢ້ຽມນີ້ ບໍ່ສາມາດຈະຫາໝາກໄມ້ທີ່ຫຼົ່ນມາບໍລິໂພກໄດ້ ທັງບໍ່ສາມາດຈະຫາເຫງົ້າຮາກໄມ້ ແລະ ໝາກໄມ້ບໍລິໂພກໄດ້ ຈຶ່ງສ້າງເຮືອນໄຟໄວ້ໃກ້ບ້ານ ຫຼື ນິຄົມແລ້ວບູຊາໄຟຢູ່ ເຂົາປາດຖະໜາພຽງແຕ່ເປັນຜູ້ຮັບໃຊ້ທ່ານທີ່ພຽບພ້ອມດ້ວຍວິດຊາ ແລະຈະຣະນະເທົ່ານັ້ນ ຂໍ້ນີ້ເປັນທາງເສື່ອມປະການທີ່ ໓ ແຫ່ງວິດຊາສົມບັດ ແລະຈະຣະນະສົມບັດອັນຍອດຢ້ຽມ

(໔) ອີກຢ່າງໜຶ່ງ ສະມະນະ ຫຼື ພາມລາງຄົນໃນໂລກນີ້ ເມື່ອຍັງບໍ່ບັນລຸວິດຊາສົມບັດ ແລະຈະຣະນະສົມບັດອັນຍອດຢ້ຽມນີ້ ບໍ່ສາມາດຈະຫາໝາກໄມ້ທີ່ຫຼົ່ນມາບໍລິໂພກໄດ້ ບໍ່ສາມາດຫາເຫງົ້າຮາກ ແລະໝາກໄມ້ມາບໍລິໂພກໄດ້ ທັງບໍ່ສາມາດຈະບູຊາໄຟໄດ້ ຈຶ່ງສ້າງເຮືອນມີປະຕູ

໔ ຂ້າງ ຕັ້ງໄວ້ໃນທາງໃຫຍ່ສີ່ແພ່ງແລ້ວພັກຢູ່ດ້ວຍຕັ້ງໃຈວ່າ ເຮົາຈະບູຊາທ່ານຜູ້ທີ່ເດີນທາງມາຈາກທິດທັງ ໔ ຕາມສະຕິກຳລັງ ບໍ່ວ່າຜູ້ນັ້ນຈະເປັນສະມະນະ ຫຼືພາມກໍຕາມ ເຂົາປາດຖະໜາພຽງແຕ່ເປັນຜູ້ຮັບໃຊ້ຂອງທ່ານທີ່ພຽບພ້ອມດ້ວຍວິດຊາ ແລະ ຈາຣະນະເທົ່ານັ້ນ ຂໍ້ນີ້ເປັນທາງເສື່ອມປະການທີ່ ໔ ແຫ່ງວິດຊາສົມບັດ ແລະຈະຣະນະສົມບັດອັນຍອດຢ້ຽມ

"ອຳພັດຖະວິດຊາສົມບັດ ແລະຈະຣະນະສົມບັດອັນຍອດຢ້ຽມ ມີທາງເສື່ອມຢູ່ ໔ ປະການແນວນີ້ແລ"

[໔໗໑] ອຳພັດຖະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ ທ່ານກັບອາຈານປາກົດມີໃນ ວິດຊາສົມບັດ ແລະ ຈະຣະນະສົມບັດອັນຍອດຢ້ຽມນີ້ແດ່ຫຼືບໍ່?

ເຂົາຂາບທູນວ່າ "ບໍ່ປາກົດມີເລີຍທ່ານພຣະໂຄດົມ ຂ້າພະເຈົ້າກັບອາຈານປະຕິບັດໄປທາງໜຶ່ງ ວິດຊາສົມບັດ ແລະຈະຣະນະສົມບັດອັນຍອດຢ້ຽມນັ້ນຢູ່ອີກທາງໜຶ່ງ ຂ້າພະເຈົ້າກັບອາຈານຍັງຢູ່ຫ່າງໄກຈາກວິດຊາສົມບັດ ແລະ ຈະຣະນະສົມບັດອັນຍອດຢ້ຽມນີ້

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ອຳພັດຖະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ ທ່ານກັບອາຈານ ເມື່ອຍັງບໍ່ບັນລຸວິດຊາສົມບັດ ແລະ ຈະຣະນະສົມບັດອັນຍອດຢ້ຽມນີ້ ກໍຫາບຫີ້ວບໍຣິຂານຂອງດາບົດເຂົ້າໄປສູ່ປ່າ ດ້ວຍຕັ້ງໃຈວ່າຈັກບໍລິໂພກໝາກໄມ້ຫຼົ່ນແນວນັ້ນຫຼືບໍ?

"ບໍ່ໄດ້ເປັນແນວນັ້ນເລີຍທ່ານພຣະໂຄດົມ"

ອຳພັດຖະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ ທ່ານກັບອາຈານເມື່ອຍັງບໍ່ບັນລຸວິດຊາສົມບັດ ແລະຈະຣະນະສົມບັດ ອັນຍອດຢ້ຽມນີ້ ທັງບໍ່ສາມາດຈະຫາໝາກໄມ້ທີ່ຫຼົ່ນ ບໍລິໂພກໄດ້ກໍຖືສຽມ ແລະກະຕ່າເຂົ້າໄປສູ່ປ່າດ້ວຍຕັ້ງໃຈວ່າ ຈັກບໍລິໂພກເຫງົ້າຮາກແລະໝາກໄມ້ແນວນັ້ນຫຼື?

"ບໍ່ໄດ້ເປັນແນວນັ້ນເລີຍ ທ່ານພຣະໂຄດົມ"

ອຳພັດຖະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ ທ່ານກັບອາຈານ ເມື່ອຍັງບໍ່ບັນລຸວິດຊາສົມບັດ ແລະ ຈະຣະນະສົມບັດອັນຍອດຢ້ຽມນີ້ ບໍ່ສາມາດຈະຫາໝາກໄມ້ທີ່ຫຼົ່ນບໍລິໂພກໄດ້ ທັງບໍ່ສາມາດຈະຫາເຫງົ້າຮາກ ແລະ ໝາກໄມ້ບໍລິໂພກໄດ້ ກໍສ້າງເຮືອນໄຟໄວ້ໃກ້ບ້ານ ຫຼື ນິຄົມແລ້ວບູຊາໄຟແນວນັ້ນຫຼືບໍ່?

"ບໍ່ໄດ້ເປັນແນວນັ້ນເລີຍທ່ານພຣະໂຄດົມ"

ອຳພັດຖະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ ທ່ານກັບອາຈານ ເມື່ອຍັງບໍ່ບັນລຸວິດຊາສົມບັດແລະຈະຣະນະສົມບັດ ອັນຍອດຢ້ຽມນີ້ ບໍ່ສາມາດຈະຫາໝາກໄມ້ທີ່ຫຼົ່ນບໍລິໂພກໄດ້ ບໍ່ສາມາດ

ຈະຫາເຫງື່ອຮາກແລະໝາກໄມ້ບໍລິໂພກໄດ້ ທັງບໍ່ສາມາດຈະບູຊາໄຟໄດ້ກໍສ້າງເຮືອນມີປະຕູ ໔ ທາງ ໄວ້ເທິງຫົນທາງໃຫຍ່ສີ່ແຍກແລ້ວພັກຢູ່ດ້ວຍຕັ້ງໃຈວ່າ ເຮົາຈະບູຊາທ່ານຜູ້ທີ່ເດີນທາງມາຈາກທິດທັງ ໔ ຕາມສະຕິກຳລັງ ບໍ່ວ່າຜູ້ນັ້ນຈະເປັນສະມະນະ ຫຼື ພາມກໍຕາມແນວນັ້ນຫຼືບໍ່?

"ບໍ່ໄດ້ເປັນແນວນັ້ນເລີຍ ທ່ານພຣະໂຄດົມ"

[໔໗໔] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຳພັດຖະ ທ່ານກັບອາຈານເສື່ອມຈາກວິດຊາສົມບັດ ແລະຈະຣະນະສົມບັດອັນຍອດຢ້ຽມນີ້ແລ້ວ ແລະ ຍັງເສື່ອມເພາະທາງເສື່ອມ ໔ ປະການແຫ່ງວິດຊາສົມບັດ ແລະ ຈະຣະນະສົມບັດອັນຍອດຢ້ຽມນີ້ດ້ວຍ ກໍພາມໂປກະຂະຣະສາຕິຜູ້ເປັນອາຈານຂອງທ່ານໄດ້ເວົ້າໄວ້ວ່າ "ສະມະນະໂລ້ນບາງເຫຼົ່າ ເປັນຄົນຮັບໃຊ້ເປັນຄົນວັນນະຕ່ຳ (ກັນຫະໂຄດ) ເກີດຈາກພຣະບາດຂອງທ້າວມະຫາພົມ ບໍ່ມີປະໂຫຍດເລີຍທີ່ພວກພາມຜູ້ໄດ້ໄຕຣເພດຈະສົນທະນານຳ" ຈະເຮັດໃຫ້ຕົນເອງກໍຕົກຢູ່ໃນຄວາມເສື່ອມ ພ່ຳເພັງວິດຊາສົມບັດແລະຈະຣະນະສົມບັດໃຫ້ບໍລິບູນບໍ່ໄດ້ ອຳພັດຖະ ທ່ານຈົ່ງເບິ່ງຄວາມຜິດຂອງພາມໂປກະຂະຣະສາຕິຜູ້ເປັນອາຈານຂອງທ່ານວ່າມີສຳໃດ"

## ຣືສີຜູ້ເປັນບູຣະພາຈານ

[໔໗໕] ອຳພັດຖະ ເຖິງວ່າພາມໂປກະຂະຣະສາຕິປົກຄອງເມືອງທີ່ພຣະເຈົ້າປະເສນທິໂກສົນ ພຣະຣາດຊະທານໃຫ້ພຣະເຈົ້າປະເສນທິໂກສົນ ກໍຍັງບໍ່ໂຜດໃຫ້ເຂົາເຂົ້າເຝົ້າສະເພາະພຣະພັກເວລາຈະຊົງເປີກສາ ກໍຊົງເປີກສານອກພຣະວິສູດ ເປັນຫຍັງ? ພຣະອົງຈຶ່ງບໍ່ໂຜດໃຫ້ເຂົາເຂົ້າເຝົ້າສະເພາະພຣະພັກທັງ ໆ ທີ່ເຂົາໄດ້ຮັບພຣະຣາດຊະທານພິກສາຫານອັນຊອບທຳແນວນັ້ນ ອຳພັດຖະທ່ານຈົ່ງເບິ່ງຄວາມຜິດຂອງພາມໂປກະຂະຣະສາຕິ ຜູ້ເປັນອາຈານຂອງທ່ານວ່າມີສຳໃດ

[໔໗໔] ອຳພັດຖະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ? ພຣະເຈົ້າປະເສນທິໂກສົນຊົງຊ້າງຊົງມ້າ ຫຼື ປະທັບຢູ່ເທິງລົດພຣະບ່ອນນັ່ງ ຈະຊົງເປີກສາຣາດກິດບາງເລື້ອງກັບມະຫາອຳມາດ ຫຼືພຣະບໍຣົມວົງສານຸວົງແລ້ວ ສະເດັດຈາກບ່ອນນັ້ນໄປປະທັບໃນທີ່ແຫ່ງໜຶ່ງ ຕໍ່ມາມີຄົນວັນນະສູດ ຫຼື ຈັນຖານມາຢືນລົມກັນໃນບ່ອນນັ້ນວ່າ "ພຣະເຈົ້າປະເສນທິໂກສົນຕັດຢ່າງນີ້ ໆ" ພວກເຮົາກໍສາມາດເວົ້າໄດ້ຄືກັນກັບພຣະຣາຊາຊົງຕັດ ຫຼື ເປີກສາກັນໄດ້ ດ້ວຍເຫດພຽງເທົ່ານີ້ຈະຈັດວ່າເຂົາເປັນພຣະຣາຊາ ຫຼື ຣາດຊະອຳມາດໄດ້ຫຼືບໍ່?"

"ເຂົາຂາບທູນວ່າ "ບໍ່ໄດ້ເລີຍທ່ານພຣະໂຄດົມ"

[໔໗໕] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຳພັດຖະ ທ່ານກໍເປັນແນວນັ້ນຄືກັນ ພວກຣືສີຜູ້ເປັນບູຣະພາຈານຂອງພາມຄືຣືສີອັດຖະກະ ຣືສີວາມະກະ ຣືສີວາມະເທວະ ຣືສີເວດສາມິດ ຣືສີຍະມະຕັກຄິ ຣືສີອັງຄີນະສະ ຣືສີພາຣັດທະວາຊະ ຣືສີວາເສດຖະ ຣືສີກັດສະປະ ຣືສີພະຄຸ ເຊິ່ງເປັນຜູ້ຜູກມົນ ບອກມົນທີ່ພວກພາມໃຊ້ໃນເວລານີ້ ຂັບເສກຕາມການຜູກຂຶ້ນເປັນບົດມົນເກົ່າທີ່ທ່ານຜູ້ກ່ອນ ໆ ຜູກຂຶ້ນຈັດເກັບໂຮມຖືລວມໄວ້ ກ່າວໄດ້ຖືກຕ້ອງຕາມທີ່ທ່ານກ່າວໄວ້ ບອກໄດ້ຖືກຕ້ອງຕາມທີ່ທ່ານບອກໄວ້ ພຽງຄິດວ່າ "ເຮົາກັບອາຈານຮຽນມົນຂອງທ່ານເຫຼົ່ານັ້ນ" ທ່ານຈັກໄດ້ຊື່ວ່າເປັນຣືສີ ຫຼື ຜູ້ປະຕິບັດ ເພື່ອເປັນຣືສີເພາະເຫດພຽງເທົ່ານັ້ນ ນັ້ນບໍ່ແມ່ນຖານະທີ່ຈະເປັນໄປໄດ້

[໔໗໖] ອຳພັດຖະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ? ທ່ານໄດ້ຟັງພາມຜູ້ແກ່ຜູ້ເຖົ້າຜູ້ເປັນອາຈານ ແລະ ປາຣະມາຈານເລົ່າກັນມາແນວໃດ? ພວກຣືສີຜູ້ເປັນບູຣະພາຈານຂອງພາມຄືຣືສີອັດຖະກະ ຣືສີວາມະກະ ຣືສີວາມະເທວະ ຣືສີເວດສາມິດ ຣືສີຍະມະຕັກຄິ ຣືສີອັງຄີຣະສະຣືສີພາຣັດທະວາຊະ ຣືສີວາເສດຖະ ຣືສີກັດສະປະ ຣືສີພະຄຸ ເຊິ່ງເປັນຜູ້ຜູກມົນ ບອກມົນທີ່ພວກພາມໃຊ້ໃນເວລານີ້ ຂັບເສກຕາມການຜູກຂຶ້ນເປັນບົດມົນເກົ່າທີ່ທ່ານຜູ້ກ່ອນ ໆ ຜູກຂຶ້ນ ຈັດເກັບໂຮມຖືລວມໄວ້ກ່າວໄດ້ຖືກຕ້ອງຕາມທີ່ທ່ານກ່າວໄວ້ ບອກໄດ້ຖືກຕ້ອງຕາມທີ່ທ່ານບອກໄວ້ ຣືສີເຫຼົ່ານັ້ນ ອາບນ້ຳທາໂຕຮຽບຮ້ອຍ ແຕ່ງຜົມ ແລະ ໜວດ ປະດັບພວງດອກໄມ້ ນຸ່ງຫົ່ມຜ້າຂາວປິ່ນເປີຢູ່ດ້ວຍກາມມະຄຸນ ໕ ຄື ທ່ານກັບອາຈານໃນເວລານີ້ຫຼືບໍ່?"

ເຂົາຂາບທູນວ່າ "ບໍ່ຄືກັນເລີຍທ່ານພຣະໂຄດົມ"

"ຯລຯ ຣືສີເຫຼົ່ານັ້ນ ບໍລິໂພກເຂົ້າສາລີຢ່າງດີທີ່ເກັບກາກເຂົ້າອອກແລ້ວ ມີແກງແລະເຄື່ອງກັບຫຼາຍຢ່າງ ຄື ທ່ານກັບອາຈານໃນເວລານີ້ຫຼືບໍ່?"

"ບໍ່ຄືກັນເລີຍທ່ານພຣະໂຄດົມ"

"ຯລຯ ຣືສີເຫຼົ່ານັ້ນ ຮັບການປິ່ນເປີຢູ່ດ້ວຍນາງງາມ ຜູ້ມີຮູບຮ່າງອ່ອນຊ້ອຍ ຕົກແຕ່ງດ້ວຍຜ້າປັກທົ່ວ ຄື ທ່ານກັບອາຈານໃນເວລານີ້ຫຼືບໍ່?"

"ບໍ່ຄືກັນເລີຍ ທ່ານພຣະໂຄດົມ"

"ຯລຯ ຣືສີເຫຼົ່ານັ້ນ ໃຊ້ລົດທຽມດ້ວຍມ້າຫາງຕັດ ໃຊ້ປະຕັກດ້າມຍາວແທງສັດພາຫະນະໃຫ້ແລ່ນໄປ ຄື ທ່ານກັບອາຈານໃນເວລານີ້ຫຼືບໍ່?"

"ບໍ່ຄືກັນເລີຍ ທ່ານພຣະໂຄດົມ"

"ໆລໆ ຣິສີເຫຼົ່ານັ້ນ ໃຊ້ບຸຣຸດຂັດກະບີ່ ຖືຮັກສາປ້ອງກັນປ້ອມແຫ່ງນະຄອນມີຄູຄອງອ້ອມຮອບປັກຫຼັກເອົາໄວ້ ຄື ທ່ານກັບອາຈານໃນເວລານີ້ຫຼືບໍ່?"

"ບໍ່ຄືກັນເລີຍ ທ່ານພຣະໂຄດົມ"

ໆລໆ ອຳພັດຖະທີ່ກ່າວມານີ້ ສະຫຼຸບໄດ້ວ່າ ທ່ານກັບອາຈານບໍ່ແມ່ນຣິສີ ບໍ່ແມ່ນຜູ້ປະຕິບັດເພື່ອເປັນຣິສີ ອຳພັດຖະ ຖ້າທ່ານມີຄວາມເຄືອບແຄງສົງໄສໃນເຮົາ ກໍຈົ່ງຖາມ ເຮົາຈັກອະທິບາຍໃຫ້ຟັງ

## ຊົງສະແດງລັກສະນະມະຫາບຸຣຸດ ໒ ປະການ

[໒໗໗] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດອອກຈາກພຣະວິຫານ ຊົງຍ່າງຈົງກົມຢູ່ ແມ່ນອຳພັດທະມານົບ ກໍອອກຈາກພຣະວິຫານຍ່າງຈົງກົມຢູ່ຄືກັນ ໃນຂະນະທີ່ເຂົາຍ່າງຕາມພຣະຜູ້ມີພຣະພາກເຈົ້າຢູ່ ໄດ້ສັງເກດເບິ່ງລັກສະນະມະຫາບຸຣຸດ ໓໒ ປະການໃນພຣະວໍຣະກາຍຂອງພຣະຜູ້ມີພຣະພາກເຈົ້າ ໄດ້ເຫັນລັກສະນະມະຫາບຸຣຸດ ໓໒ ປະການໂດຍສ່ວນຫຼາຍ ຍົກເວັ້ນຢູ່ ໒ ປະການ ຄື ພຣະຄຸຍຫະຖານ ເຊິ່ງຫຼົບຢູ່ໃນຝັກ ກັບພຣະຊິວຫາໃຫຍ່ ຈຶ່ງຍັງເຄືອມແຄງສົງໄສ ບໍ່ເຊື່ອສະນິດໃຈໄປວ່າເປັນຫຼັກສະນະຂອງມະຫາບຸຣຸດ

[໒໗໘] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງພຣະດຳລິວ່າ "ອຳພັດທະມານົບນີ້ເຫັນລັກສະນະມະຫາບຸຣຸດ ໓໒ ປະການຂອງເຮົາໂດຍສ່ວນຫຼາຍ ຍົກເວັ້ນຢູ່ ໒ ປະການ ຄື ຄຸຍຫະຖານ ເຊິ່ງຫຼົບຢູ່ໃນຝັກກັບຊິວຫາໃຫຍ່ ຈຶ່ງຍັງເຄືອມແຄງສົງໄສບໍ່ເຊື່ອສະນິດໃຈ" ທັນໃດນັ້ນເອງ ພຣະຜູ້ມີພຣະພາກເຈົ້າ ຊົງບັນດານອິດທາພິສັງຂານໃຫ້ເຂົາເບິ່ງ ເຫັນພຣະຄຸຍຫະຖານເຊິ່ງຫຼົບຢູ່ໃນຝັກ ແລະຊົງແລບພຣະຊິວຫາສອດເຂົ້າຮູພຣະກັນທັງ ໒ ຂ້າງ ກັບໄປມາສອດເຂົ້າຮູພຣະນາສິກທັງ ໒ ຂ້າງ ກັບໄປມາ ແຜ່ປົດຈົນມິດມົນທົນພຣະນະລາດ

ອຳພັດທະມານົບ ເມື່ອເຫັນເຊັ່ນນັ້ນແລ້ວ ຈຶ່ງຄິດວ່າ "ພຣະສະມະນະໂຄດົມຊົງປະກອບດ້ວຍລັກສະນະມະຫາບຸຣຸດ ໓໒ ປະການຄົບຖ້ວນ ບໍ່ແມ່ນບໍ່ຄົບຖ້ວນ" ຈຶ່ງໄດ້ຂາບທູນພຣະຜູ້ມີພຣະພາກວ່າ "ທ່ານພຣະໂຄດົມ ບັດນີ້ ຂ້າພະເຈົ້າຂໍລາກັບກ່ອນ ເພາະຂ້າພະເຈົ້າມີວຽກມີໜ້າທີ່ທີ່ຈະຕ້ອງເຮັດອີກຫຼາຍປະການ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຂໍທ່ານຈົ່ງກຳນົດເວລາ ອັນສົມຄວນນັ້ນເຖີ້ນ ອຳພັດຖະ"

"ໃນທີນັ້ນ ອຳພັດທະມານົບໄດ້ຂຶ້ນລົດທຽມມ້າຈາກໄປ"

## ອຳພັດທະມານົບກັບໄປຣາຍງານພາມໂປກະຂະຣະສາຕິ

[໔໗໙] ໃນເວລານັ້ນ ພາມໂປກະຂະຣະສາຕິ ລຸກອອກມານັ່ງຄອຍຖ້າອຳພັດທະມານົບຢູ່ໃນອາຣາມຂອງຕົນ ພ້ອມກັບຄະນະພາມໝູ່ໃຫຍ່ ຝ່າຍອຳພັດທະມານົບຂັບຍານພາຫະນະໄປທາງອາຣາມຂອງຕົນ ຈົນສຸດທາງທີ່ຍານພາຫະນະຈະເຂົ້າໄປໄດ້ ຈຶ່ງລົງຍ່າງເຂົ້າໄປຫາພາມໂປກະຂະຣະສາຕິຂາບແລ້ວນັ່ງຢູ່ໃນທີ່ສົມຄວນຂອງຕົນ

[໔໘໐] ພາມໂປກະຂະຣະສາຕິ ຖາມອຳພັດທະມານົບວ່າ "ພໍ່ອຳພັດຖະທ່ານໄດ້ເຫັນທ່ານພຣະໂຄດົມພຣະອົງນັ້ນແລ້ວບໍ?"

"ພັດຖະຕອບວ່າ "ໄດ້ເຫັນແລ້ວຂ້ານ້ອຍ"

"ກໍກິດຕິສັບຂອງທ່ານພຣະໂຄດົມທີ່ຊ່າລືໄປໄກທົ່ວທຸກທິດເປັນແນວນັ້ນຈິງແທ້ບໍ? ບໍ່ເປັນແນວອື່ນແດ່ບໍ?"

"ໂດຍຂ້ານ້ອຍ ກິດຕິສັບຂອງທ່ານພຣະໂຄດົມ ທີ່ຊ່າລືໄປໄກທົ່ວທຸກທິດເປັນແນວນັ້ນຈິງແທ້ ບໍ່ເປັນຢ່າງອື່ນເລີຍ ທ່ານພຣະໂຄດົມ ຊົງເປັນແນວນັ້ນບໍ່ເປັນຢ່າງອື່ນ ແລະ ທັງຍັງຊົງເປັນຜູ້ປະກອບດ້ວຍລັກສະນະຂອງມະຫາບຸຣຸດ ໓໒ ປະການຄົບຖ້ວນບໍລິບູນ"

"ທ່ານໄດ້ສົນທະນາກັບພຣະສະມະນະໂຄດົມແດ່ຫຼືບໍ່"

"ໄດ້ສົນທະນາ ໂດຍຂ້ານ້ອຍ"

ພາມໂປກະຂະຣະສາຕິຖາມຕໍ່ອີກວ່າ "ທ່ານໄດ້ສົນທະນາກັບພຣະສະມະນະໂຄດົມວ່າແນວໃດແດ່?"

ອຳພັດທະມານົບ ຈຶ່ງໄດ້ເລົ່າເລື່ອງທັງໝົດເທົ່າທີ່ຕົນໄດ້ສົນທະນາກັບພຣະຜູ້ມີພຣະພາກເຈົ້າໃຫ້ພາມໂປກະຂະຣະສາຕິຮູ້ທຸກປະການ

[໔໘໑] ເມື່ອອຳພັດທະມານົບ ເລົ່າໃຫ້ຟັງແນວນີ້ແລ້ວ ພາມໂປກະຂະຣະສາຕິກ່າວວ່າ "ໂອນໍ ບັນດິດຜູ້ເປັນພະຫູສູດ ຊົງໄຕຣເພດຂອງເຮົາ ຫຼັງຈາກຕາຍແລ້ວຄົງຈະໄປເກີດໃນອະບາຍທຸຄະຕິວິນິບາດນະຣົກ ກໍເພາະຄົນຜູ້ປະພຶດປະໂຫຍດແນວນີ້ ທ່ານເວົ້າກະທົບທ່ານພຣະໂຄດົມແນວນັ້ນແຕ່ກັບຖືກທ່ານພຣະໂຄດົມ ຍົກເອົາພວກເຮົາເປັນໂຕຢ່າງປຽບທຽບແນວນີ້ ໆ ໂອນໍບັນດິດຜູ້ເປັນພະຫູສູດຊົງໄຕຣເພດຂອງເຮົາ ຫຼັງຈາກຕາຍແລ້ວຄົງຈະໄປເກີດໃນອະບາຍທຸກຕິວິນິບາດນະຣົກ ກໍເພາະຄົນຜູ້ປະພຶດປະໂຫຍດເຊັ່ນນີ້" ແລ້ວ ຄຽດ ບໍ່ພໍໃຈ ລຸກຂຶ້ນເຕະອຳພັດ

ທະມານິບຈົນລົ້ມກິ້ງລົງ ພ້ອມດ້ວຍຄວາມຮູ້ສຶກຢາກເຂົ້າໄປເຝົ້າ ພຣະຜູ້ມີພຣະພາກເຈົ້າໃນເວລານັ້ນທັນທີເລີຍ

## ພາມໂປກະຂະຣະສາຕິເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ

[໔໙໔] ໃນເວລານັ້ນໄດ້ມີພາມໃນນັ້ນກ່າວຂຶ້ນທ້າມພາມໂປກະຂະຣະສາຕິວ່າ "ວັນນີ້ລ່ວງເລຍເວລາອັນສົມຄວນທີ່ຈະເຂົ້າໄປເຝົ້າພຣະສະມະນະໂຄດົມໄດ້ທັນເວລາແລ້ວ ຈົ່ງຖ້າເຊົ້າມື້ອື່ນກ່ອນຄ່ອຍໄປເຖີ້ນ ທ່ານໂປກະຂະຣະສາຕິ"

ຕໍ່ມາ ພາມໂປກະຂະຣະສາຕິ ສັ່ງໃຫ້ຈັດກຽມຂອງຂົບສັນອັນປະນີດໄວ້ໃນນິເວດຂອງຕົນ ແລ້ວຂຶ້ນຍານພາຫະນະ ເດີນທາງອອກຈາກເມືອງອຸກກັດຖະ ໃຫ້ເຂົາເຍືອງໄຟນຳທາງກົງໄປຫາປ່າອິດສານັງຄະລະວັນ ເຂົ້າໄປຈົນສຸດທາງຍານພາຫະນະຈະແລນໄປໄດ້ ແລ້ວລົງຍ່າງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຖິງທີ່ປະທັບ ສົນທະນາກັບພຣະຜູ້ມີພຣະພາກພໍຄຸ້ນເຄີຍ ແລ້ວຈຶ່ງນັ່ງລົງໃນທີ່ສົມຄວນຂອງຕົນ

[໔໙໓] ເມື່ອພາມໂປກະຂະຣະສາຕິນັ່ງຮຽບຮ້ອຍແລ້ວ ໄດ້ທູນຖາມວ່າ "ທ່ານພຣະໂຄດົມອຳພັດທະມານົບສິດຂອງຂ້າພະເຈົ້າໄດ້ເຂົ້າມາຫາທ່ານໃນບ່ອນນີ້ແດ່ຫຼືບໍ່?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອຳພັດທະໄດ້ເຂົ້າມາບ່ອນນີ້ແມ່ນແລ້ວພາມ"

ພາມທູນຖາມຕໍ່ໄປວ່າ "ພຣະອົງໄດ້ສົນທະນາກັບເຂົາແດ່ຫຼືບໍ່?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ເຮົາໄດ້ສົນທະນາກັບເຂົາແມ່ນແລ້ວພາມ"

ພາມທູນຖາມອີກວ່າ "ພຣະອົງໄດ້ສົນທະນາກັບເຂົາດ້ວຍເລື້ອງອັນໃດແດ່?"

ພຣະຜູ້ມີພຣະພາກໄດ້ຕັດເລົ່າເລື່ອງນັ້ນ ເທົ່າທີ່ພຣະອົງຊົງສົນທະນາກັບອຳພັດທະມານົບໃຫ້ພາມໂປກະຂະຣະສາຕິຮູ້ທຸກ ໆ ປະການ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ ພາມໂປກະຂະຣະສາຕິໄດ້ຂາບທູນວ່າ "ທ່ານພຣະໂຄດົມ ອຳພັດທະມານົບເປັນຄົນໂງ່ຈ້າໂຜດຍົກໂທດໃຫ້ເຂົາດ້ວຍເຖີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຂໍໃຫ້ອຳພັດທະມານົບຈົ່ງມີຄວາມສຸກເຖີ້ນພາມ"

[໔໙໔] ຄັ້ງນັ້ນ ພາມໂປກະຂະຣະສາຕິໄດ້ສັງເກດເບິ່ງລັກສະນະມະຫາບຸຣຸດ ໓໔ ປະການໃນພຣະວໍຣະກາຍຂອງພຣະຜູ້ມີພຣະພາກເຈົ້າ ໄດ້ເຫັນລັກສະນະມະຫາບຸຣຸດ ໓໔ ປະການ

ໂດຍສ່ວນຫຼາຍ ຍົກເວັ້ນຢູ່ ໔ ປະການ ຄື ພຣະຄຸຍຫະຖານ ເຊິ່ງຫຼົບຢູ່ໃນຝັກກັບພຣະຊິວຫາໃຫຍ່ ຈຶ່ງຍັງເຄືອບແຄງສົງໄສບໍ່ເຊື່ອຢ່າງສະນິດໃຈ

[໔໙໕] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງພຣະດຳລິວ່າ "ພາມໂປກະຂະຣະສາຕິນີ້ ເຫັນລັກສະນະມະຫາບຸຣຸດ ໓໔ ປະການຂອງເຮົາໂດຍສ່ວນຫຼາຍເວັ້ນຢູ່ ໔ ປະການ ຄື ຄຸຍຫະຖານເຊິ່ງຫຼົບຢູ່ໃນຝັກກັບຊິວຫາໃຫຍ່ ຈຶ່ງຍັງເຄືອບແຄງສົງໄສບໍ່ເຊື່ອສະນິດໃຈ" ທັນໃດນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງບັນດານອິດທາພິສັງຂານໃຫ້ພາມເບິ່ງເຫັນພຣະຄຸຍຫະຖານ ເຊິ່ງຫຼົບຢູ່ໃນຝັກແລະຊົງແລບພຣະຊິວຫາສອດເຂົ້າຮູພຣະກັນນະທັງ ໔ ຂ້າງ ກັບໄປມາ ສອດເຂົ້າຮູພຣະນາສິກທັງ ໔ ທາງ ກັບໄປມາແຜ່ປົດຈົນມິດມົນທົນພຣະນະລາດ"

[໔໙໖] ພາມໂປກະຂະຣະສາຕິຄິດວ່າ "ພຣະສະມະນະໂຄດົມ ຊົງປະກອບດ້ວຍລັກສະນະມະຫາບຸຣຸດ ໓໔ ປະການຄົບຖ້ວນ ບໍ່ແມ່ນບໍ່ຄົບຖ້ວນ" ຈຶ່ງໄດ້ຂາບທູນພຣະຜູ້ມີພຣະພາກວ່າ "ຂໍທ່ານພຣະໂຄດົມພ້ອມກັບພິກຂຸສົງ ໂຜດຮັບພັດຕາຫານຂອງຂ້າພະເຈົ້າໃນມື້ອື່ນເຊົ້ານີ້ດ້ວຍເທີ້ນ ຂ້ານ້ອຍ"

"ພຣະຜູ້ມີພຣະພາກຊົງຮັບນິມົນດ້ວຍພຣະອາການດຸດສະດີ"

[໔໙໗] ພາມໂປກະຂະຣະສາຕິ ຮູ້ອາການທີ່ພຣະຜູ້ມີພຣະພາກເຈົ້າ ຊົງຮັບນິມົນແລ້ວຈຶ່ງໄດ້ກັບໄປນິເວດຂອງຕົນ ມາຮອດເຊົ້າມື້ໃໝ່ໄດ້ສັ່ງໂຕແທນກັບມາຂາບທູນນິມົດບອກພັດຕະການວ່າ "ທ່ານພຣະໂຄດົມໄດ້ເວລາແລ້ວ ພັດຕາຫານສຳເລັດພ້ອມແລ້ວ"

ເມື່ອແລ້ວພຣະຜູ້ມີພຣະພາກ ຊົງຄອງອັນຕະຣະວາສົກຖືບາດ ແລະ ຈີວອນສະເດັດເຂົ້າໄປສູ່ນິເວດຂອງພາມໂປກະຂະຣະສາຕິພ້ອມດ້ວຍພິກຂຸສົງ ປະທັບນັ່ງເທິງອາສະນະທີ່ປູໄວ້ ພາມໂປກະຂະຣະສາຕິໄດ້ນຳຂອງຂົບສັນອັນປະນີດ ເຄນຖວາຍພຣະຜູ້ມີພຣະພາກໃຫ້ຊົງອີ່ມໜຳສຳລານດ້ວຍຕົນເອງ ພ້ອມດ້ວຍພວກມານົບຜູ້ເປັນບໍລິວານກໍໄດ້ເຄນພິກຂຸສົງເຊັ່ນກັນ ເມື່ອພຣະຜູ້ມີພຣະພາກສະເຫວີຍສຳເລັດແລ້ວ ຊົງວາງພຣະຫັດອອກຈາກພາເຂົ້າ ພາມໂປກະຂະຣະສາຕິເຫັນແນວນັ້ນ ຈຶ່ງໄດ້ນັ່ງລົງໃນທີ່ສົມຄວນຂອງຕົນ ເຊິ່ງຢູ່ຕ່ຳກວ່າບ່ອນປະທັບຂອງພຣະຜູ້ມີພຣະພາກເຈົ້າ

[໔໙໘] ພຣະຜູ້ມີພຣະພາກຊົງຕັດອະນຸປຸບພິກຖາ ຄື ຊົງປະກາດເລື້ອງທານ ເລື້ອງສີນເລື້ອງສະຫວັນ ເລື້ອງໂທດ ຄວາມຕ່ຳຊາມ ຄວາມເສົ້າໝອງແຫ່ງກາມ ແລະ ອານິສົງໃນການອອກບວດແກ່ພາມໂປກະຂະຣະສາຕິ ເຊິ່ງນັ່ງຢູ່ໃນທີ່ສົມຄວນຂອງຕົນ ເມື່ອຊົງຮູ້ວ່າພາມໂປກະຂະຣະສາຕິມີຈິດຄວນບັນລຸທຳ ສະຫງົບ ລະງັບ ອ່ອນໂຍນ ປາສະຈາກນິວອນ ເບີກບານ ຜ່ອງໃສຢູ່ ຈຶ່ງຊົງປະກາດສາມຸກກັງສິກເທສະນາອັນມີຫົວຂໍ້ທຳວ່າດ້ວຍ ທຸກ ສະມຸທັຍ ນິໂຣດ ມັກ

ທຳມະຈັກຂຸອັນປາສະຈາກທຸລີຄືກິເລດ ປາສະຈາກມົນທິນ ໄດ້ເກີດຂື້ນແກ່ພາມໂປກະຂະຣະສາຕິຢູ່ບ່ອນນັ່ງນັ້ນເອງ ໄດ້ມີປັນຍາເກີດຂຶ້ນຮູ້ເອງວ່າ “ສິ່ງໃດ ສິ່ງໜຶ່ງ ມີຄວາມເກີດຂື້ນເປັນທຳມະດາ ສິ່ງນັ້ນ ທັງຫຼາຍລ້ວນມີຄວາມດັບໄປເປັນທຳມະດາ” ປຽບຄື ຜ້າຂາວສະອາດ ປາສະຈາກມົນທິນ ຄວນໄດ້ຮັບນ້ຳຍ້ອມໄດ້ເປັນຢ່າງດີ”

## ພາມໂປກະຂະຣະສາຕິປະກາດຕົນເປັນອຸປາສົກ

[໔໙] ລຳດັບນັ້ນ ພາມໂປກະຂະຣະສາຕິ ໄດ້ເຫັນທຳ ໄດ້ບັນລຸທຳ ຮູ້ທຳ ໃຈປັກລົງສູ່ທຳໝົດຄວາມສົງໄສ ໝົດຄຳຖາມໃນທຳ ມີຄວາມແກ້ກ້າບໍ່ຕ້ອງເຊື່ອໃຜອີກໃນຫຼັກຄຳສອນຂອງພຣະສາດສະດາ ໄດ້ຂາບທູນພຣະຜູ້ມີພຣະພາກວ່າ “ຂ້າແຕ່ ທ່ານພຣະໂຄດົມຜູ້ຈະເລີນ ພາສິດຂອງທ່ານພຣະໂຄດົມຊັດແຈ້ງແຈ້ງມ່ວນຫຼາຍ ຂ້າແຕ່ ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມຊັດແຈ້ງມ່ວນຫຼາຍ ທ່ານພຣະໂຄດົມຊົງປະກາດທຳຢ່າງຊັດແຈ້ງໂດຍປະການຕ່າງ ໆ ປຽບຄື ບຸກຄົນຫງາຍຂອງທີ່ງ້ວມຢູ່ ເປີດຂອງທີ່ປິດ ບອກທາງແກ່ຜູ້ຫຼົງທາງ ຫຼື ເຍືອງໄຟໃນທີ່ມືດ ໂດຍຕັ້ງໃຈວ່າຄົນມີຕາດີຈັກແນມເຫັນທາງ ຂ້າພຣະອົງນີ້ ພ້ອມດ້ວຍບຸດ ພັນລະຍາ ບໍລິວານ ແລະ ມິດສະຫາຍທັງຫຼາຍ ຂໍເຖິງທ່ານພຣະໂຄດົມ ພ້ອມທັງພຣະທຳ ແລະ ພຣະສົງວ່າ ເປັນສະຣະນະ ຂໍທ່ານພຣະໂຄດົມຈົ່ງຊົງຈື່ໄວ້ວ່າ ຂ້າພຣະອົງ ເປັນອຸປາສົກຜູ້ເຖິງສະຣະນະນັບຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ ຂໍທ່ານພຣະໂຄດົມ ຈົ່ງສະເດັດເຂົ້າໄປສູ່ໂປກະຂະຣະສາຕິຕະກູນ ຄື ດັ່ງທີ່ສະເດັດເຂົ້າໄປສູ່ຕະກູນອຸປາສົກອື່ນ ໆ ໃນເມືອງອຸກກັດຖະ ເຫຼົ່າມານົບ ຫຼື ມານະວິກາໃນໂປກະຂະຣະສາຕິຕະກູນ ຈັກຂາບໄຫວ້ ລຸກຮັບ ຖວາຍອາສະນະ ແລະ ນ້ຳ ຈັກທຳຈິດໃຫ້ເຫຼື້ອມໃສໃນພຣະອົງ ຂໍ້ນັ້ນ ຈັກເປັນໄປເພື່ອປະໂຫຍດ ເພື່ອສຸກ ແກ່ພວກເຂົາເຈົ້າທັງຫຼາຍຕະຫຼອດການລະນານດ້ວຍເທີ້ນ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ພາມ ທ່ານກ່າວດີແລ້ວ”

**ອຳພັດຖະສູດທີ ໓ ຈົບ**

# ๔. ໂສນະທັນດະສູດ

## ວ່າດ້ວຍເລື້ອງພາມຊື່ໂສນະທັນດະ

## ເລື້ອງພາມແລະຄະຫະບໍດີຊາວເມືອງຈຳປາ

[໓໐໐] ຂ້າພະເຈົ້າ ໄດ້ຟັງມາແບບນີ້ ວ່າ

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ສະເດັດຈາຣິກໄປໃນແຄວ້ນອັງຄະ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ມີປະມານ ໕໐໐ ອົງ ສະເດັດເຖິງເມືອງຈຳປາ ປະທັບຢູ່ໃກ້ສະໂບກຂະຣະນີຄັກຄະຣາແຫ່ງນັ້ນ

ສະໄໝນັ້ນ ພາມໂສນະທັນດະປົກຄອງເມືອງຈຳປາ ເຊິ່ງມີປະຊາກອນ ແລະ ສັດລ້ຽງຫຼວງຫຼາຍ ມີພືດພັນທັນຍາຫານ ແລະ ນ້ຳ ຫຍ້າອຸດົມສົມບູນ ເປັນພຣະຣາດຊະຊັບທີ່ພຣະເຈົ້າພິມພິສານຈອມທັບມະຄົດ ພຣະຣາດຊະທານປູນບຳເໜັດໃຫ້ເປັນພົມໄທ (ສ່ວນພິເສດ)

[໓໐໑] ພາມ ແລະ ຄະຫະບໍດີຊາວເມືອງຈຳປາໄດ້ຟັງຂ່າວມາວ່າ "ທ່ານພຣະສະມະນະໂຄດົມເປັນສັກກະຍະບຸດ ສະເດັດອອກບວດຈາກສາກະຍະຕະກູນ ສະເດັດຈາຣິກຢູ່ໃນແຄວ້ນອັງຄະພ້ອມດ້ວຍພິກຂຸສົງໝູ່ໃຫຍ່ມີປະມານ ໕໐໐ ຮູບ ສະເດັດເຖິງເມືອງຈຳປາໂດຍລຳດັບ ປະທັບຢູ່ໃກ້ສະໂບກຂະຣະນີຄັກຄະຣາໃນເມືອງຈຳປາ ທ່ານພຣະໂຄດົມນັ້ນມີກິດຕິສັບອັນງາມຊ່າລືໄປແບບນີ້ວ່າ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນຕັດສະຣູ້ດ້ວຍພຣະອົງເອງໂດຍຊອບ ພຽບພ້ອມດ້ວຍວິດຊາ ແລະ ຈະຣະນະ ສະເດັດໄປດີຮູ້ແຈ້ງໂລກເປັນສາຣະຖີ ເຝິກບຸຣຸດຜູ້ທີ່ຄວນເຝິກໄດ້ຢ່າງຍອດຢ້ຽມ ເປັນສາດສະດາຂອງເທວະດາ ແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ພຣະອົງຊົງຮູ້ແຈ້ງໂລກນີ້ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະ ໝູ່ສັດພ້ອມທັງສະມະນະພາມ ເທວະດາແລະ ມະນຸດທັງຫຼາຍດ້ວຍພຣະອົງເອງ ຊົງຮູ້ເອງແລ້ວ ປະກາດໃຫ້ຜູ້ອື່ນຮູ້ນຳ ຊົງສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະ ມີຄວາມງາມໃນທີ່ສຸດ ຊົງປະກາດພົມມະຈັນ ພ້ອມທັງອັດຖະ ແລະ ພະຍັນຊະນະ ບໍລິສຸດ ບໍລິບູນຄົບຖ້ວນ ການໄດ້ພົບພຣະອະຣະຫັນທັງຫຼາຍແບບນີ້ ເປັນຄວາມດີຢ່າງແທ້ຈິງ

ຕໍ່ມາ ພາມ ແລະ ຄະຫະບໍດີ ຊາວເມືອງຈຳປາ ອອກຈາກເມືອງຈຳປາ ຍ່າງຮວມກັນເປັນໝູ່ໃຫຍ່ພາກັນມຸ້ງໜ້າໄປສູ່ສະໂບກຂະຣະນີຄັກຄະຣານັ້ນ

[໓໐໔] ສະໄໝນັ້ນ ພາມໂສນະທັນດະ ກຳລັງພັກຜ່ອນກາງເວັນຢູ່ໃນຜາສາດຊັ້ນເທິງໄດ້ແນມລົງມາເຫັນພາມ ແລະ ຄະຫະບໍດີຊາວເມືອງຈຳປາ ເຊິ່ງກຳລັງພາກັນຍ່າງອອກຈາກເມືອງຈຳປາເປັນໝູ່ໃຫຍ່ ມຸ້ງໜ້າໄປສູ່ສະໂບກຂະຣະນີຄັກຄະຣາ ຈຶ່ງຮຽກອຳມາດທີ່ເປີກສາມາຖາມວ່າ "ທ່ານອຳມາດ ພາມ ແລະ ຄະຫະບໍດີຊາວເມືອງຈຳປາທີ່ກຳລັງພາກັນຍ່າງອອກຈາກເມືອງຈຳປາຮວມກັນເປັນໝູ່ໃຫຍ່ ມຸ້ງໜ້າໄປສູ່ສະໂບກຂະຣະນີຄັກຄະຣາ ເພາະມີເຫດອັນໃດ?"

ອຳມາດທີ່ເປີກສາຕອບວ່າ "ທ່ານຂ້ານ້ອຍ ພຣະສະມະນະໂຄດົມເປັນສັກກະຍະບຸດສະເດັດອອກບວດຈາກສາກະຍະຕະກູນ ສະເດັດຈາຣິກຢູ່ໃນແຄວັນອັງຄະພ້ອມດ້ວຍພິກຂຸສົງໝູ່ໃຫຍ່ມີປະມານ ໕໐໐ ອົງ ສະເດັດເຖິງເມືອງຈຳປາໂດຍລຳດັບ ປະທັບຢູ່ໃກ້ສະໂບກຂະຣະນີຄັກຄະຣາໃນເມືອງຈຳປາ ທ່ານພຣະໂຄດົມນັ້ນ ມີກິດຕິສັບອັນງາມຊ່າລືໄປໄກແນວນີ້ວ່າ "ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍທຳ ພຽບພ້ອມດ້ວຍວິດຊາ ແລະ ຈະຣະນະ ສະເດັດໄປດີຮູ້ແຈ້ງໂລກເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງຍອດຢ້ຽມ ເປັນສາດສະດາຂອງເທວະດາ ແລະ ມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ" ຄົນເຫຼົ່ານັ້ນກຳລັງພາກັນເຂົ້າໄປເຝົ້າທ່ານພຣະໂຄດົມອົງນັ້ນແລ ທ່ານ.

ພາມໂສນະທັນດະກ່າວວ່າ "ທ່ານອຳມາດ ຖ້າແນວນັ້ນ ທ່ານຈົ່ງໄປຫາພວກພາມ ແລະຄະຫະບໍດີຊາວເມືອງຈຳປາ ເມື່ອໄປຮອດແລ້ວ ຈົ່ງບອກແນວນີ້ວ່າ ທ່ານຂ້ານ້ອຍ ພາມໂສນະທັນດະ ຂໍຮ້ອງເວົ້າວ່າ ຂໍໃຫ້ທ່ານຜູ້ຈະເລີນທັງຫຼາຍ ຈົ່ງຖ້າກ່ອນ ພາມໂສນະທັນດະຈະຂໍເຂົ້າເຝົ້າພຣະສະມະນະໂຄດົມພ້ອມພວກທ່ານແດ່"

ອຳມາດທີ່ເປີກສາຮັບຄຳຂອງພາມໂສນະທັນດະ ແລ້ວເຂົ້າໄປຫາພວກພາມ ແລະຄະຫະບໍດີຊາວເມືອງຈຳປາ ເມື່ອແລ້ວກໍບອກວ່າ "ທ່ານທັງຫຼາຍ ຂ້ານ້ອຍ ພາມໂສນະທັນດະຂໍຮ້ອງໄວ້ວ່າ ຂໍທ່ານຜູ້ຈະເລີນທັງຫຼາຍ ຈົ່ງຖ້າເອົາໄວ້ກ່ອນ ພາມໂສນະທັນດະຈະຂໍເຂົ້າເຝົ້າພຣະສະມະນະໂຄດົມພ້ອມພວກທ່ານ

## ຄວາມເປັນຜູ້ດີຂອງພາມໂສນະທັນດະ

[໓໐໕] ເວລານັ້ນ ພາມຕ່າງຖິ່ນ ໕໐໐ ຄົນ ມີວຽກຕ້ອງເດີນທາງມາພັກເຊົາຢູ່ໃນເມືອງຈຳປາພໍແຕ່ໄດ້ຟັງວ່າ "ພາມໂສນະທັນດະຈັກເຂົ້າໄປເຝົ້າ ພຣະສະມະນະໂຄດົມນຳພວກຕົນ" ຈຶ່ງພາກັນເຂົ້າໄປຫາພາມໂສນະທັນດະແລ້ວຖາມວ່າ "ທ່ານໂສນະທັນດະ ຈັກເຂົ້າໄປເຝົ້າພຣະສະມະນະໂຄດົມແມ່ນແທ້ບໍ່?"

ພາມໂສນະທັນດະຕອບວ່າ "ແມ່ນແລ້ວ ເຮົາຄິດຈະເຂົ້າໄປເຝົ້າ ພຣະສະມະນະໂຄດົມ ແທ້ແນ່ນອນ"

ພວກພາມຫ້າມວ່າ "ທ່ານໂສນະທັນດະ ຢ່າໄດ້ເຂົ້າໄປເຝົ້າພຣະສະມະນະໂຄດົມເລີຍ ທ່ານໂສນະທັນດະບໍ່ຄວນເຂົ້າໄປເຝົ້າພຣະສະມະນະໂຄດົມ ຖ້າທ່ານເຂົ້າໄປເຝົ້າພຣະສະມະນະ ໂຄດົມ ກຽດຕິຍົດຂອງທ່ານໂສນະທັນດະຈະເສື່ອມເສຍ ກຽດຕິຍົດຂອງພຣະສະມະນະໂຄດົມຈະ ຈະເລີນຮຸ່ງເຮືອງຍິ່ງຂຶ້ນ ດ້ວຍເຫດນີ້ ທ່ານໂສນະທັນດະ ຈຶ່ງບໍ່ຄວນເຂົ້າໄປເຝົ້າພຣະສະມະນະ ໂຄດົມ ພຣະສະມະນະໂຄດົມຕ່າງຫາກ ຄວນຈະສະເດັດມາຫາທ່ານໂສນະທັນດະ ຍ້ອນວ່າທ່ານ ໂສນະທັນດະເປັນຜູ້ມີຊາດກຳເນີດດີ ທັງຝ່າຍບິດາ ແລະ ຝ່າຍມານດາ ຖືປະຕິສົນທິບໍລິສຸດດີ ຕະຫຼອດເຈັດຊົ່ວບັນພະບຸລຸດ ບໍ່ມີໃຜຈະຄັດຄ້ານຕຳໜິໄດ້ ເພາະອ້າງເຖິງຊາດຕະກູນ ດ້ວຍເຫດ ນີ້ທ່ານໂສນະທັນດະ ຈຶ່ງບໍ່ຄວນເຂົ້າໄປເຝົ້າພຣະສະມະນະໂຄດົມ ພຣະສະມະນະໂຄດົມຕ່າງ ຫາກ ຄວນຈະສະເດັດມາຫາທ່ານໂສນະທັນດະ

ອັນໜຶ່ງ ທ່ານໂສນະທັນດະເປັນຄົນມັ່ງຄັ່ງມີຊັບຫຼາຍ ມີໂພຄະຫຼາຍ ຯລຯ ເປັນຜູ້ຄົງແກ່ ຮຽນ ຊົງຈຳມົນຕຣາ ຮູ້ຈົບໄຕຣເພດພ້ອມທັງນິຄັນຖຸສາດ ເກຕຸບສາດ ອັກສອນສາດ ແລະປະ ຫວັດສາດ ຮູ້ໂຕບົດ ແລະ ໄວຍາກອນ ຊຳນານໂລກາຍະຕະສາດ ແລະ ລັກສະນະມະຫາບຸຣຸດ ຯລຯ ເປັນຜູ້ມີຮູບງາມໜ້າເບິ່ງ ໜ້າເຫຼື້ອມໃສ ມີຜິວພັນຜຸດຜ່ອງຄືພົມ ມີກາຍຄືພົມ ຫາໂອກາດ ທີ່ຈະໄດ້ພົບເຫັນໄດ້ຍາກ ເປັນຜູ້ມີສີນ ມີສີນທີ່ຈະເລີນ ປະກອບດ້ວຍສີນທີ່ຈະເລີນ ຯລຯ ເປັນຜູ້ ມີວາຈາມ່ວນສຸພາບ ປະກອບດ້ວຍຄຳເວົ້າອ່ອນຫວານຂອງຄົນເມືອງ ນຸ່ມນວນເຂົ້າໃຈງ່າຍ ຯລຯ ເປັນອາຈານ ແລະ ປາຣະມາຈານຂອງໝູ່ຊົນ ສອນມົນແກ່ມານົບ ໓໐໐ ຄົນ ເຫຼົ່າມານົບ ຜູ້ຕ້ອງການມົນຈຳນວນຫຼາຍພາກັນມາຈາກທິດຕ່າງ ໆ ຈາກຊົນນະບົດເພື່ອມາຮຽນມົນໃນສຳນັກ ຂອງທ່ານໂສນະທັນດະ ຯລຯ ທ່ານໂສນະທັນດະເປັນຄົນແກ່ຄົນເຖົ້າ ເປັນຜູ້ໃຫຍ່ ມີຊີວິດຢູ່ ຫຼາຍລັດສະໄໝ ລ່ວງການຜ່ານວັຍມາໂດນນານ ສ່ວນພຣະສະມະນະໂຄດົມ ເປັນຄົນໜຸ່ມບວດ ຕອນຍັງໜຸ່ມນ້ອຍ ຯລຯ ທ່ານໂສນະທັນດະ ເປັນຜູ້ທີ່ພຣະເຈົ້າພິມພິສານຈອມທັບມະຄົດ ແລະ ພາມໂປກະຂະຣະສາຕິ ສັກກາຣະເຄົາຣົບນັບຖືບູຊານອບນ້ອມ ຯລຯ ທ່ານໂສນະທັນດະປົກ ຄອງເມືອງຈຳປາ ເຊິ່ງມີປະຊາກອນແລະສັດລ້ຽງຫຼວງຫຼາຍ ມີພືດພັນທັນຍາຫານ ແລະ ນ້ຳຫຍ້າ ອຸດົມສົມບູນ ເປັນພຣະຣາດຊະຊັບທີ່ພຣະເຈົ້າພິມພິສານຈອມທັບມະຄົດ ພຣະຣາດຊະທານປູນ ບຳເໜັດໃຫ້ເປັນພົມໄທ ດ້ວຍເຫດນີ້ ທ່ານໂສນະທັນດະ ຈຶ່ງບໍ່ຄວນເຂົ້າໄປເຝົ້າພຣະສະມະນະ ໂຄດົມ ພຣະສະມະນະໂຄດົມຕ່າງຫາກຄວນຈະສະເດັດມາຫາທ່ານໂສນະທັນດະ

## ພາມໂສນະທັນດະສະແດງພຣະພຸດທະຄຸນ

[໓໐໔] ເມື່ອພວກພາມກ່າວແນວນີ້ ພາມໂສນະທັນດະໄດ້ກ່າວວ່າ "ທ່ານທັງຫຼາຍ ຖ້າແນວນັ້ນ ພວກທ່ານໂຜດຟັງເຮົາແດ່ ເຮົານີ້ເອງຄວນເຂົ້າໄປເຝົ້າທ່ານພຣະໂຄດົມ ທ່ານພຣະໂຄດົມບໍ່ຄວນສະເດັດມາຫາເຮົາ ເຮົາໄດ້ຮູ້ມາວ່າ ພຣະສະມະນະໂຄດົມພຣະອົງນັ້ນ ຊົງເປັນຜູ້ມີພຣະຊາດກຳເນີດດີ ທັງຝ່າຍພຣະຊະນົກ ແລະ ຝ່າຍພຣະຊົນນະນີ ຊົງຖືປະຕິສົນທິດ້ວຍສາຍເລືອດບໍລິສຸດຕະຫຼອດເຈັດອາຍຸໄຂຂອງບັນພະບຸລຸດ ບໍ່ມີໃຜຈະຄັດຄ້ານຕຳໜິໄດ້ ເພາະການອ້າງເຖິງຊາດຕະກູນ ດ້ວຍເຫດນີ້ທ່ານພຣະໂຄດົມຈຶ່ງບໍ່ຄວນສະເດັດມາຫາເຮົາ ເຮົາຕ່າງຫາກຄວນເປັນຜູ້ເຂົ້າໄປເຝົ້າທ່ານພຣະໂຄດົມ

ທ່ານທັງຫຼາຍ ຂ່າວວ່າ ພຣະສະມະນະໂຄດົມຊົງລະປະພຣະວົງສາທັ້ງຫຼາຍອອກບວດ ຯລຯ ຊົງສະລະຊັບສິນເງິນຄຳທັງໝົດ ທັງທີ່ຝັງຢູ່ໃນພື້ນດິນ ແລະໃນອາກາດແລ້ວອອກບວດ ຯລຯ ພຣະສະມະນະໂຄດົມກຳລັງໜຸ່ມແໜ້ນ ມີພຣະເກສາດຳສະນິດ ຊົງພຣະຈະເລີນຢູ່ໃນປະຖົມວັຍ ສະເດັດອອກຈາກພະລາດຊະວັງໄປບວດເປັນບັນພະຊິດ ຯລຯ ເມື່ອພຣະຊະນົກພຣະຊົນນີບໍ່ຊົງປາດຖະໜາຈະໃຫ້ສະເດັດອອກບວດ ມີນ້ຳພຣະເນດໄຫລຊຸ່ມອາບພຣະພັກຊົງກັນແສງຢູ່ ແຕ່ພຣະສະມະນະໂຄດົມຍັງຊົງປົງພຣະເກສາ ແລະ ພຣະມັດສຸຄອງຜ້າກາສາວະພັດ ສະເດັດອອກຈາກພະລາດຊະວັງໄປບວດເປັນບັນພະຊິດ ຯລຯ

ພຣະສະມະນະໂຄດົມມີ ພຣະຮູບງົດງາມໜ້າເບິ່ງ ໜ້າເຫຼື້ອມໃສ ມີພຣະສະວິວັນຜຸດຜ່ອງຫຼາຍຄືພົມ ມີພຣະວໍຣະກາຍຄືພົມ ໂອກາດທີ່ຈະໄດ້ພົບເຫັນມີໄດ້ຍາກ ຯລຯ ພຣະສະມະນະໂຄດົມ ຊົງມີອະຣິຍະສິນ ມີສິນທີ່ເປັນກຸສົນ ປະກອບດ້ວຍສິນທີ່ເປັນກຸສົນ ຯລຯ ມີພຣະວາຈາມ່ວນສຸພາບ ປະກອບດ້ວຍຄຳເວົ້າອ່ອນຫວານຂອງຊາວເມືອງ ນຸ່ມນວນ ເຂົ້າໃຈໄດ້ງ່າຍ ຯລຯ ຊົງເປັນອາຈານແລະປາຣະມາຈານຂອງໝູ່ຊົນຫຼວງຫຼາຍ ຯລຯ ຊົງຕັດຂາດຈາກການມະຄຸນບໍ່ປະດັບຕົກແຕ່ງຮ່າງກາຍ ຯລຯ ຊົງເປັນກຳວາທີ ກິຣິຍາວາທີ ບໍ່ຊົງມຸ້ງຮ້າຍຕໍ່ພາມ ຯລຯ ບວດແລ້ວຈາກຕະກູນສູງຂັດຕິຍະຕະກູນອັນບໍລິສຸດ ຯລຯ ບວດແລ້ວຈາກຕະກູນມັ່ງຄັ່ງມີຊັບຫຼາຍ ມີໂພຄະຫຼາຍ ຯລຯ ປະຊາຊົນຕ່າງບ້ານຕ່າງເມືອງພາກັນມາທູນຖາມບັນຫານຳພຣະສະມະນະໂຄດົມ ຯລຯ ພວກເທບທັງຫຼາຍເປັນພັນອົງສະແດງຄວາມສັດທາ ຂໍຖືພຣະສະມະນະໂຄດົມເປັນທີ່ເພິ່ງ ຯລຯ

ພຣະສະມະນະໂຄດົມ ຊົງມີພຣະກິດຕິສັບອັນງາມຂ່າລືໄປແນວນີ້ວ່າ ແມ່ນເພາະເຫດນີ້ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຮູ້ດ້ວຍພຣະອົງເອງໂດຍທຳພຽບພ້ອມດ້ວຍວິດຊາ ແລະ ຈອນນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກບຸລຸດຜູ້ທີ່ຄວນເຝິກໄດ້ຢ່າງຍອດຢ້ຽມ ເປັນສາດສະດາຂອງເທວະດາ ແລະ ມະນຸດທັງຫຼາຍ ເປັນພຣະພຸດ

ທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ຯລຯ ພຣະສະມະນະໂຄດົມຊົງປະກອບດ້ວຍລັກສະນະມະຫາບຸຣຸດ ໓໒ ປະການ ຯລຯ ຊົງມີປົກກະຕິຕັດເຊື້ອເຊີນ ຕັດພູກມິດອ່ອນຫວານ ບໍ່ຊົງມີພຣະພັກສະຫຍິ້ວ ຊົງມີພຣະພັກເບີກບານ ມັກຕັດທັກທວາຍກ່ອນ ຯລຯ ຊົງເປັນຜູ້ທີ່ບໍລິສັດ ໔໑ ສັກກາຣະເຄົາຣົບນັບຖືບູຊານອບນ້ອມ ຯລຯ ເທວະດາ ແລະ ມະນຸດທັງຫຼາຍເຫຼື້ອມໃສພຣະສະມະນະໂຄດົມ ຯລຯ ພວກອະມະນຸດບໍ່ກ້າບຽດບຽນ ມະນຸດໃນໝູ່ບ້ານ ຫຼື ນິຄົມທີ່ພຣະສະມະນະໂຄດົມຊົງພຳນັກຢູ່ ຯລຯ ພຣະສະມະນະໂຄດົມ ຊົງເປັນຫົວໜ້າ ຊົງເປັນຄະນາຈານ ໄດ້ຮັບການຍ້ອງຍໍວ່າຊົງເປັນຜູ້ຍອດຢ້ຽມກວ່າເຈົ້າລັດທິອື່ນ ໆ ບໍ່ຊົງຍິນດີໃນຍົດ ຄື ພວກສະມະນະພາມທີ່ຍິນດີພໍໃຈໃນຍົດ ພຣະອົງຊົງຮຸ່ງເຮືອງພຣະຍົດດ້ວຍມີວິດຊາ ແລະ ຈະຣະນະອັນຍອດຢ້ຽມ ຯລຯ

ພຣະເຈົ້າພິມພິສານ ຈອມທັບມະຄົດພ້ອມທັງພຣະຣາດຊະໂອຣົດ ພຣະມະເຫສີ ຂ້າຣາດຊະບໍຣິພານ ແລະ ໝູ່ອຳມາດຕ່າງໆມອບຊີວິດ ຂໍຖືພຣະສະມະນະໂຄດົມ ເປັນສະຣະນະ ຯລຯ ພຣະເຈົ້າປະເສນທິໂກສົນ ພ້ອມທັງພຣະຣາດຊະໂອຣົດ ພຣະມະເຫສີ ຂ້າຣາດຊະບໍຣິພານ ແລະ ໝູ່ອຳມາດຕ່າງໆມອບຊີວິດ ຂໍຖືພຣະສະມະນະໂຄດົມເປັນສະຣະນະ ຯລຯ ພາມໂປກະຂະຣະສາຕິ ພ້ອມທັງບຸດພັນລະຍາ ຂ້າຣາດຊະການ ແລະ ໝູ່ອຳມາດ ຕ່າງພາກັນມອບຊີວິດ ຂໍຖືພຣະສະມະນະໂຄດົມເປັນສະຣະນະ ພຣະສະມະນະໂຄດົມຊົງເປັນຜູ້ທີ່ພຣະເຈົ້າພິມພິສານຈອມທັບມະຄົດ ຊົງສັກກາຣະເຄົາຣົບນັບຖືບູຊານອບນ້ອມ ຯລຯ ຊົງເປັນຜູ້ທີ່ພຣະເຈົ້າປະເສນທິໂກສົນ ຊົງສັກກາຣະເຄົາຣົບນັບຖືບູຊານອບນ້ອມ ຯລຯ ຊົງເປັນຜູ້ທີ່ພາມໂປກະຂະຣະສາຕິສັກກາຣະເຄົາຣົບນັບຖືບູຊານອບນ້ອມ ຯລຯ

ພຣະສະມະນະໂຄດົມ ໄດ້ສະເດັດເຖິງເມືອງຈຳປາໂດຍລຳດັບ ປະທັບຢູ່ແຄມຝັ່ງສະໂບກຂະຣະນີຄັກຄະຣາໃນເມືອງຈຳປາ ທ່ານທັງຫຼາຍ ສະມະນະພາມທີ່ມາສູ່ເຂດໝູ່ບ້ານຂອງເຮົາຈັດວ່າ ເປັນແຂກຂອງເຮົາ ເຊິ່ງພວກເຮົາຄວນໃຫ້ກຽດອອກໄປຕອນຮັບບໍ່ແມ່ນບໍ? ພຣະສະມະນະໂຄດົມໄດ້ສະເດັດມາຮອດເມືອງຈຳປາໂດຍລຳດັບ ປະທັບຢູ່ແຄມຝັ່ງສະໂບກຂະຣະນີຄັກຄະຣາໃນເມືອງຈຳປາໃນເວລານີ້ແລ້ວ ພຣະສະມະນະໂຄດົມ ຈຶ່ງຈັດວ່າເປັນແຂກຂອງເຮົາທີ່ພວກເຮົາຄວນໃຫ້ກຽດອອກໄປຕອນຮັບ ຯລຯ ດ້ວຍເຫດນີ້ ພຣະສະມະນະໂຄດົມຈຶ່ງບໍ່ຄວນສະເດັດມາຫາເຮົາ ເຮົາຕ່າງຫາກຄວນເຂົ້າໄປເຝົ້າພຣະສະມະນະໂຄດົມ ເຮົາຮູ້ຄຸນຂອງພຣະສະມະນະໂຄດົມພຽງເທົ່ານີ້ ແຕ່ພຣະສະມະນະໂຄດົມບໍ່ແມ່ນວ່າຈະມີຄຸນພຽງແຕ່ເທົ່ານີ້ ແທ້ຈິງແລ້ວພຣະສະມະນະໂຄດົມຊົງມີພຣະຄຸນອັນອານັນນັບປະມານບໍ່ໄດ້

[໓໐໕] ເມື່ອພາມໂສນະທັນດະກ່າວແນວນີ້ ພາມເຫຼົ່ານັ້ນ ໄດ້ກ່າວຂຶ້ນອີກວ່າ "ທ່ານໂສນະທັນດະຜູ້ເປັນໃຫຍ່ ກ່າວຍ້ອງຍໍພຣະສະມະນະໂຄດົມເຖິງພຽງນີ້ ເຖິງແມ່ນວ່າ ທ່ານພຣະໂຄດົມພຣະອົງນັ້ນ ຈະປະທັບຢູ່ໄກຈາກບ່ອນນີ້ເປັນ ໑໐໐ ໂຍດ ກໍສົມຄວນຢູ່ທີ່ກຸນລະບຸດຜູ້ມີ

ສັດທາໃນຄວາມຮູ້ຈະຕ້ອງເປັນຜູ້ຂົນຂວາຍເດີນທາງເຂົ້າໄປເຝົ້າພຣະອົງ ເຖິງແມ່ນວ່າຈະຕ້ອງຂົນສະບຽງໄປນຳກໍສົມຄວນ"

ພາມໂສນະທັນດະກ່າວວ່າ "ຖ້າເປັນແນວນັ້ນ ພວກເຮົາທັງໝົດ ຈົ່ງພາກັນເຂົ້າໄປເຝົ້າພຣະສະມະນະໂຄດົມ ພ້ອມກັນທັງໝົດນີ້ເຖີ້ນ"

## ຄວາມຄິດຄຳນຶງໃນໃຈຂອງພາມໂສນະທັນດະ

[໓໐໖] ຕໍ່ມາ ພາມໂສນະທັນດະພ້ອມດ້ວຍຄະນະພາມໝູ່ໃຫຍ່ ເດີນທາງມາໄກ້ຮອດສະໂບກຂະຣະນີຄັກຄະຣາ ກຳກັງເດີນທາງຜ່ານປ່າຢູ່ໄດ້ເກີດຄວາມຄິດຄຳນຶງໃນໃຈຂຶ້ນມາຢ່າງນີ້ວ່າ "ຖ້າເຮົາຈະຖາມບັນຫາກັບພຣະສະມະນະໂຄດົມ ຫາກພຣະສະມະນະໂຄດົມຕັດແນວນີ້ວ່າ ພາມບັນຫາຂໍ້ນີ້ ທ່ານບໍ່ຄວນຖາມແນວນີ້ ຄວນຈະຖາມແນວນີ້ ບໍລິສັດກໍຈະດູໝິ່ນເຮົາໄດ້ວ່າພາມໂສນະທັນດະໂງ່ຈ້າ ບໍ່ສະຫຼາດໃນການຕັ້ງຄຳຖາມແກ່ພຣະສະມະນະໂຄດົມ ຜູ້ຖືກບໍລິສັດດູໝິ່ນແນວນີ້ຈະເພິ່ງເສື່ອມຍົດ ຜູ້ເສື່ອມຍົດກໍຈະເສື່ອມໂພຄະສົມບັດ ເພາະມີຍົດເຮົາຈຶ່ງມີໂພຄະສົມບັດ ຖ້າພຣະສະມະນະໂຄດົມຈະຖາມບັນຫາກັບເຮົາ ແລະ ເຮົາຕອບບໍ່ຖືກພຣະທັຍຂອງພຣະສະມະນະໂຄດົມ ຫາກພຣະສະມະນະໂຄດົມຈະຕັດແນວນີ້ວ່າ ພາມບັນຫາຂໍ້ນີ້ທ່ານບໍ່ຄວນຕອບແນວນີ້ ທີ່ຖືກຄວນຕອບແນວນີ້ ບໍລິສັດກໍຈະດູໝິ່ນເຮົາ ເພາະເຫດນັ້ນວ່າ ພາມໂສນະທັນດະໂງ່ຈ້າ ບໍ່ອາດຕອບບັນຫາໃຫ້ຖືກພຣະທັຍຂອງພຣະສະມະນະໂຄດົມໄດ້ ຜູ້ທີ່ຖືກບໍລິສັດດູໝິ່ນແນວນີ້ຈະເພິ່ງເສື່ອມຍົດ ຜູ້ເສື່ອມຍົດກໍຈະເສື່ອມໂພຄະສົມບັດ ເພາະມີຍົດເຮົາຈຶ່ງມີໂພຄະສົມບັດ ອັນໜຶ່ງ ເຮົາໄດ້ເດີນທາງມາໃກ້ພຽງນີ້ແລ້ວ ຍັງບໍ່ທັນໄດ້ເຂົ້າເຝົ້າພຣະອົງແຕ່ຄິດຈະກັບແລ້ວ ບໍລິສັດກໍຈະດູໝິ່ນເຮົາໄດ້ວ່າ ພາມໂສນະທັນດະຖືໂຕເປັນຄົນຂີ້ຢ້ານບໍ່ກ້າເຂົ້າເຝົ້າພຣະສະມະນະໂຄດົມ ທັງທີ່ໄດ້ເດີນທາງມາໃກ້ພຽງນີ້ແລ້ວ ຍັງບໍ່ທັນໄດ້ເຂົ້າເຝົ້າ ເປັນຫຍັງ ຈຶ່ງຫັນກັບແນວນີ້ ຜູ້ຖືກບໍລິສັດດູໝິ່ນຈະເພິ່ງເສື່ອມຍົດ ຜູ້ເສື່ອມຍົດກໍຈະເສື່ອມໂພຄະສົມບັດ ເພາະມີຍົດເຮົາຈຶ່ງມີໂພຄະສົມບັດ"

[໓໐໗] ລຳດັບຕໍ່ມາ ພາມໂສນະທັນດະພິຈະຣະນາເບິ່ງຮອບຄອບເຊັ່ນນັ້ນແລ້ວ ຈຶ່ງຈີ່ໃຈເຂົ້າເຝົ້າພຣະຜູ້ມີພຣະພາກເຖິງທີ່ປະທັບ ເພື່ອສົນທະນາກັບພຣະຜູ້ມີພຣະພາກ ເມື່ອໄດ້ທັກທວາຍພໍຄຸ້ນເຄີຍກັນດີແລ້ວ ຈຶ່ງໄດ້ນັ່ງລົງໃນທີ່ສົມຄວນສ່ວນຂອງຕົນ ຝ່າຍ ພາມ ແລະ ຄະຫະບໍດີຊາວເມືອງຈຳປາບາງພວກກົ້ມລົງຂາບພຣະຜູ້ມີພຣະພາກເຈົ້າ ບາງພວກສົນທະນາກັນ ບາງພວກໄຫວ້ໄປທາງພຣະຜູ້ມີພຣະພາກເຈົ້າບາງພວກປະກາດຊື່ ແລະ ຕະກູນຂອງຕົນ ບາງພວກນິ່ງເສີຍແລ້ວນັ່ງໃນທີ່ສົມຄວນຂອງຕົນ

[ຂ໐໙] ໃນຂະນະນັ້ນເອງ ພາມໂສນະທັນດະ ນັ່ງວິຕົກເຖິງແຕ່ເລື້ອງນັ້ນອີກວ່າ "ຖ້າເຮົາຈະຖາມບັນຫາກັບພຣະສະມະນະໂຄດົມ ຫາກພຣະສະມະນະໂຄດົມຕັດແນວນີ້ວ່າ ພາມບັນຫາຂໍ້ນີ້ທ່ານບໍ່ຄວນຖາມແນວນີ້ ທີ່ຖືກຄວນຈະຖາມແນວນີ້ ບໍລິສັດກໍຈະດູໝິ່ນເຮົາເພາະເຫດນັ້ນວ່າ ພາມໂສນະທັນດະໂງ່ຈ້າ ບໍ່ສະຫຼາດໃນການຕັ້ງຄໍາຖາມຕໍ່ພຣະສະມະນະໂຄດົມ ຜູ້ຖືກບໍລິສັດດູໝິ່ນຈະເພິ່ງເສື່ອມຍົດ ຜູ້ເສື່ອມຍົດກໍຈະເສື່ອມໂພຄະສົມບັດ ເພາະມີຍົດເຮົາຈຶ່ງມີໂພຄະສົມບັດ ຖ້າພຣະສະມະນະໂຄດົມຈະຖາມບັນຫາກັບເຮົາ ແລະ ເຮົາຕອບບໍ່ຖືກພຣະທັຍຂອງພຣະສະມະນະໂຄດົມ ຫາກພຣະສະມະນະໂຄດົມຈະຕັດແນວນີ້ວ່າ ພາມບັນຫາຂໍ້ນີ້ທ່ານບໍ່ຄວນຕອບແນວນີ້ ທີ່ຖືກຄວນຕອບແນວນີ້ ບໍລິສັດກໍຈະດູໝິ່ນເຮົາເພາະເຫດນັ້ນວ່າ ພາມໂສນະທັນດະໂງ່ຈ້າ ບໍ່ສະຫຼານໃນການຕອບບັນຫາໃຫ້ຖືກພຣະທັຍຂອງພຣະສະມະນະໂຄດົມ ຜູ້ຖືກບໍລິສັດດູໝິ່ນຈະເພິ່ງເສື່ອມຍົດ ຜູ້ເສື່ອມຍົດກໍຈະເສື່ອມໂພຄະສົມບັດ ເພາະມີຍົດເຮົາຈຶ່ງມີໂພຄະສົມບັດ ໂອນໍ ຂໍໃຫ້ພຣະສະມະນະໂຄດົມຕັດຖາມບັນຫາກັບເຮົາເລື້ອງໄຕຣເພດ ອັນເປັນຄວາມຮູ້ຂອງອາຈານເຮົາ ເຮົາຈະໄດ້ຕອບໃຫ້ຖືກພຣະທັຍຂອງພຣະສະມະນະໂຄ ດົມໄດ້"

## ສິ່ງທີ່ບັນຍັດວ່າເປັນພາມ

[ຂ໐໙] ລໍາດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ຄວາມຄິດຄໍານຶງໃນໃຈຂອງພາມດ້ວຍພຣະທັຍຂອງພຣະອົງ ຊົງພຣະດໍາລິວ່າ "ພາມໂສນະທັນດະຜູ້ນີ້ ກໍາລັງອຶດອັດໃຈໃນການທີ່ຈະສົນທະນາກັບເຮົາ ຖ້າຈັ່ງຊັ້ນ ເຮົາຄວນຖາມບັນຫາກັບພາມໃນເລື້ອງໄຕຣເພດ ອັນເປັນຄວາມຮູ້ຂອງອາຈານພາມຜູ້ນີ້ເຖີ້ນ" ເມື່ອແລ້ວຈຶ່ງໄດ້ຕັດຖາມພາມຂຶ້ນວ່າ "ພາມ ພາມຢ່າງພວກທ່ານເມື່ອຈະບັນຍັດຮຽກຜູ້ປະກອບໄປດ້ວຍຄຸນສົມບັດພຽງເທົ່າໃດວ່າ ເປັນພາມ ແລະ ເມື່ອຈະປະຕິຍານຮຽກຕົວເອງວ່າ "ເຮົາເປັນພາມ" ກໍເວົ້າໄດ້ເຕັມປາກຊອບດ້ວຍທໍາບໍ່ກາຍເປັນຜູ້ເວົ້າຕົວະ"

[ຂ໑໐] ເມື່ອໄດຟັງຄໍາຖາມນັ້ນແລ້ວ ພາມໂສນະທັນດະຄິດວ່າ "ເມື່ອເຮົາປາດຖະໜາມຸ້ງຫວັງຕັ້ງໃຈຕ້ອງການວ່າ ໂອນໍ ຂໍໃຫ້ພຣະສະມະນະໂຄດົມ ຕັດຖາມບັນຫາກັບເຮົາໃນເລື້ອງໄຕຣເພດ ອັນເປັນຄວາມຮູ້ຂອງອາຈານເຮົາ ເພື່ອທີ່ເຮົາຈະຕອບໃຫ້ຖືກພຣະທັຍຂອງພຣະສະມະນະໂຄດົມໄດ້ ບັງເອີນແທ້ນໍ ທີ່ພຣະສະມະນະໂຄດົມຕັດຖາມບັນຫາກັບເຮົາໃນເລື້ອງໄຕຣເພດອັນເປັນຄວາມຮູ້ຂອງອາຈານເຮົາ ການທີ່ເຮົາຈະຕອບໃຫ້ຖືກພຣະທັຍຂອງພຣະສະມະນະໂຄດົມເປັນເຮືອງທີ່ເປັນໄປໄດ້ແລ້ວ"

## ຄຸນສົມບັດຂອງຜູ້ເປັນພາມ

[ຂ໑໑] ທັນໃດນັ້ນ ພາມໂສນະທັນດະຢືດກາຍຕັ້ງເອິກຂຶ້ນແນມຫຼຽວເບິ່ງບໍລິສັດແລ້ວຫັນໄປທາງພຣະຜູ້ມີພຣະພາກຂາບທູນຕອບວ່າ "ທ່ານພຣະໂຄດົມ ພວກພາມຈະບັນຍັດຮຽກຜູ້

ປະກອບໄປດ້ວຍຄຸນສົມບັດ ໕ ປະການວ່າ ເປັນພາມ ແລະ ເມື່ອເຂົາຈະປະຕິຍານໂຕເອງວ່າ "ເຮົາເປັນພາມ" ກໍເວົ້າໄດ້ເຕັມປາກໂດຍຊອບທໍາ ທັງບໍ່ເປັນຜູ້ເວົ້າຕົວະນໍາ ຄຸນສົມບັດ ໕ ປະການນັ້ນ ມີຢ່າງໃດແດ່? ຄື

໑. ເປັນຜູ້ມີຊາດກໍາເນີດດີທັງຝ່າຍບິດາ ແລະ ຝ່າຍມານດາ ຖືປະຕິສົນທິໂດຍເລືອດບໍລິສຸດຕະຫຼອດເຈັດອາຍຸໄຂຂອງບັນພະບຸລຸດ ບໍ່ມີໃຜຈະຄັດຄ້ານຕໍາໜິໄດ້ ເພາະການອ້າງເຖິງຊາດຕະກູນ

໒. ເປັນຜູ້ຄົງແກ່ຮຽນ ຊົງຈໍາມົນຕຣາ ຮູ້ຈົບໄຕຣເພດພ້ອມທັງນິຄັນທຸສາດ ເກຕຸຕະສາດ ອັກສອນສາດ ແລະ ປະຫວັດສາດ ເຂົ້າໃຈແມ່ບົດ ແລະ ໄວຍາກອນ ຊໍານານໂລກາຍະຕະສາດ ແລະ ລັກສະນະມະຫາບຸຣຸດ

໓. ເປັນຜູ້ມີຮູບງາມເປັນຕາໜ້າເບິ່ງໜ້າເຫຼື້ອມໃສ ມີຜິວພັນຜຸດຜ່ອງຄືພົມ ມີກາຍຄືພົມຫາໂອກາດທີ່ຈະໄດ້ພົບເຫັນໄດ້ຍາກ

໔. ເປັນຜູ້ມີສິນ ມີສິນທີ່ຈະເລີນ ປະກອບດ້ວຍສິນທີ່ຈະເລີນ

໕. ເປັນບັນດິດ ມີປັນຍາລໍາດັບທີ່ ໑ ຫຼື ທີ່ ໒ ໃນບັນດາພາມຜູ້ໄດ້ຮັບການບູຊາ

ພວກພາມຈະບັນຍັດຮຽກຜູ້ປະກອບດ້ວຍຄຸນສົມບັດ ໕ ປະການແນວນີ້ ວ່າເປັນພາມ ແລະເມື່ອເຂົາປະຕິຍານໂຕເອງວ່າ "ເຮົາເປັນພາມ" ກໍເວົ້າໄດ້ເຕັມປາກໂດຍຊອມທໍາ ແລະຈະບໍ່ເປັນການເວົ້າຕົວະຜູ້ອື່ນນໍາ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມບັນດາຄຸນສົມບັດ ໕ ປະການນັ້ນ (ຫາກ) ເວັ້ນເສຍປະການ ໑ ພວກພາມຈະຮຽກຜູ້ປະກອບດ້ວຍຄຸນສົມບັດພຽງ ໔ ຢ່າງວ່າ ເປັນພາມໄດ້ຫຼືບໍ່? ແລະ ເມື່ອເຂົາປະຕິຍານໂຕເອງວ່າ "ເຮົາເປັນພາມ" ກໍເວົ້າໄດ້ເຕັມປາກໂດຍຊອມທໍາ ແລະ ຈະບໍ່ເປັນຜູ້ເວົ້າຕົວະໄປນໍາ

ພາມໂສນະທັນດະຂາບທູນຕອບວ່າ "ໄດ້ທ່ານພຣະໂຄດົມ ບັນດາຄຸນສົມບັດ ໕ ປະການນັ້ນ ເວັ້ນເລື້ອງຜິວພັນຢ່າງໜຶ່ງໄປກໍໄດ້ ເພາະເລື້ອງຜິວພັນບໍ່ສໍາຄັນຫຼາຍ ບຸກຄົນຊື່ວ່າເປັນພາມເພາະວ່າ

໑. ເປັນຜູ້ມີຊາດກໍາເນີດທີ່ດີທັງຝ່າຍບິດາ ແລະ ຝ່າຍມານດາ ຖືປະຕິສົນທິດ້ວຍສາຍເລືອດບໍລິສຸດຕະຫຼອດເຈັດຊົ່ວບັນພະບຸລຸດ ບໍ່ມີໃຜຈະຄັດຄ້ານຕໍາໜິໄດ້ເພາະອ້າງເຖິງຊາດຕະກູນ

໔. ເປັນຜູ້ຄົງແກ່ຮຽນ ຊົງຈໍາມົນຕຣາຮູ້ຈົບໄຕຣເພດພ້ອມທັງນິຄັນຖຸສາດ ເກຕຸຕະສາດ ອັກສອນສາດ ແລະ ປະຫວັດສາດ ເຂົ້າໃຈແມ່ບົດ ແລະ ໄວຍາກອນ ຊໍານານໂລກາຍະຕະສາດແລະລັກສະນະມະຫາບຸຣຸດ

໓. ເປັນຜູ້ມີສິນ ມີສິນທີ່ຈະເລີນ ປະກອບດ້ວຍສິນທີ່ຈະເລີນ

໔. ເປັນບັນດິດ ມີປັນຍາລໍາດັບທີ່ ໑ ຫຼື ທີ່ ໔ ໃນບັນດາພາມຜູ້ໄດ້ຮັບການບູຊາ

ພວກພາມຈະບັນຍັດຮຽກຜູ້ປະກອບດ້ວຍຄຸນສົມບັດ ໔ ປະການແນວນີ້ວ່າ ເປັນພາມ ແລະເມື່ອເຂົາປະຕິຍານໂຕເອງວ່າ "ເຮົາເປັນພາມ" ກໍເວົ້າໄດ້ເຕັມປາກໂດຍຊອມທໍາ ແລະ ຈະບໍ່ເປັນຜູ້ເວົ້າຕົວະໄປນໍາ

[໓໑໔] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມບັນດາຄຸນສົມບັດ ໔ ປະການນີ້ (ຫາກ) ເວັ້ນເສຍ ໑ ຢ່າງ ພວກພາມຈະບັນຍັດຮຽກຜູ້ປະກອບດ້ວຍຄຸນສົມບັດ ໓ ປະການແນວນີ້ວ່າ ເປັນພາມ ແລະ ເມື່ອເຂົາປະຕິຍານໂຕເອງວ່າ "ເຮົາເປັນພາມ" ກໍເວົ້າໄດ້ເຕັມປາກໂດຍຊອມທໍາ ແລະ ຈະບໍ່ເປັນຜູ້ເວົ້າຕົວະໄປນໍາ

ພາມໂສນະທັນດະຂາບທູນຕອບວ່າ "ໄດ້ທ່ານພຣະໂຄດົມ ບັນດາຄຸນສົມບັດ ໔ ຢ່າງ ເວັ້ນຂໍ້ມົນຕຣາເສຍຢ່າງໜຶ່ງກໍໄດ້ ແນວນີ້ບຸກຄົນຊື່ວ່າເປັນພາມຍ້ອນວ່າ

໑. ເປັນຜູ້ມີຊາດກໍາເນີດດີ ທັງຝ່າຍບິດາ ແລະ ຝ່າຍມານດາ ຖືປະຕິສົນທິບໍລິສຸດດີຕະຫຼອດເຈັດຊົ່ວບັນພະບຸລຸດ ບໍ່ມີໃຜຈະຄັດຄ້ານຕໍາໜິໄດ້ ເພາະອ້າງເຖິງຊາດຕະກູນ

໒. ເປັນຜູ້ມີສິນ ມີສິນທີ່ຈະເລີນ ປະກອບດ້ວຍສິນທີ່ຈະເລີນ

໓. ເປັນບັນດິດມີປັນຍາລໍາດັບທີ່ ໑ ຫຼື ທີ່ ໒ ໃນບັນດາພາມຜູ້ໄດ້ຮັບການບູຊາ

ພວກພາມຈະບັນຍັດຮຽກຜູ້ປະກອບດ້ວຍຄຸນສົມບັດ ໓ ປະການແນວນີ້ວ່າ ເປັນພາມ ແລະເມື່ອເຂົາປະຕິຍານໂຕເອງວ່າ "ເຮົາເປັນພາມ" ກໍເວົ້າໄດ້ເຕັມປາກໂດຍຊອມທໍາ ແລະ ຈະບໍ່ເປັນຜູ້ເວົ້າຕົວະໄປນໍາ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມບັນດາຄຸນສົມບັດ ໓ ແນວນີ້ (ຫາກ) ເວັ້ນເສຍ ໑ ຢ່າງ ພວກພາມຈະຮຽກຜູ້ປະກອບດ້ວຍຄຸນສົມບັດພຽງ ໒ ຢ່າງວ່າ ເປັນພາມໄດ້ ຫຼື ບໍ່ ແລະ ເມື່ອເຂົາປະຕິຍານໂຕເອງວ່າ "ເຮົາເປັນພາມ" ກໍເວົ້າໄດ້ເຕັມປາກໂດຍຊອມທໍາ ແລະ ຈະບໍ່ເປັນຜູ້ເວົ້າຕົວໄປນໍາ

ພາມໂສນະທັນດະຂາບທູນຕອບວ່າ "ໄດ້ທ່ານພຣະໂຄດົມ ບັນດາຄຸນສົມບັດ ໕ ຢ່າງ ເວັ້ນກໍາເນີດເສຍຢ່າງໜຶ່ງກໍໄດ້ ບຸກຄົນຊື່ວ່າເປັນພາມຍ້ອນວ່າ

໑. ເປັນຜູ້ມີສິນ ມີສິນທີ່ຈະເລີນ ປະກອບດ້ວຍສິນທີ່ຈະເລີນ

໔. ເປັນບັນດິດ ມີປັນຍາລໍາດັບທີ່ ໑ ຫຼື ທີ່ ໔ ໃນບັນດາພາມຜູ້ໄດ້ຮັບການບູຊາ

ພວກພາມຈະຮຽກຜູ້ປະກອບດ້ວຍຄຸນສົມບັດພຽງ ໔ ຢ່າງ ວ່າເປັນພາມໄດ້ຫຼືບໍ່? ແລະ ເມື່ອເຂົາປະຕິຍານໂຕເອງວ່າ "ເຮົາເປັນພາມ" ກໍເວົ້າໄດ້ເຕັມປາກໂດຍຊອບທໍາ ແລະ ຈະບໍ່ເປັນຜູ້ເວົ້າຕົວໄປນໍາ

[໓໑໓] ເມື່ອພາມໂສນະທັນດະຂາບທູນແນວນີ້ ພວກພາມເຫຼົ່ານັ້ນໄດ້ກ່າວຂຶ້ນມາວ່າ "ທ່ານໂສນະທັນດະຢ່າເວົ້າແນວນັ້ນເລີຍ ທ່ານໂສນະທັນດະຈົ່ງຢ່າເວົ້າແນວນັ້ນເລີຍ ທ່ານໂສນະທັນດະລົບຫລູ່ຜິວພັນ ລົບຫລູ່ມົນຕຣາ ລົບຫລູ່ຊາດກໍາເນີດ ເວົ້າໄປຕາມວາທະຂອງພຣະສະມະນະໂຄດົມຢ່າງດຽວ

[໓໑໔] ລໍາດັບນັ້ນ ພຣະຜູ້ມີພຣະພາກຕັດຂຶ້ນວ່າ "ຖ້າພວກທ່ານຄິດວ່າ ພາມໂສນະທັນດະສຶກສາມາໜ້ອຍ ເວົ້າບໍ່ຖືກ ໂງ່ຈ້າ ແລະ ບໍ່ສົມຄວນເຈຣະຈາໂຕ້ຕອບກັບພຣະສະມະນະໂຄດົມໄດ້" ພາມໂສນະທັນດະຈົ່ງຢຸດເຈຣະຈາ ພວກທ່ານຈົ່ງເຈຣະຈາໂຕ້ຕອບກັບເຮົາແທນ ແຕ່ຫາກພວກທ່ານຄິດວ່າ "ພາມໂສນະທັນດະສຶກສາມາຫຼາຍ ເວົ້າສົມຄວນແກ່ເຫດ ສະຫຼາດ ແລະ ສາມາດເຈຣະຈາໂຕ້ຕອບກັບພຣະສະມະນະໂຄດົມໄດ້" ພວກທ່ານກໍຈົ່ງຢຸດ ພາມໂສນະທັນດະຈົ່ງເຈຣະຈາໂຕ້ຕອບກັບເຮົາ (ຕໍ່ໄປ)

[໓໑໕] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ ພາມໂສນະທັນດະໄດ້ຂາບທູນພຣະຜູ້ມີພຣະພາກວ່າ "ຂໍທ່ານພຣະໂຄດົມຊົງຢຸດ ຊົງນິດຢູ່ເຖີ້ນ ຂ້າພຣະອົງເອງຈັກຕອບພວກເຂົາໂດຍສົມຄວນແກ່ເຫດ" ແລ້ວກ່າວກັບພວກພາມເຫຼົ່ານັ້ນວ່າ "ທ່ານຜູ້ຈະເລີນທັງຫຼາຍຢ່າໄດ້ເວົ້າ ຢ່າໄດ້ວ່າແນວນີ້ເລີຍວ່າ "ທ່ານໂສນະທັນດະ ລົບຫລູ່ຜິວພັນ ລົບຫລູ່ມົນຕຣາ ລົບຫລູ່ຊາດກໍາເນີດ ເວົ້າໄປຕາມວາທະຂອງພຣະສະມະນະໂຄດົມຢ່າງດຽວເທົ່ານັ້ນ" ແທ້ຈິງ ເຮົາບໍ່ໄດ້ລົບຫລູ່ຜິວພັນ ມົນຕຣາ ຫຼື ຊາດກໍາເນີດເລີຍ

[໓໑໖] ເວລານັ້ນ ອັງຄະກະມານົບຜູ້ເປັນຫຼານຂອງພາມໂສນະທັນດະ ນັ່ງຢູ່ໃນບໍລິສັດນັ້ນນໍາ ພາມໂສນະທັນດະ ໄດ້ກ່າວກະພາມເຫຼົ່ານັ້ນວ່າ "ທ່ານຜູ້ຈະເລີນທັງຫຼາຍ ເຫັນອັງຄະກະມານົບຫຼານຂອງເຮົາຜູ້ນີ້ຫຼືບໍ່?" "ເຫັນຂ້ານ້ອຍ" "ອັງຄະກະມານົບເປັນຜູ້ມີຮູບງາມ ໜ້າເບິ່ງໜ້າເຫຼື້ອມໃສ ມີຜິວພັນຜຸດຜ່ອງຄືພົມ ມີກາຍຄືພົມ ຫາໂອກາດທີ່ຈະເຫັນໄດ້ຍາກໃນທີ່ປະຊຸມນີ້

ນອກຈາກພຣະສະມະນະໂຄດົມແລ້ວ ບໍ່ມີໃຜມີຜິວພັນສະເໝີກັບອັງຄະກະມານົບໄດ້ອີກເລີຍ ອັງຄະກະມານົບເປັນຜູ້ຄົງແກ່ຮຽນ ຊົງຈຳມົນຕຣາ ຮູ້ຈົບໄຕຣເພດພ້ອມທັງນິຄັນຖຸສາດ ເກຕຸພະສາດ ອັກສອນສາດ ແລະ ປະຫວັດສາດ ເຂົ້າໃຈໂຕບົດ ແລະ ໄວຍາກອນຊຳນານໂລກາຍະຕະສາດ ແລະ ລັກສະນະມະຫາບຸຣຸດ ເຮົາເປັນຜູ້ສອນມົນແກ່ເຂົາ ອັງຄະກະມານົບເປັນຜູ້ມີຊາດກຳເນີດດີ ທັງຝ່າຍບິດາ ແລະ ຝ່າຍມານດາ ຖືປະຕິ ສົນທິດ້ວຍສາຍເລືອດບໍລິສຸດດີຕະຫຼອດເຈັດຊົ່ວບັນພະບຸລຸດ ບໍ່ມີໃຜຈະຄັດຄ້ານຕຳໜິໄດ້ ເພາະອ້າງເຖິງຊາດຕະ ກູນ ເຮົາຮູ້ຈັກບິດາມານດາຂອງເຂົາ ແຕ່ອັງຄະກະມານົບຍັງຂ້າສັດ ຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໃຫ້ ລ່ວງລະເມີດພັນລະຍາຂອງຜູ້ອື່ນ ເວົ້າຕົວະ ດື່ມນ້ຳເມົາ ໃນການມີຜິວພັນ ມີມົນຕຣາ ແລະ ຊາດກຳເນີດ ຈັກມີປະໂຫຍດອັນໃດ ເພາະບຸກຄົນໄດ້ຊື່ວ່າເປັນພາມເພາະເປັນຜູ້ມີສີນ ມີສີນທີ່ຈະເລີນປະກອບດ້ວຍສີນທີ່ຈະເລີນ ແລະ ເປັນບັນດິດ ມີປັນຍາລຳດັບທີ່ ໑ ຫຼື ທີ່ ໔ ໃນບັນດາພາມຜູ້ໄດ້ຮັບການບູຊາ ພວກພາມຈະຮຽກຜູ້ປະກອບດ້ວຍຄຸນສົມບັດພຽງ ໔ ຢ່າງນີ້ວ່າ ເປັນພາມໄດ້ ແລະເມື່ອເຂົາປະຕິຍານໂຕເອງວ່າ "ເຮົາເປັນພາມ" ກໍເວົ້າໄດ້ເຕັມປາກໂດຍຊອບທຳ ແລະ ຈະບໍ່ເປັນຜູ້ເວົ້າຕົວໄປນຳ

## ເລື້ອງສີນແລະປັນຍາ

[໖໑໗] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມ ບັນດາຄຸນສົມບັດ ໔ ແນວນີ້ (ຫາກ) ເວັ້ນເສຍອີກ ໑ ຢ່າງ ພວກພາມຈະຮຽກຜູ້ປະກອບດ້ວຍຄຸນສົມບັດພຽງຢ່າງດຽວວ່າ ເປັນພາມໄດ້ຫຼືບໍ່? ແລະເມື່ອເຂົາປະຕິຍານໂຕເອງວ່າ "ເຮົາເປັນພາມ" ກໍເວົ້າໄດ້ເຕັມປາກໂດຍຊອບທຳ ແລະຈະບໍ່ເປັນຜູ້ເວົ້າຕົວໄປນຳ

ພາມໂສນະທັນດະຂາບທູນວ່າ "ຫາບໍ່ໄດ້ໃນຂໍ້ນີ້ ທ່ານພຣະໂຄດົມເພາະປັນຍາຕ້ອງມີສີນຊ່ວຍຊຳຣະໃຫ້ບໍລິສຸດ ສີນກໍຕ້ອງມີປັນຍາຊ່ວຍຊຳຣະໃຫ້ບໍລິສຸດ ປັນຍາຍ່ອມມີໃນທີ່ທີ່ມີສີນ ສີນຍ່ອມມີໃນທີ່ທີ່ມີປັນຍາ ປັນຍາຍ່ອມມີແກ່ຜູ້ມີສີນ ສີນຍ່ອມມີແກ່ຜູ້ມີປັນຍາ ນັກປາດຍ້ອງຍໍສີນ ແລະ ປັນຍາວ່າ ເປັນສິ່ງລ້ຳເລີດປະເສີດໃນໂລກ ປຽບຄື ບຸກຄົນໃຊ້ມືລ້າງມື ຫຼື ໃຊ້ຂາລ້າງຂາ ສັນໃດ ປັນຍາຕ້ອງມີສີນຊ່ວຍຊຳຣະໃຫ້ບໍລິສຸດ ສີນກໍຕ້ອງມີປັນຍາຊ່ວຍຊຳຣະໃຫ້ບໍລິສຸດ ປັນຍາຍ່ອມມີໃນທີ່ທີ່ມີສີນ ສີນຍ່ອມມີໃນທີ່ທີ່ມີປັນຍາ ປັນຍາຍ່ອມມີແກ່ຜູ້ມີສີນ ສີນຍ່ອມມີແກ່ຜູ້ມີປັນຍານັກປາດຍ້ອງຍໍສີນ ແລະປັນຍາວ່າ ເປັນສິ່ງລ້ຳເລີດໃນໂລກສັນນັ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ເປັນແນວນັ້ນແລ ພາມ ເປັນແນວນັ້ນແລ ພາມ ປັນຍາຕ້ອງມີ ສີນຊ່ວຍຊຳຣະໃຫ້ບໍລິສຸດ ສີນກໍຕ້ອງມີປັນຍາຊ່ວຍຊຳຣະໃຫ້ບໍລິສຸດ ປັນຍາຍ່ອມມີໃນທີ່ທີ່ມີສີນ ສີນຍ່ອມມີໃນທີ່ທີ່ມີປັນຍາ ປັນຍາຍ່ອມມີແກ່ຜູ້ມີສີນ ສີນຍ່ອມມີແກ່ຜູ້ມີປັນຍາ ນັກປາດຍ້ອງຍໍສີນແລະປັນຍາວ່າ ເປັນສິ່ງລ້ຳເລີດປະເສີດໃນໂລກ ປຽບຄື ບຸກຄົນໃຊ້ມືລ້າງມື ຫຼື ໃຊ້ຂາ

ລ້າງຂາສັນໃດ ປັນຍາຕ້ອງມີສີນຊ່ວຍຊໍາຣະໃຫ້ບໍລິສຸດ ສີນກໍຕ້ອງມີປັນຍາຊ່ວຍຊໍາຣະໃຫ້ບໍລິສຸດ ປັນຍາຍ່ອມມີໃນທີ່ທີ່ມີສີນ ສີນຍ່ອມມີໃນທີ່ທີ່ມີປັນຍາ ປັນຍາຍ່ອມມີແກ່ຜູ້ມີສີນ ສີນຍ່ອມມີແກ່ຜູ້ມີປັນຍາ ນັກປາດຍ້ອງຍໍສີນ ແລະ ປັນຍາວ່າເປັນສິ່ງລໍ້າເລີດປະເສີດໃນໂລກສັນນັ້ນ

[ຆ໑໗] ພຣະຜູ້ມີພຣະພາກເຈົ້າຕັດຖາມຕໍ່ໄປອີກວ່າ "ພາມ ສີນນັ້ນເປັນແນວໃດ? ປັນຍານັ້ນເປັນແນວໃດນໍ?"

ພາມໂສນະທັນດະທູນຕອບວ່າ "ທ່ານພຣະໂຄດົມ ໃນເລື້ອງນີ້ພວກຂ້າພຣະອົງ ມີຄວາມຮູ້ພຽງເທົ່ານີ້ ຂໍປະທານວະໂຣກາດ ຂໍທ່ານພຣະໂຄດົມໂຜດສະແດງ ຂະຫຍາຍຄວາມໃນຫົວຂໍ້ທໍານີ້ໃຫ້ຊັດແຈ້ງ ເພື່ອປະດັບສະຕິປັນຍາແກ່ພວກຜູ້ຂ້າຜູ້ມີປັນຍາໜ້ອຍດ້ວຍເຖີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຖ້າຈັ່ງຊັ້ນ ທ່ານຈົ່ງຟັງ ຈົ່ງຕັ້ງໃຈໃຫ້ດີ ເຮົາຈັກສະແດງໃຫ້ທ່ານຮູ້"

ພາມທູນຮັບພຣະສະໜອງ ພຣະດໍາຣັດຂອງພຣະຜູ້ມີພຣະພາກ ແລ້ວນັ່ງນິ່ງຢູ່ດ້ວຍອາການສັງລວມ

ພຣະຜູ້ມີພຣະພາກເຈົ້າຕັດສະແດງທໍາແກ່ພາມວ່າ "ພາມ ຕະຖາຄົດອຸບັດຂຶ້ນມາໃນໂລກນີ້ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍຕົນເອງໂດຍຊອບ ຯລຯ (ເພິ່ງນໍາຂໍ້ຄວາມເຕັມໃນສາມັນຍະຜົນສູດມາໃສ່ໄວ້ໃນບ່ອນນີ້) ພິກຂຸຊື່ວ່າ ສົມບູນດ້ວຍສີນ ເປັນແນວນີ້ແລ ຯລຯ ບັນລຸປະຖົມມະຊານຢູ່ ບັນລຸທຸຕິຍະຊານຢູ່ ບັນລຸຕະຕິຍະຊານຢູ່ ບັນລຸຈະຕຸດຖະຊານຢູ່ ຯລຯ ນ້ອມຈິດໄປເພື່ອຍານະທັດສະນະ ຯລຯ ນີ້ເປັນປັນຍາຂອງພິກຂຸນັ້ນ ຯລຯ ຮູ້ຊັດແຈ້ງວ່າ "ຊາດສິ້ນແລ້ວຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສໍາເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ" ນີ້ ເປັນປັນຍາຂອງພິກຂຸນັ້ນ ພາມ ປັນຍານັ້ນ ເປັນແນວນີ້ແລ

## ພາມໂສນະທັນດະປະກາດຕົນເປັນອຸປາສົກ

[ຆ໑໘] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພາມໂສນະທັນດະໄດ້ຂາບທູນວ່າ "ຂ້າແຕ່ ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມຊັດແຈ້ງມ່ວນຫຼາຍ ຂ້າແຕ່ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມຊັດແຈ້ງມ່ວນແທ້ ທ່ານພຣະໂຄດົມຊົງປະກາດທໍາໄດ້ຊັດແຈ້ງໂດຍປະການຕ່າງ ໆ ປຽບຄື ບຸກຄົນຫງາຍຂອງທີ່ງ້ວມຢູ່ ເປີດຂອງທີ່ປິດໄວ້ ບອກທາງແກ່ຜູ້ຫຼົງທາງ ຫຼື ເຍືອງໄຟໃນທີ່ມືດໂດຍຕັ້ງໃຈວ່າ ຄົນມີຕາດີຈັກແນມເຫັນທາງໄດ້ ຂ້າພຣະອົງນີ້ຂໍຖືທ່ານພຣະໂຄດົມພ້ອມທັງພຣະທໍາ ແລະ ພຣະສົງວ່າ ເປັນສະຣະນະອັນສູງສຸດ ຂໍທ່ານພຣະໂຄດົມ ຈົ່ງຊົງຈືຂ້າພຣະອົງວ່າ ເປັນອຸປາສົກຜູ້ເຖິງສະຣະນະ ນັບຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນ

ຕະຫຼອດຊີວິດ ຂໍທ່ານພຣະໂຄດົມພ້ອມດ້ວຍພິກຂຸສົງ ໂຜດຮັບພັດຕາຫານຂອງຂ້າພຣະອົງໃນມື້ອື່ນນີ້ດ້ວຍເຖີ້ນ

ພຣະຜູ້ມີພຣະພາກເຈົ້າ ຊົງຮັບນິມົນດ້ວຍພຣະອາການດຸດສະດີ

[໓໔໐] ໃນທີ່ນັ້ນ ພາມໂສນະທັນດະ ເມື່ອຮູ້ອາການທີ່ພຣະຜູ້ມີພຣະພາກເຈົ້າ ຊົງຮັບນິມົນແລ້ວ ຈຶ່ງໄດ້ລຸກຈາກອາສະນະ ຂາບພຣະຜູ້ມີພຣະພາກເຈົ້າ ທຳປະທັກສິນແລ້ວຖອຍຫຼັງຫັນໂຕຍ່າງຈາກໄປ ເມື່ອຜ່ານຄືນນັ້ນໄປ ພາມໂສນະທັນດະສັ່ງໃຫ້ຈັດຂອງຂົບສັນຍ່າງປະນີດກຽມພ້ອມເອົາໄວ້ໃນນິເວດຂອງຕົນ ແລ້ວສັ່ງໃຫ້ຄົນຮັບໃຊ້ໄປຂາບທູນພັດຕະການວ່າ "ທ່ານພຣະໂຄດົມໄດ້ເວລາແລ້ວ ພັດຕາຫານສຳເລັດແລ້ວ" ພຣະຜູ້ມີພຣະພາກເຈົ້າ ຊົງຄອງອັນຕະຣະວາສົກຖືບາດ ແລະ ຈີວອນສະເດັດເຂົ້າໄປສູ່ນິເວດຂອງພາມໂສນະທັນດະ ພ້ອມດ້ວຍພິກຂຸສົງປະທັບນັ່ງເທິງອາສະນະທີ່ປູຖວາຍໄວ້ໃຫ້ ພາມໂສນະທັນດະໄດ້ນຳຂອງຂົບສັນອັນປະນີດມາປະເຄນພິກຂຸສົງ ອັນມີພຣະພຸດທະເຈົ້າເປັນປະທານໃຫ້ອີ່ມໜຳສຳຣານດ້ວຍຕົນເອງ

[໓໔໑] ເມື່ອພຣະຜູ້ມີພຣະພາກສະເຫວີຍສຳເລັດເສັດແລ້ວ ຊົງວາງພຣະຫັດອອກຈາກພາເຂົ້າແລ້ວ ພາມໂສນະທັນດະ ຈຶ່ງນັ່ງລົງໃນທີ່ສົມຄວນ ເຊິ່ງຕ່ຳກວ່າບອນນັ່ງຂອງພຣະຜູ້ມີພຣະພາກເຈົ້າ ແລ້ວຂາບທູນວ່າ "ຂ້າແດ່ ທ່ານພຣະໂຄດົມ ຖ້າຂ້າພຣະອົງຢູ່ໃນທ່າມກາງບໍລິສັດເຊັ່ນນີ້ ຈະລຸກຈາກບ່ອນນັ່ງໄປຂາບທ່ານພຣະໂຄດົມ ກໍຈະຖືກບໍລິສັດດູໝິ່ນເພາະເຫດນັ້ນໄດ້ຜູ້ຖືກບໍລິສັດດູໝິ່ນຈະເສື່ອມຍົດ ຜູ້ເສື່ອມຍົດຈະເສື່ອມໂພຄະສົມບັດ ເພາະມີຍົດຂ້າພຣະອົງຈຶ່ງມີໂພຄະສົມບັດ ຖ້າຂ້າພຣະອົງຢູ່ໃນທ່າມກາງບໍລິສັດຈະພະນົມມືເອົາໄວ້ ຂໍທ່ານພຣະໂຄດົມຊົງຮູ້ນິມິດນັ້ນວ່າ ແທນການລຸກຈາກບ່ອນນັ່ງຕ້ອນຮັບທຳຄວາມເຄົາລົບ ຖ້າຂ້າພຣະອົງຢູ່ໃນທ່າມກາງບໍລິສັດຈະແກ້ຜ້າປົກຫົວອອກ ຂໍທ່ານພຣະໂຄດົມຊົງຮູ້ວ່າ ນັ້ນເປັນການແທນການຂາບດ້ວຍສຽນເກົ້າ ຖ້າຂ້າພຣະອົງຢູ່ໃນຍານພາຫະນະຈະລົງໄປຂາບທ່ານພຣະໂຄດົມ ບໍລິສັດກໍຈະດູໝິ່ນເພາະເຫດນັ້ນໄດ້ ຜູ້ຖືກບໍລິສັດດູໝິ່ນຈະເສື່ອມຍົດ ຜູ້ເສື່ອມຍົດຈະເສື່ອມໂພກຄະສົມບັດ ເພາະມີຍົດຂ້າພຣະອົງຈຶ່ງມີໂພຄະສົມບັດ ຖ້າຂ້າພຣະອົງຢູ່ໃນຍານພາຫະນະຈະຍົກປະຕັກຂຶ້ນ ຂໍທ່ານພຣະໂຄດົມຊົງຮູ້ວ່ານັ້ນແທນການລົງຈາກຍານພາຫະນະ ຕ້ອນຮັບທຳຄວາມເຄົາລົບພຣະອົງ ຖ້າຂ້າພຣະອົງຢູ່ໃນຍານພາຫະນະຈະຫຸບຄັນຮົ່ມ ຂໍທ່ານພຣະໂຄດົມຊົງຮູ້ວ່ານັ້ນແທນການຂາບດ້ວຍສຽນເກົ້າ

[໓໔໔] ລຳດັບນັ້ນ ພຣະຜູ້ມີພຣະພາກໄດ້ຊົງຊີ້ແຈງໃຫ້ພາມໂສນະທັນດະເຫັນຊັດແຈ້ງຊັກຊວນໃຫ້ຢາກຮັບເອົາໄປປະຕິບັດ ສຸກຍູ້ໃຈໃຫ້ອາດຫານແກ້ກ້າ ປອບປະໂລມໃຈໃຫ້ສົດຊື່ນຍິນດີດ້ວຍທັມມີກະຖາແລ້ວ ຊົງລຸກຈາກອາສະນະສະເດັດຈາກໄປ

# ໕. ກູດທັນຕະສູດ

## ວ່າດ້ວຍພາມຊື່ກູດທັນຕະ

## ເລື້ອງພາມແລະຄະຫະບໍດີຊາວບ້ານຂານຸມັດ

[໓໔໓] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກສະເດັດຈາຣິກໄປໃນແຄວ້ນມະຄົດ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ປະມານ ໕໐໐ ອົງ ສະເດັດເຖິງໝູ່ບ້ານພາມຊາວມະຄົດ ຊື່ ຂານຸມັດ ປະທັບຢູ່ໃນສວນອຳພະລັດທິກາໃກ້ໝູ່ບ້ານຂານຸມັດ ສະໄໝນັ້ນ ພາມກູດທັນຕະປົກຄອງໝູ່ບ້ານຂານຸມັດ ເຊິ່ງມີປະຊາກອນ ແລະ ສັດລ້ຽງຫຼວງຫຼາຍ ມີພືດພັນທັນຍາຫານ ແລະ ນ້ຳຫຍ້າອຸດົມສົມບູນ ເປັນພຣະຣາດຊະຊັບທີ່ພຣະເຈົ້າພິມພິສານຈອມທັບມະຄົດ ພຣະຣາດຊະທານປູນບຳເໜັດໃຫ້ເປັນພົມໄທ (ສ່ວນພິເສດ)

ໃນເວລານັ້ນ ພາມກູດທັນຕະກຳລັງກຽມພິທີບູຊາມະຫາຍັນດ້ວຍງົວເຖິກ ລູກງົວເຖິກ ລູກງົວເພດແມ່ ແບ້ ແລະ ແກະຢ່າງລະ ກ໐໐ ໂຕ ໄປຜູກມັດເອົາໄວ້ນຳຫຼັກເພື່ອກຽມຂ້າບູຊາຍັນ

[໓໔໔] ພາມ ແລະ ຄະຫະບໍດີຊາວບ້ານຂານຸມັດໄດ້ຟັງຂ່າວວ່າ "ທ່ານພຣະສະມະນະໂຄດົມເປັນສັກກະຍະບຸດ ສະເດັດອອກບວດຈາກສາກະຍະຕະກູນ ສະເດັດຈາຣິກຢູ່ໃນແຄວ້ນມະຄົດ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ມີປະມານ ໕໐໐ ຮູບ ສະເດັດເຖິງໝູ່ບ້ານຂານຸມັດໂດຍລຳດັບ ປະທັບຢູ່ໃນສວນອຳພະລັດທິກາ ໃກ້ໝູ່ບ້ານຂານຸມັດ ທ່ານພຣະໂຄດົມນັ້ນມີກິດຕິສັບອັນງາມ ຊ່າລືໄປແນວນີ້ວ່າ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກພຣະອົງນັ້ນ ເປັນພຣະອະຣະຫັນຕັດສະຮູ້ດ້ວຍພຣະອົງເອງໂດຍທຳ ພຽບພ້ອມດ້ວຍວິດຊາ ແລະຈາຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກບຸຣຸດຜູ້ທີ່ຄວນເຝິກໄດ້ຢ່າງຍອດຢ້ຽມ ເປັນສາດສະດາຂອງເທວະດາ ແລະ ມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ພຣະອົງຊົງຮູ້ແຈ້ງໂລກນີ້ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະ ໝູ່ສັດ ພ້ອມທັງສະມະນະພາມ ເທວະດາ ແລະ ມະນຸດດ້ວຍພຣະອົງເອງ ແລ້ວຊົງປະກາດໃຫ້ຜູ້ອື່ນຮູ້ນຳ ຊົງສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະ ມີຄວາມງາມໃນທີ່ສຸດ ຊົງປະກາດພົມມະຈັນ ພ້ອມທັງອັດຖະ ແລະ ພະຍັນຊະນະ ບໍລິສຸດ ບໍລິບູນຄົບຖ້ວນ ການໄດ້ພົບພຣະອະຣະຫັນທັງຫຼາຍແນວນີ້ ເປັນຄວາມດີຢ່າງແທ້ຈິງ

[໓໔໕] ຕໍ່ມາ ພາມ ແລະ ຄະຫະບໍດີຊາວບ້ານຂານຸມັດ ໄດ້ອອກຈາກໝູ່ບ້ານຂານຸມັດ ຍ່າງລວມກັນເປັນໝູ່ໄປສູ່ສວນອຳພະລັດທິກາ

[໓໔໖] ໃນຂະນະນັ້ນ ພາມກູດທັນຕະກຳລັງພັກຜ່ອນກາງເວັນຢູ່ເທິງຜາສາດຊັ້ນເທິງ ແນມລົງມາເຫັນພາມ ແລະ ຄະຫະບໍດີຊາວບ້ານຂານຸມັດ ກຳລັງພາກັນຍ່າງອອກຈາກໝູ່ບ້ານຂານຸມັດລວມກັນເປັນໝູ່ໃຫຍ່ ພາກັນມຸ້ງໜ້າໄປສູ່ສວນອຳພະລັດທິກາ ຈຶ່ງຮຽກອຳມາດທີ່ເປີກສາມາຖາມວ່າ "ທ່ານອຳມາດ ພາມ ແລະ ຄະຫະບໍດີຊາວບ້ານຂານຸມັດ ທີ່ກຳລັງພາກັນຍ່າງອອກຈາກໝູ່ບ້ານຂານຸມັດລວມກັນເປັນໝູ່ໃຫຍ່ ພາກັນມຸ້ງໜ້າໄປສູ່ສວນອຳພະລັດທິກາດ້ວຍສາເຫດອັນໃດ?"

[໓໔໗] ອຳມາດທີ່ເປີກສາຕອບວ່າ "ທ່ານ ຂ້ານ້ອຍ ພຣະສະມະນະໂຄດົມເປັນສັກກະຍະບຸດ ສະເດັດອອກບວດຈາກສາກະຍະຕະກູນ ສະເດັດຈາຣິກຢູ່ໃນແຄວ້ນມະຄົດພ້ອມດ້ວຍພິກຂຸສົງໝູ່ໃຫຍ່ປະມານ ໕໐໐ ຮູບ ສະເດັດເຖິງໝູ່ບ້ານຂານຸມັດໂດຍລຳດັບ ປະທັບຢູ່ໃນສວນອຳພະລັດທິກາໃກ້ໝູ່ບ້ານຂານຸມັດ ທ່ານພຣະໂຄດົມນັ້ນ ມີກິດຕິສັບອັນງາມຂ່າລືໄປແນວນີ້ວ່າ "ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຮູ້ດ້ວຍພຣະອົງເອງໂດຍທຳ ພຽບພ້ອມດ້ວຍວິດຊາ ແລະ ຈະຣະນະ ສະເດັດໄປດີຮູ້ແຈ້ງໂລກເປັນສາຣະຖີເຝິກບຸຣຸດຜູ້ທີ່ຄວນເຝິກໄດ້ຢ່າງຍອດຢ້ຽມ ເປັນສາດສະດາຂອງເທວະດາ ແລະ ມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກ" ຄົນເຫຼົ່ານັ້ນ ພາກັນເຂົ້າໄປເຝົ້າທ່ານພຣະໂຄດົມພຣະອົງນັ້ນ

[໓໔໘] ລຳດັບນັ້ນ ພາມກູດທັນຕະຄິດວ່າ "ເຮົາໄດ້ຍິນມາວ່າ ພຣະສະມະນະໂຄດົມຊົງຮູ້ຍັນສົມບັດ ໓ ປະການ ມີອົງປະກອບ ໑໖ ສ່ວນ ເຮົາບໍ່ຮູ້ຫຍັງເລີຍ ແຕ່ເຮົາປາດຖະໜາຈະບູຊາມະຫາຍັນ ທາງທີ່ດີເຮົາຄວນເຂົ້າໄປເຝົ້າພຣະສະມະນະໂຄດົມ ແລ້ວທູນຖາມຍັນສົມບັດ ໓ ປະການ ມີອົງປະກອບ ໑໖ ນັ້ນດີກວ່າ"

[໓໔໙] ພາມກູດທັນຕະຈຶ່ງຮຽກອຳມາດທີ່ເປີກສາມາສັ່ງວ່າ "ພໍ່ອຳມາດຖ້າແນວນັ້ນທ່ານຈົ່ງໄປຫາພາມ ແລະຄະຫະບໍດີຊາວບ້ານຂານຸມັດ ເມື່ອແລ້ວຈົ່ງບອກແນວນີ້ວ່າ ທ່ານທັງຫຼາຍ ຂ້ານ້ອຍ ພາມກູດທັນຕະຝາກມາຂໍຮ້ອງທ່ານຜູ້ຈະເລີນທັງຫຼາຍວ່າ ຈົ່ງຖ້າກ່ອນພາມກູດທັນຕະຈະເຂົ້າໄປເຝົ້າພຣະສະມະນະໂຄດົມພ້ອມດ້ວຍພວກທ່ານ

ອຳມາດທີ່ເປີກສາຮັບຄຳຂອງພາມກູດທັນຕະ ແລ້ວເຂົ້າໄປຫາພາມ ແລະ ຄະຫະບໍດີຊາວບ້ານຂານຸມັດເຫຼົ່ານັ້ນ ເມື່ອແລ້ວກໍເວົ້າຂໍຮ້ອງວ່າ "ທ່ານທັງຫຼາຍ ຂ້ານ້ອຍ ພາມກູດທັນຕະຂໍຮ້ອງວ່າ ທ່ານຜູ້ຈະເລີນທັງຫຼາຍ ຈົ່ງຖ້າກ່ອນພາມກູດທັນຕະຈະເຂົ້າໄປເຝົ້າພຣະສະມະນະໂຄດົມພ້ອມດ້ວຍພວກທ່ານ

## ຄວາມເປັນຜູ້ດີຂອງພາມກູດທັນຕະ

[໓໓໐] ເວລານັ້ນ ພາມຫຼາຍຮ້ອຍຄົນພັກຢູ່ໃນໝູ່ບ້ານຂານຸມັດ ເພາະຕັ້ງໃຈຈະບໍລິໂພກມະຫາຍັນຂອງພາມກູດທັນຕະ ພໍໄດ້ຟັງວ່າ "ພາມກູດທັນຕະ ຈັກເຂົ້າໄປເຝົ້າພຣະສະມະນະໂຄດົມດ້ວຍ" ຈຶ່ງພາກັນໄປຫາພາມກູດທັນຕະ

[໓໓໑ ] ເມື່ອເຂົ້າໄປຫາແລ້ວຖາມຂຶ້ນມາວ່າ "ທ່ານກູດທັນຕະ ຈັກເຂົ້າໄປເຝົ້າພຣະສະມະນະໂຄດົມແມ່ນແທ້ບໍ?"

ພາມກູດທັນຕະຕອບວ່າ "ແມ່ນແລ້ວ ເຮົາຄິດຈະເຂົ້າໄປເຝົ້າພຣະສະມະນະໂຄດົມ"

ພວກພາມຫ້າມວ່າ "ທ່ານກູດທັນຕະ ຢ່າໄດ້ເຂົ້າໄປເຝົ້າພຣະສະມະນະໂຄດົມເລີຍ ທ່ານກູດທັນຕະບໍ່ຄວນເຂົ້າໄປເຝົ້າພຣະສະມະນະໂຄດົມ ຖ້າເຂົ້າໄປເຝົ້າພຣະສະມະນະໂຄດົມກຽດຕິຍົດຂອງທ່ານກູດທັນຕະຈະເສື່ອມເສຍ ກຽດຕິຍົດຂອງພຣະສະມະນະໂຄດົມຈະ ຈະເລີນຮຸ່ງເຮືອງຍິ່ງຂຶ້ນ ດ້ວຍເຫດນີ້ ທ່ານກູດທັນຕະຈຶ່ງບໍ່ຄວນເຂົ້າໄປເຝົ້າພຣະສະມະນະໂຄດົມ"

ພຣະສະມະນະໂຄດົມຕ່າງຫາກ ຄວນຈະສະເດັດມາຫາທ່ານກູດທັນຕະ ຍ້ອນວ່າທ່ານກູດທັນຕະເປັນຜູ້ມີຊາດກຳເນີດດີ ທັງຝ່າຍບິດາ ແລະ ຝ່າຍມານດາ ຖືປະຕິສົນທິບໍລິສຸດດີຕະຫຼອດເຈັດຊົ່ວບັນພະບຸລຸດ ບໍ່ມີໃຜຈະຄັດຄ້ານຕຳໜິໄດ້ ເພາະອ້າງເຖິງຊາດຕະກູນດ້ວຍເຫດນີ້ ທ່ານກູດທັນຕະຈຶ່ງບໍ່ຄວນເຂົ້າໄປເຝົ້າພຣະສະມະນະໂຄດົມ ພຣະສະມະນະໂຄດົມຕ່າງຫາກຄວນຈະສະເດັດມາຫາທ່ານກູດທັນຕະ ອັນໜຶ່ງ ທ່ານກູດທັນຕະເປັນຄົນມັ່ງຄັ່ງມີຊັບຫຼາຍ ມີໂພຄະຫຼາຍ ຯລຯ ເປັນຜູ້ຄົງແກ່ຮຽນ ຊົງຈຳມົນຕຣາ ຮູ້ຈັກໄຕຣເພດ ພ້ອມທັງນິຄັນຖຸສາດ ເກຕຸພະສາດ ອັກສອນສາດ ແລະປະຫວັດສາດ ຮູ້ໂຕບົດ ແລະ ໄວຍາກອນ ຊຳນານໂລກາຍະຕະສາດ ແລະ ລັກສະນະມະຫາບຸຣຸດ ຯລຯ ເປັນຜູ້ມີຮູບງາມໜ້າເບິ່ງ ໜ້າເຫຼື້ອມໃສ ມີຜິວພັນຜຸດຜ່ອງຄືພົມ ມີກາຍຄືພົມ ຫາໂອກາດທີ່ຈະໄດ້ພົບເຫັນໄດ້ຍາກ ຯລຯ ເປັນຜູ້ມີສິນ ມີສິນທີ່ຈະເລີນປະກອບດ້ວຍສິນທີ່ຈະເລີນ ຯລຯ ເປັນຜູ້ມີວາຈາມ່ວນຫູສຸພາບ ປະກອບດ້ວຍຄຳເວົ້າອັນອ່ອນຫວານຂອງຕົນເມືອງ ນຸ່ມນວນເຂົ້າໃຈງ່າຍ ຯລຯ ເປັນອາຈານແລະ ປາຣະມາຈານຂອງຄົນຈຳນວນຫຼາຍ ສອນມົນແກ່ມານົບ ໓໐໐ ຄົນ ເຫຼົ່າມານົບຜູ້ຕ້ອງການຮຽນມົນຈຳນວນຫຼາຍ ຈາກທິດທາງຕ່າງໆໃນຊົນນະບົດ ພາກັນມາຮຽນມົນໃນສຳນັກຂອງທ່ານກູດທັນຕະຯລຯ ທ່ານກູດທັນຕະເປັນຄົນແກ່ຄົນເຖົ້າເປັນຜູ້ໃຫຍ່ ມີຊີວິດຜ່ານມາຫຼາຍລັດຊະສະໄໝ ລ່ວງການຜ່ານວັຍມາຫຼາຍດົນນານ ສ່ວນພຣະສະມະນະໂຄດົມເປັນຄົນໜຸ່ມບວດຕອນຍັງໜຸ່ມນ້ອຍ ຯລຯ ທ່ານກູດທັນຕະເປັນຜູ້ທີ່ພຣະເຈົ້າພິມພິສານຈອມທັບມະຄົດ ແລະ ພາມໂປກະຂະຣະສາຕິສັກກາຣະເຄົາຣົບນັບຖືບູຊານອບນ້ອມ ຯລຯ ທ່ານກູດທັນຕະປົກຄອງໝູ່ບ້ານຂານຸມັດ ເຊິ່ງມີປະຊາກອນ ແລະ ສັດ

ລ້ຽງເປັນຈຳນວນຫຼວງຫຼາຍ ມີພືດພັນທັນຍາຫານ ແລະ ນ້ຳຫຍ້າອຸດົມສົມບູນ ເປັນພຣະຣາດຊະຊັບທີ່ພຣະເຈົ້າພິມພິສານຈອມທັບມະຄົດ ພຣະຣາດຊະທານປູນບຳເໜັດໃຫ້ ເປັນພົມໄທ ດ້ວຍເຫດນີ້ທ່ານກູດທັນຕະຈຶ່ງບໍ່ຄວນເຂົ້າໄປເຝົ້າພຣະສະມະນະໂຄດົມ ພຣະສະມະນະໂຄດົມຕ່າງຫາກຄວນຈະສະເດັດມາຫາທ່ານກູດທັນຕະ

## ພາມກູດທັນຕະສະແດງພຣະພຸດທະຄຸນ

[໓໓໔] ເມື່ອພວກພາມເວົ້າແນວນີ້ ພາມກູດທັນຕະໄດ້ກ່າວວ່າ “ທ່ານທັງຫຼາຍຖ້າແນວນັ້ນພວກທ່ານໂຜດຟັງເຮົາກ່ອນ ເຮົານີ້ເອງຄວນເຂົ້າໄປເຝົ້າທ່ານພຣະໂຄດົມ ທ່ານພຣະໂຄດົມບໍ່ຄວນສະເດັດມາຫາເຮົາ ເຮົາໄດ້ຮູ້ມາວ່າ ພຣະສະມະນະໂຄດົມຊົງເປັນຜູ້ມີພຣະຊາດກຳເນີດດີທັງຝ່າຍພຣະຊະນົກແລະຝ່າຍພຣະຊົນນີ ຊົງຖືປະຕິສົນທິບໍລິສຸດດີຕະຫຼອດເຈັດຊົ່ວບັນພະບຸລຸດບໍ່ມີໃຜຈະຄັດຄ້ານຕຳໜິໄດ້ເພາະອ້າງເຖິງຊາດຕະກູນ ດ້ວຍເຫດນີ້ທ່ານພຣະໂຄດົມ ບໍ່ຄວນສະເດັດມາຫາເຮົາ ເຮົາຕ່າງຫາກຄວນເຂົ້າໄປເຝົ້າທ່ານພຣະໂຄດົມ ທ່ານທັງຫຼາຍ ຂ່າວວ່າພຣະສະມະນະໂຄດົມ ຊົງປະລະພຣະປະຍູນຍາດອອກບວດແລ້ວ ຯລຯ ຊົງສະລະຊັບສົມບັດເງິນຄຳທັງຫຼາຍ ທັງທີ່ຝັງຢູ່ໃນພື້ນດິນ ແລະ ໃນອາກາດອອກບວດແລ້ວ ຯລຯ ພຣະສະມະນະໂຄດົມກຳລັງໜຸ່ມແໜ້ນ ມີພຣະເກສາດຳສະນິດ ຊົງພຣະຈະເລີນຢູ່ໃນປະຖົມວັຍ ແຕ່ຍັງສະເດັດອອກຈາກພະລາດຊະວັງ ອອກໄປບວດເປັນບັນພະຊິດ ຯລຯ ເມື່ອພຣະຊະນົກພຣະຊົນນີບໍ່ຊົງປາດຖະໜາຈະໃຫ້ສະເດັດອອກບວດ ມີນ້ຳພຣະເນດຊຸ່ມອາບພຣະພັກ ຊົງກັນແສງຢູ່ ແຕ່ພຣະສະມະນະໂຄດົມຍັງຊົງປົງພຣະເກສາ ແລະ ພຣະມັດສຸແລ້ວຄອງຜ້າກາສາວະພັດ ສະເດັດອອກຈາກພະລາດຊະວັງໄປບວດເປັນບັນພະຊິດ ຯລຯ ພຣະສະມະນະໂຄດົມ ມີພຣະຮູບງົດງາມເປັນຕາເບິ່ງໜ້າເຫຼື້ອມໃສ ມີພຣະສະຫວິວັນຜຸດຜ່ອງຫຼາຍຄືພົມ ມີພຣະວໍຣະກາຍຄືພົມ ຫາໂອກາດທີ່ຈະໄດ້ພົບເຫັນໄດ້ຍາກ ຯລຯ ພຣະສະມະນະໂຄດົມ ຊົງມີອະຣິຍະສິນ ມີສິນທີ່ເປັນກຸສົນປະກອບດ້ວຍສິນທີ່ເປັນກຸສົນ ຯລຯ ມີພຣະວາຈາມ່ວນສຸພາບ ປະກອບດ້ວຍຄຳເວົ້າອັນອ່ອນຫວານຂອງຊາວເມືອງ ນຸ່ມນວນເຂົ້າໃຈໄດ້ງ່າຍ ຯລຯ ຊົງເປັນອາຈານແລະປາຣະມາຈານຂອງໝູ່ຊົນຈຳນວນຫຼວງຫຼາຍ ຯລຯ ຊົງກຳຈັດການຣາຄະບໍ່ປະດັບຕົກແຕ່ງຮ່າງກາຍ ຯລຯ ຊົງເປັນກຳວາທີ ກິຣິຍະວາທີ ບໍ່ຊົງມຸ້ງຮ້າຍຕໍ່ພາມ ຯລຯ ບວດແລ້ວຈາກຕະກູນສູງຂັດຕິຍະຕະກູນດ້ວຍເລືອດອັນບໍລິສຸດ ຯລຯ ບວດແລ້ວຈາກຕະກູນມັ່ງຄັ່ງມີຊັບຫຼາຍ ມີໂພຄະຫຼາຍ ຯລຯ ປະຊາຊົນຕ່າງບ້ານຕ່າງເມືອງ ພາກັນມາທູນຖາມບັນຫາພຣະສະມະນະໂຄດົມ ຯລຯ ພວກເທບຫຼາຍພັນອົງສະແດງຄວາມສັດທາ ຂໍຖືພຣະສະມະນະໂຄດົມເປັນທີ່ເພິ່ງ ຯລຯ ພຣະສະມະນະໂຄດົມຊົງມີພຣະກິດຕິສັບອັນງາມຊ່າລືໄປແນວນີ້ວ່າ

ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຮູ້ດ້ວຍພຣະອົງເອງໂດຍທຳ ພຽບພ້ອມດ້ວຍວິດຊາ ແລະ ຈະຣະນະສະເດັດໄປດີ ຮູ້ແຈ້ງໂລກເປັນ

ສາຣະຖີ ເຝິກບຸຣຸດຜູ້ທີ່ຄວນເຝິກໄດ້ຢ່າງຍອດຢ້ຽມ ເປັນສາດສະດາຂອງເທວະດາ ແລະ ມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ໆລໆ ພຣະສະມະນະໂຄດົມ ຊົງປະກອບດ້ວຍລັກສະນະມະຫາບຸຣຸດ ໓໒ ປະການ ໆລໆ ຊົງມີປົກກະຕິຕັດເຊື້ອເຊີນ ຕັດຜູກມິດໄມຕຣີອ່ອນຫວານ ບໍ່ຊົງສະຫຍິ້ວພຣະພັກຊົງເບີກບານ ມັກຕັດທັກທວາຍກ່ອນ ໆລໆ ຊົງເປັນຜູ້ທີ່ບໍລິສັດ ໔໑ ສັກກາຣະເຄົາຣົບນັບຖືບູຊານອບນ້ອມ ໆລໆ ເທວະດາ ແລະ ມະນຸດເປັນຈຳນວນຫຼວງຫຼາຍເຫຼື້ອມໃສພຣະສະມະນະໂຄດົມ ໆລໆ ພວກອະມະນຸດຍ່ອມບໍ່ບຽດບຽນຜູ້ຄົນທີ່ຢູ່ໃນໝູ່ບ້ານ ຫຼື ນິຄົມທີ່ພຣະສະມະນະໂຄດົມຊົງພຳນັກຢູ່ ໆລໆ ພຣະສະມະນະໂຄດົມຊົງເປັນຫົວໜ້າຊົງເປັນຄະນາຈານໄດ້ຮັບການຍ້ອງຍໍວ່າ ຊົງເປັນຜູ້ຍອດຢ້ຽມກວ່າເຈົ້າລັດທິອື່ນ ໆ

ບໍ່ຊົງຮຸ່ງເຮືອງພຣະຍົດຄືພວກສະມະນະພາມທີ່ຮຸ່ງເຮືອງຍົດດ້ວຍຊັບສົມບັດ ແຕ່ຊົງຮຸ່ງເຮືອງພຣະຍົດເພາະຊົງມີວິດຊາ ແລະ ຈະຣະນະອັນຍອດຢ້ຽມ ໆລໆ ພຣະເຈົ້າພິມພິສານຈອມທັບມະຄົດ ພ້ອມທັງພຣະຣາດຊະໂອຣົດ ພຣະມະເຫສີ ຂ້າຣາດຊະບໍຣິພານ ແລະ ໝູ່ອຳມາດຕ່າງມອບຊີວິດຂໍຖືພຣະສະມະນະໂຄດົມເປັນສະຣະນະ ໆລໆ ພຣະເຈົ້າປະເສນທິໂກສົນ ພ້ອມທັງພຣະຣາດຊະໂອຣົດ ພຣະມະເຫສີ ຂ້າຣາດຊະບໍຣິພານ ແລະ ໝູ່ອຳມາດຕ່າງພາກັນມອບຊີວິດ ຂໍຖືພຣະສະມະນະໂຄດົມເປັນສະຣະນະ ໆລໆ ພາມໂປກະຂະຣະສາຕິພ້ອມທັງບຸດພັນລະຍາ ຂ້າຣາດຊະການ ແລະ ໝູ່ອຳມາດຕ່າງມອບຊີວິດ ເຖິງພຣະສະມະນະໂຄດົມເປັນສະຣະນະ ພຣະສະມະນະໂຄດົມ ຊົງເປັນຜູ້ທີ່ພຣະເຈົ້າພິມພິສານຈອມທັບມະຄົດ ຊົງສັກກາຣະເຄົາຣົບນັບຖືບູຊານອບນ້ອມ ໆລໆ ຊົງເປັນຜູ້ທີ່ພຣະເຈົ້າປະເສນທິໂກສົນ ຊົງສັກກາຣະເຄົາຣົບນັບຖືບູຊານອບນ້ອມ ໆລໆ ຊົງເປັນຜູ້ທີ່ພາມໂປກະຂະຣະສາຕິ ສັກກາຣະເຄົາຣົບນັບຖືບູຊານອບນ້ອມ ໆລໆ ພຣະສະມະນະໂຄດົມ ສະເດັດເຖິງໝູ່ບ້ານຂານຸມັດໂດຍລຳດັບ ປະທັບຢູ່ໃນສວນອຳພະລັດທິກາໃກ້ໝູ່ບ້ານຂານຸມັດ

ທ່ານທັງຫຼາຍ ສະມະນະພາມທີ່ມາສູ່ເຂດໝູ່ບ້ານຂອງເຮົາຈັດວ່າ ເປັນແຂກຂອງເຮົາເຊິ່ງພວກເຮົາຄວນທຳການຕອນຮັບ ພຣະສະມະນະໂຄດົມສະເດັດມາເຖິງໝູ່ບ້ານຂານຸມັດໂດຍລຳດັບ ປະທັບຢູ່ໃນສວນອຳພະລັດທິກາໃກ້ໝູ່ບ້ານຂານຸມັດ ພຣະສະມະນະໂຄດົມ ຈຶ່ງຈັດເປັນແຂກຂອງເຮົາທີ່ພວກເຮົາຄວນອອກໄປທຳການຕອນຮັບ ໆລໆ ດ້ວຍເຫດນີ້ ພຣະສະມະນະໂຄດົມ ຈຶ່ງບໍ່ຄວນສະເດັດມາຫາເຮົາ ເຮົາຕ່າງຫາກຄວນເຂົ້າໄປເຝົ້າພຣະສະມະນະໂຄດົມ ເຮົາຮູ້ພະຄຸນຂອງພຣະສະມະນະໂຄດົມພຽງເທົ່ານີ້ ແຕ່ພຣະສະມະນະໂຄດົມ ບໍ່ແມ່ນວ່າຈະມີພຣະຄຸນພຽງເທົ່ານີ້ ແທ້ຈິງແລ້ວ ພຣະສະມະນະໂຄດົມມີພຣະຄຸນອັນອະນັນນັບປະມານບໍ່ໄດ້

[໓໑໑] ເມື່ອພາມກູດທັນຕະເວົ້າແນວນີ້ ພາມເຫຼົ່ານັ້ນໄດ້ກ່າວວ່າ “ທ່ານກູດທັນຕະກ່າວຍ້ອງຍໍພຣະສະມະນະໂຄດົມເຖິງພຽງນີ້ ຫາກແມ່ນວ່າ ທ່ານພຣະໂຄດົມພຣະອົງນັ້ນ ຈະປະທັບຢູ່

ໄກຈາກບ່ອນນີ້ຕັ້ງ ໑໐໐ ໂຍດ ກໍສົມຄວນຢູ່ທີ່ກຸນລະບຸດ ຜູ້ມີສັດທາຈະຂີ່ນຂວາຍເຂົ້າໄປເຝົ້າພຣະອົງ ແມ່ນຈະຕ້ອງຂີ່ນສະບຽງໄປກໍສົມຄວນ"

ພາມກູດທັນຕະກ່າວວ່າ "ຖ້າແນວນັ້ນ ພວກເຮົາທັງໝົດ ຈັກເຂົ້າໄປເຝົ້າພຣະສະມະນະໂຄດົມພ້ອມກັນທັງໝົດນີ້

## ເລື້ອງຍັນຂອງພຣະເຈົ້າມະຫາວິຊິດຕະຣາດ

[໓໓໔] ຕໍ່ມາ ພາມກູດທັນຕະ ພ້ອມດ້ວຍຄະນະພາມໝູ່ໃຫຍ່ພາກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຢູ່ສວນອຳພະລັດທິກາ ເພື່ອສົນທະນາກັບພຣະຜູ້ມີພຣະພາກເຈົ້າ ເມື່ອສົນທະນາທັກທວາຍກັນພໍຄຸ້ນເຄີຍດີແລ້ວ ຈຶ່ງນັ່ງລົງໃນທີ່ສົມຄວນຂອງຕົນ ຝ່າຍພວກພາມ ແລະ ຄະຫະບໍດີຊາວບ້ານຂານຸມັດທີ່ຕິດຕາມມາ ມີລາງພວກກົ້ມລົງຂາບພຣະຜູ້ມີພຣະພາກເຈົ້າ ລາງພວກສົນທະນາກັນ ລາງພວກຍໍມືໄຫວ້ໄປທາງພຣະຜູ້ມີພຣະພາກເຈົ້າ ລາງພວກປະກາດຊື່ແລະຕະກູນຂອງຕົນ ບາງພວກນິ່ງເສີຍແລ້ວນັ່ງລົງທີ່ສົມຄວນຂອງຕົນ

[໓໓໕] ພາມກູດທັນຕະນັ່ງລົງຂາບທູນວ່າ "ທ່ານພຣະໂຄດົມ ຂ້າພະເຈົ້າໄດ້ຍິນມາວ່າພຣະສະມະນະໂຄດົມຊົງຮູ້ຍັນສົມບັດ ໓ ປະການ ເຊິ່ງມີອົງປະກອບ ໑໖ ສ່ວນ ຂ້າພະເຈົ້າບໍ່ຮູ້ແຕ່ມີຄວາມປາດຖະໜາຈະບູຊາມະຫາຍັນນີ້ ຂໍປະທານອະໂຣກາດຂໍທ່ານພຣະໂຄດົມໂຜດສະແດງຍັນສົມບັດ ໓ ປະການ ເຊິ່ງມີອົງປະກອບ ໑໖ ແກ່ຂ້າພະເຈົ້າດ້ວຍເຖີ້ນ

[໓໓໖] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມ ຖ້າແນວນັ້ນ ທ່ານຈົ່ງຟັງ ຈົ່ງຕັ້ງໃຈໃຫ້ດີເຮົາຈະສະແດງ" ພາມກູດທັນຕະທູນຮັບພຣະສະໜອງ ພຣະດຳຣັດຂອງພຣະຜູ້ມີພຣະພາກເຈົ້າແລ້ວພຣະຜູ້ມີພຣະພາກເຈົ້າ ຈຶ່ງຕັດສະແດງວ່າ "ພາມເລື້ອງເຄີຍມີມາແລ້ວ ພຣະເຈົ້າມະຫາວິຊິດຕະຣາດ ຊົງເປັນຜູ້ມັ່ງຄັ່ງ ມີຊັບຫຼາຍ ມີໂພຄະຫຼາຍ ມີພືດພັນທັນຍາຫານເຕັມທ້ອງພຣະຄັງ ຕໍ່ມາພຣະອົງປະທັບຢູ່ຕາມລຳພັງອົງດຽວ ຊົງຄິດຄຳນຶງວ່າ "ເຮົາໄດ້ຖືຄອງໂພຄະສົມບັດທີ່ເປັນຂອງມະນຸດໄວ້ຢ່າງຫຼວງຫຼາຍ ໄດ້ເອົາຊະນະແລ້ວຄອບຄອງດິນແດນທີ່ກ້ວງໃຫຍ່ ທາງທີ່ດີເຮົາເພິ່ງບູຊາມະຫາຍັນ ທີ່ຈະເອື້ອອຳນວຍປະໂຫຍດສຸກແກ່ເຮົາ ຕະຫຼອດການລະນານຈະດີກວ່າ"

[໓໓໗] ພຣະອົງຈຶ່ງຮັບສັ່ງໃຫ້ຮຽກພາມປຸໂລຫິດມາຮັບສັ່ງວ່າ "ພາມມື້ນີ້ເຮົາພັກຢູ່ຕາມລຳພັງຜູ້ດຽວ ໄດ້ເກີດຄວາມຄິດຄຳນຶງຂື້ນໃນໃຈຢ່າງນີ້ວ່າ ເຮົາໄດ້ຖືຄອງໂພຄະສົມບັດທີ່ເປັນຂອງມະນຸດຢ່າງຫຼວງຫຼາຍ ໄດ້ເອົາຊະນະແລ້ວຄອບຄອງດິນແດນອັນກວ້າງໃຫຍ່ໄພສານ ທາງທີ່ດີເຮົາເພິ່ງບູຊາມະຫາຍັນອັນຈະເປັນການເອື້ອອຳນວຍປະໂຫຍດສຸກ ແກ່ເຮົາຕະຫຼອດການລະນານ ພາມ ເຮົາປາດຖະໜາຈະບູຊາມະຫາຍັນ ຂໍທ່ານຜູ້ຈະເລີນໂຜດແນະນຳວິທີບູຊາຍັນທີ່ຈະອຳນວຍປະໂຫຍດສຸກແກ່ເຮົາຕະຫຼອດການລະນານດ້ວຍເຖີ້ນ"

[໓໓໗] ເມື່ອພຣະອົງຮັບສັ່ງແບບນີ້ແລ້ວ ພາມປຸໂລຫິດ ຈຶ່ງໄດ້ຂາບທູນຂຶ້ນມາວ່າ "ບ້ານເມືອງຂອງພຣະອົງຍັງຊົງມີສົງຄາມ ມີການບຽດບຽນ ໂຈນຍັງປຸ້ນບ້ານ ປຸ້ນນິຄົມ ປຸ້ນເມືອງຫຼວງ ດັກຈີ້ຜູ້ຄົນໃນທາງປ່ຽວຢູ່ ເມື່ອບ້ານເມືອງຍັງມີສົງຄາມຢູ່ ພຣະອົງຈະໂຜດໃຫ້ຟື້ນຟູພິກຳຂຶ້ນກໍຈະຊື່ວ່າ ຊົງເຮັດໃນສິ່ງທີ່ບໍ່ສົມຄວນ ເຊັ່ນທີ່ພຣະອົງມີພຣະຣາດດຳລິຂຶ້ນແບບນີ້ວ່າ "ເຮົາຈັກຜາບສົງຄາມຄືໂຈນ ດ້ວຍການປະຫານຈອງຈຳ ປັບໄໝ ລົງໂທດ ຫຼື ເນຣະເທດ" ແບບນີ້ບໍ່ແມ່ນການກຳຈັດສົງຄາມຄືໂຈນທີ່ຖືກຕ້ອງ ຍ້ອນວ່າໂຈນທີ່ເຫຼືອຈາກທີ່ກຳຈັດໄປແລ້ວ ຈັກກັບມາບຽດບຽນສ້າງຄວາມວຸ່ນວາຍໃນບ້ານເມືອງຂອງພຣະອົງພາຍຫຼັງໄດ້ ແຕ່ການກຳຈັດສົງຄາມຄືໂຈນທີ່ຖືກຕ້ອງ ຕ້ອງອາໄສວິທີການຕໍ່ໄປນີ້ຄື

໑. ຂໍໃຫ້ພຣະອົງຈົ່ງພຣະຣາດຊະທານ ພັນພືດ ແລະ ອາຫານໃຫ້ແກ່ພົນລະເມືອງຜູ້ຂະຫຍັນຂັນແຂງໃນອາຊີບກະເສດຕະກຳ ແລະ ການລ້ຽງປະສຸສັດໃນບ້ານເມືອງຂອງພຣະອົງ

໒. ຂໍໃຫ້ພຣະອົງຈົ່ງພຣະຣາດຊະທານ ຕົ້ນທຶນໃຫ້ແກ່ພົນລະເມືອງ ຜູ້ຂະຫຍັນຂັນແຂງໃນພານິດຍະກຳໃນບ້ານເມືອງຂອງພຣະອົງ

໓. ຂໍໃຫ້ພຣະອົງຈົ່ງພຣະຣາດຊະທານ ອາຫານ ແລະ ເງິນເດືອນ ແກ່ຂ້າຣາດຊະການທີ່ຂະຫຍັນຂັນແຂງໃນບ້ານເມືອງຂອງພຣະອົງ

ເມື່ອຊົງປະຕິດບັດຕາມນັ້ນ ພົນລະເມືອງເຫຼົ່ານັ້ນ ຈັກເອົາໃຈໃສ່ໃນໜ້າທີ່ວຽກງານຂອງຕົນເພາະຜົນຕອບແທນ ພໍເຮັດໃຫ້ດຳລົງຊີວິດຢູ່ໄດ້ຢ່າງສຸກສະບາຍ ພຣະອົງຈັກມີກອງພຣະຣາດຊະຊັບໄຫລເຂົ້າມາສູ່ພະຄັງຫຼວງເປັນຈຳນວນຫຼາຍ ທີ່ໄດ້ຮັບຈາກການເກັບພາສີ ບ້ານເມືອງກໍຈະຢູ່ສະຫງົບຫົ່ມເຢັນ ບໍ່ມີສົງຄາມຂອງບ້ານເມືອງ ບໍ່ມີການບຽດບຽນເຊິ່ງກັນແລະກັນ ປະຊາຊົນຈະຊື່ນຊົມຍິນດີຕໍ່ກັນມີຄວາມສຸກກັບຄອບຄົວ ແລະ ຍາດມິດສະຫາຍ ຢູ່ຢ່າງບໍ່ຕ້ອງປິດປະຕູເຮືອນ"

ພຣະເຈົ້າມະຫາວິຊິດຕະຣາດ ຊົງຮັບຟັງຄຳແນະນຳຂອງພາມປະໂລຫິດ ແລ້ວໄດ້ປະຕິບັດຕາມນັ້ນ ໄດ້ພຣະຣາດຊະທານພັນພືດ ແລະ ອາຫານແກ່ພົນລະເມືອງທີ່ຂະຫຍັນຂັນແຂງໃນອາຊີບກະເສດຕະກຳ ແລະ ການລ້ຽງປະສຸສັດ ພຣະຣາດຊະທານຕົ້ນທຶນໃຫ້ແກ່ພົນລະເມືອງຜູ້ຂະຫຍັນຂັນແຂງໃນພານິດຍະກຳ ພຣະຣາດຊະທານອາຫານ ແລະ ຂຶ້ນເງິນເດືອນແກ່ຂ້າຣາດຊະການທີ່ຂະຫຍັນຂັນແຂງໃນບ້ານເມືອງຂອງພຣະອົງ ພົນລະເມືອງເຫຼົ່ານັ້ນ ທີ່ໄດ້ຮັບພຣະຣາດຊະທານສຸກຍູ້ໃຫ້ຢູ່ດີມີສຸກ ກໍຕັ້ງໃຈໃນໜ້າທີ່ວຽກງານຂອງຕົນ ບໍ່ພາກັນບຽດບຽນເຊິ່ງກັນ ແລະກັນ ພຣະອົງກໍຈະຊົງມີກອງພຣະຣາດຊະຊັບເປັນຈຳນວນຫຼານໃນພະຄັງ ບ້ານເມືອງຢູ່ສະຫງົບຮົ່ມເຢັນ ບໍ່ມີສົງຄາມຂອງບ້ານເມືອງ ປະຊາຊົນຕ່າງຊື່ນຊົມຍິນດີຕໍ່ກັນ ມີຄວາມສຸກກັບຄອບຄົວ ຢູ່ຢ່າງບໍ່ຕ້ອງປິດປະຕູເຮືອນ

ຕໍ່ມາ ພຣະອົງຮັບສັ່ງໃຫ້ພາມປະໂລຫິດເຂົ້າເຝົ້າແລ້ວຕັດວ່າ "ທ່ານຜູ້ຈະເລີນເຮົາໄດ້ກຳຈັດສັ່ງນໜາມຄືໂຈນຈົນໝົດສິ້ນ ດ້ວຍວິທີການຂອງທ່ານ ແລະ ເຮົາໄດ້ມີກອງພຣະຣາດຊະຊັບເປັນຈຳນວນຫຼາຍໃນພະຄັງ ບ້ານເມືອງຢູ່ສະຫງົບຮົ່ມເຢັນ ບໍ່ມີສັ່ງນໜາມຂອງບ້ານເມືອງ ປະຊາຊົນຕ່າງຊື່ນຊົມຍິນດີຕໍ່ກັນ ມີຄວາມສຸກກັບຄອບຄົວຢູ່ຢ່າງບໍ່ຕ້ອງປິດປະຕູເຮືອນ ເຮົາປາດຖະໜາຈະບູຊາມະຫາຍັນ ຂໍທ່ານຜູ້ຈະເລີນໂຜດແນະນຳ ວິທີບູຊາຍັນທີ່ຈະອຳນວຍປະໂຫຍດສຸກແກ່ເຮົາຕະຫຼອດການລະນານເຖີ້ນ"

[໓໓໙] ພາມປຸໂລຫິດຈຶ່ງຂາບທູນວ່າ "ຖ້າແນວນັ້ນ ຂໍພຣະອົງໂຜດຮັບສັ່ງໃຫ້ເຊີນເຈົ້າຜູ້ຄອງເມືອງທີ່ຢູ່ໃນນິຄົມ ແລະ ຢູ່ໃນຊົນນະບົດທົ່ວພຣະຣາດຊະອານາເຂດຂອງພຣະອົງໂຜດຮັບສັ່ງໃຫ້ເຊີນອຳມາດຣາດຊະບໍຣິພານທີ່ຢູ່ໃນນິຄົມ ແລະຢູ່ໃນຊົນນະບົດທົ່ວພຣະຣາດຊະອານາເຂດຂອງພຣະອົງ ໂຜດຮັບສັ່ງໃຫ້ເຊີນພາມມະຫາສານທີ່ຢູ່ໃນນິຄົມແລະຢູ່ໃນຊົນນະບົດທົ່ວພຣະຣາດຊະອານາເຂດຂອງພຣະອົງ ແລະໂຜດຮັບສັ່ງໃຫ້ເຊີນຄະຫະບໍດີຜູ້ມັ່ງຄັ່ງທີ່ຢູ່ໃນນິຄົມ ແລະຢູ່ໃນຊົນນະບົດທົ່ວພຣະຣາດຊະອານາເຂດຂອງພຣະອົງມາເປີກສາວ່າ ທ່ານຜູ້ຈະເລີນທັງຫຼາຍ ເຮົາປາດຖະໜາຈະບູຊາມະຫາຍັນ ຂໍພວກທ່ານຜູ້ຈະເລີນຈົ່ງຮ່ວມມືກັບເຮົາໃນພິທີນີ້ ເພື່ອອຳນວຍປະໂຫຍດສຸກແກ່ເຮົາຕະຫຼອດການລະນານ"

ພຣະເຈົ້າມະຫາວິຊິດຕະຣາດ ຊົງຮັບຄຳແນະນຳຂອງພາມປຸໂລຫິດແລ້ວ ຮັບສັ່ງໃຫ້ເຊີນເຈົ້າຜູ້ຄອງເມືອງທີ່ຢູ່ໃນນິຄົມ ແລະ ຢູ່ໃນຊົນນະບົດທົ່ວພຣະຣາດຊະອານາເຂດຂອງພຣະອົງ ຮັບສັ່ງໃຫ້ເຊີນອຳມາດຣາດຊະບໍຣິພານທີ່ຢູ່ໃນນິຄົມ ແລະ ຢູ່ໃນຊົນນະບົດທົ່ວພຣະຣາດຊະອານາເຂດຂອງພຣະອົງ ຮັບສັ່ງໃຫ້ເຊີນພາມມະຫາສານບ່ອນຢູ່ໃນນິຄົມ ແລະ ຢູ່ໃນຊົນນະບົດທົ່ວພຣະຣາດຊະອານາເຂດຂອງພຣະອົງ ແລະ ຮັບສັ່ງໃຫ້ເຊີນຄະຫະບໍດີຜູ້ມັ່ງຄັ່ງທີ່ຢູ່ໃນນິຄົມ ແລະ ຢູ່ໃນຊົນນະບົດທົ່ວພຣະຣາດຊະອານາເຂດຂອງພຣະອົງມາເປີກສາວ່າ" ທ່ານຜູ້ຈະເລີນທັງຫຼາຍ ເຮົາປາດຖະໜາຈະບູຊາມະຫາຍັນ ຂໍພວກທ່ານຜູ້ຈະເລີນ ຈົ່ງຮ່ວມມືກັບເຮົາໃນງານພິທີນີ້ ເພື່ອອຳນວຍປະໂຫຍດສຸກແກ່ເຮົາຕະຫຼອດການລະນານ" ຄົນເຫຼົ່ານັ້ນ ຂາບທູນວ່າ "ຂໍພຣະອົງຈົ່ງພຣະຈະເລີນ ເວລານີ້ເໝາະສົມທຸກປະການ" ເມື່ອບຸກຄົນທັງ ໔ ເຫຼົ່ານີ້ ເຫັນດີຕາມພຣະຣາດຊະດຳລິ ຈັດເປັນອົງປະກອບຢ່າງໜຶ່ງຂອງຍັນນັ້ນເອງ

## ຄຸນລັກສະນະຂອງພຣະເຈົ້າມະຫາວິຊິດຕະຣາດ ໘ ຢ່າງ

[໓໔໐] ພຣະເຈົ້າມະຫາວິຊິດຕະຣາດ ຊົງປະກອບດ້ວຍຄຸນລັກສະນະ ໘ ຢ່າງ ຄື

໑. ຊົງມີພຣະຊາດກຳເນີດດີທັງຝ່າຍພຣະຊະນົກ ແລະ ຝ່າຍພຣະຊົນນະນີ ຖືປະຕິສົນທິດ້ວຍສາຍເລືອດບໍລິສຸດຕະຫຼອດເຈັດອາຍຸບັນພະບຸລຸດສືບ ໆ ກັນມາ ບໍ່ມີໃຜຈະຄັດຄ້ານຕຳໜິໄດ້

ເພາະອ້າງເຖິງຊາດຕະກູນ

໔. ຊົງມີພຣະຮູບຊົງດງາມເປັນຕາເບິ່ງໜ້າເຫຼື້ອມໃສ ມີພຣະສະຫວີວັນຜຸດຜ່ອງຄືພົມ ມີພຣະວໍຣະກາຍຄືພົມ ຫາໂອກາດທີ່ຈະໄດ້ພົບເຫັນໄດ້ຍາກ

໕. ຊົງເປັນຜູ້ມັ່ງຄັ່ງມີຊັບຫຼາຍ ມີໂພຄະຫຼາຍ ມີພືດພັນທັນຍາຫານເຕັມທ້ອງຫ້ອງຄັງ

໔. ຊົງມີກອງທະຫານທີ່ເຂັ້ມແຂງ ປະກອບໄປດ້ວຍ ໔ ເຫຼົ່າທັບ ຢູ່ໃນລະບຽບວິໄນຄອຍຖ້າຮັບພຣະບັນຊາ ມີພຣະບໍຣົມມະເດຊານຸພາບຫຼາຍ ສາມາດຂົ່ມຂູ່ ຫຼື ເຜົາຜານທຳລາຍຂ້າເສິກໄດ້ຕາມປະສົງ ພຽບພ້ອມດ້ວຍພຣະຣາດຊະອິດສະຣິຍະຍົດ

໕. ຊົງມີພຣະຣາດຊະສັດທາ ຊົງເປັນທາຍົກ ໔ ຊົງເປັນທານະບໍດີ ໑ ບໍ່ຊົງຕ້ອງສັ່ງໃຫ້ປິດປະຕູທັງ ໔ ທິດ ຊົງເປັນຄືໂຮງທານຂອງສະມະນະພາມ ຄົນກຳພ້າ ຄົນເດີນທາງ ວະນິພົກ ແລະຢາຈົກ ຊົງພ່ຳເພັງພຣະຣາດຊະກຸສົນຢູ່ເລືອຍ ໆ

໖. ຊົງໄດ້ຮັບການສຶກສາທີ່ໄດ້ຖ່າຍທອດສືບ ໆ ຕໍ່ກັນມາໄວ້ຫຼາຍ

໗. ຊົງເປັນຜູ້ສະຫຼາດ ຮູ້ຄວາມໝາຍແຫ່ງພາສິດທີ່ໄດ້ຊົງສຶກສາມານັ້ນວ່າ ນີ້ຄືຈຸດມຸ້ງໝາຍແຫ່ງພາສິດນັ້ນໆ

໘. ຊົງເປັນບັນດິດ ມີພຣະປຣີຊາສາມາດດຳລິເລື້ອງຕ່າງ ໆ ໃນອະນາຄົດ ປະຈຸບັນໄດ້ ແລະໃນອະດີດໄດ້

ພຣະເຈົ້າມະຫາວິຊິດຕະຣາດ ຊົງປະກອບດ້ວຍຄຸນລັກສະນະ ໘ ຢ່າງ ດັ່ງກ່າວມານີ້ ເຊິ່ງຖືເປັນອົງປະກອບແຫ່ງຍັນນັ້ນໂດຍແທ້

## ຄຸນລັກສະນະຂອງພາມປຸໂລຫິດ ໔ ຢ່າງ

[໑໔໑] ພາມປຸໂລຫິດປະກອບດ້ວຍຄຸນລັກສະນະ ໔ ຢ່າງຄື

໑. ເປັນຜູ້ມີຊາດກຳເນີດດີທັງຝ່າຍບິດາ ແລະ ຝ່າຍມານດາ ຖືປະຕິສົນທິດ້ວຍເລືອດບໍລິສຸດດີຕະຫຼອດເຈັດອາຍຸໄຂຂອງບັນພະບຸລຸດ ບໍ່ມີໃຜຈະຄັດຄ້ານຕຳໜິໄດ້ເພາະອ້າງເຖິງຊາດຕະກູນ

໔. ເປັນຜູ້ຄົງແກ່ຮຽນຊົງຈຳມົນ ຮູ້ຈົບໄຕຣເພດ ພ້ອມທັງນິຄັນຖຸສາດ ເກຕຸພະສາດ ອັກສອນ ສາດ ແລະ ປະຫວັດສາດເຂົ້າໃຈແມ່ນຍົດ ແລະ ໄວຍາກອນ ຊຳນານໂລກາຍະຕະ

ສາດ ແລະ ລັກສະ ນະມະຫາບຸຣຸດ

໓. ເປັນຜູ້ມີສິນ ມີສິນ ທີ່ຈະເລີນ ປະກອບດ້ວຍສິນທີ່ຈະເລີນ

໔. ເປັນບັນດິດ ມີປັນຍາແຫຼມຄົມ ລຳດັບທີ່ ໑ ຫຼື ທີ່ ໔ ໃນບັນດາພາມຜູ້ໄດ້ຮັບການບູຊາ

ພາມປຸໂລຫິດປະກອບດ້ວຍຄຸນລັກສະນະ ໔ ຢ່າງດັ່ງກ່າວມານີ້ ເຊິ່ງຖືເປັນອົງປະກອບແຫ່ງຍັນນັ້ນໂດຍແທ້

## ຍັນພິທີ ໓ ປະການ

[໓໔໔] ລຳດັບນັ້ນ ພາມປຸໂລຫິດສະແດງຍັນພິທີ ໓ ປະການ ຖວາຍແດ່ ພຣະເຈົ້າມະຫາວິຊິດຕະຣາດກ່ອນຈະຊົງບູຊາຍັນວ່າ

໑. ເມື່ອພຣະອົງປາດຖະໜາ ຈະຊົງບູຊາມະຫາຍັນ ກໍບໍ່ຄວນທຳຄວາມເດືອດຮ້ອນພຣະທັຍວ່າ ກອງໂພຄະສົມບັດທັງຫຼາຍຂອງເຮົາຈັກສິ້ນເປືອງໄປແລ້ວ

໔. ເມື່ອພຣະອົງກຳລັງຊົງບູຊາມະຫາຍັນຢູ່ ກໍບໍ່ຄວນທຳຄວາມເດືອດຮ້ອນພຣະທັຍວ່າ ກອງໂພຄະສົມບັດທັງຫຼາຍຂອງເຮົາກຳລັງສິ້ນເປືອງລຸດລົງໄປ

໓. ເມື່ອພຣະອົງຊົງບູຊາມະຫາຍັນແລ້ວ ກໍບໍ່ຄວນທຳຄວາມເດືອດຮ້ອນພຣະທັຍວ່າ ກອງໂພ ຄະສົມບັດທັງຫຼາຍຂອງເຮົາໄດ້ສິ້ນເປືອງໄປແລ້ວ

ພາມປຸໂລຫິດສະແດງຍັນພິທີ ໓ ປະການດັ່ງກ່າວມານີ້ ຖວາຍຄຳແນະນຳແດ່ພຣະເຈົ້າມະຫາວິຊິດຕະຣາດກ່ອນຈະຊົງບູຊາຍັນ

## ພາມປຸໂລຫິດຂາບທູນຖວາຍຄຳແນະນຳກ່ອນການບູຊາຍັນ

[໓໔໓] ລຳດັບນັ້ນ ພາມປຸໂລຫິດໄດ້ພະຍາມຊຳລະອົງປະກອບຂອງຍັນກຳຈັດ ໑໐ ປະການ ໃຫ້ບໍລິສຸດກ່ອນຈະບູຊາຍັນ ໑໐ ປະການນັ້ນມີຄື

໑. ທັງພວກທີ່ຂ້າສັດ ທັງພວກທີ່ເວັ້ນຂາດຈາກການຂ້າສັດ ຈັກພາກັນມາສູ່ພິທີບູຊາຍັນຂອງພຣະອົງ ບັນດາຊົນ ໔ ພວກນີ້ ພວກທີ່ຂ້າສັດຈັກໄດ້ຮັບຜົນກຳຂອງເຂົາເອງ ຂໍພຣະອົງຊົງເຈາະຈົງສະເພາະພວກທີ່ເວັ້ນຂາດຈາກການຂ້າສັດເທົ່ານັ້ນ ແລ້ວຊົງບູຊາ ຊົງບໍລິຈາກ ຊົງອະນຸໂມທະນາ ແລະ ຊົງທຳພຣະທັຍໃຫ້ເຫຼື້ອມໃສໃນພາຍໃນເຖີ້ນ

໔. ທັງພວກທີ່ຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ທັງພວກທີ່ເວັ້ນຂາດຈາກການຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ຈັກພາກັນມາສູ່ພິທີບູຊາຍັນຂອງພຣະອົງ ບັນດາຊົນ ໔ ພວກນັ້ນ ພວກທີ່ຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ຈັກໄດ້ຮັບຜົນກຳຂອງເຂົາເອງ ຂໍພຣະອົງຊົງເຈາະຈົ່ງສະເພາະພວກທີ່ເວັ້ນຂາດຈາກການຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ເທົ່ານັ້ນ ແລ້ວຊົງບູຊາ ຊົງບໍລິຈາກ ຊົງອະນຸໂມທະນາ ແລະ ຊົງເຮັດພຣະທັຍໃຫ້ເຫຼື້ອມໃສໃນພາຍໃນເຖີ້ນ

໓. ທັງພວກທີ່ປະພຶດຜິດໃນກາມ ທັງພວກທີ່ເວັ້ນຂາດຈາກການປະພຶດຜິດໃນກາມຈັກພາກັນມາສູ່ພິທີບູຊາຍັນຂອງພຣະອົງ ບັນດາຊົນ ໔ ພວກນັ້ນ ພວກທີ່ປະພຶດຜິດໃນກາມຈັກໄດ້ຮັບຜົນກຳຂອງເຂົາເອງ ຂໍພຣະອົງຊົງເຈາະຈົ່ງສະເພາະພວກທີ່ເວັ້ນຂາດຈາກການປະພຶດຜິດໃນກາມເທົ່ານັ້ນ ແລ້ວຊົງບູຊາ ຊົງບໍລິຈາກ ຊົງອະນຸໂມທະນາ ແລະ ຊົງເຮັດພຣະທັຍໃຫ້ເຫຼື້ອມໃສໃນພາຍໃນເຖີ້ນ

໔. ທັງພວກທີ່ກ່າວຄຳຕົວະ ທັງພວກທີ່ເວັ້ນຂາດຈາກການກ່າວຄຳຕົວະ ຈັກພາກັນມາສູ່ພິທີບູຊາຍັນຂອງພຣະອົງ ບັນດາຊົນ ໔ ພວກນັ້ນ ພວກທີ່ກ່າວຄຳຕົວະຈັກໄດ້ຮັບຜົນກຳຂອງເຂົາເອງ ຂໍພຣະອົງຊົງເຈາະຈົ່ງສະເພາະພວກທີ່ເວັ້ນຂາດຈາກການກ່າວຄຳຕົວະເທົ່ານັ້ນ ແລ້ວຊົງບູຊາ ຊົງບໍລິຈາກ ຊົງອະນຸໂມທະນາ ແລະ ຊົງເຮັດພຣະທັຍໃຫ້ເຫຼື້ອມໃສໃນພາຍໃນເຖີ້ນ

໕. ທັງພວກທີ່ກ່າວຄຳສັບສໍ່ ທັງພວກທີ່ເວັ້ນຂາດຈາກການກ່າວຄຳສັບສໍ່ ຈັກພາກັນມາສູ່ພິທີບູຊາຍັນຂອງພຣະອົງ ບັນດາຊົນ ໔ ພວກນັ້ນ ພວກທີ່ກ່າວຄຳສັບສໍ່ຈັກໄດ້ຮັບຜົນກຳຂອງເຂົາເອງ ຂໍພຣະອົງຊົງເຈາະຈົ່ງສະເພາະພວກທີ່ເວັ້ນຂາດຈາກການກ່າວຄຳສັບສໍ່ເທົ່ານັ້ນ ແລ້ວຊົງບູຊາ ຊົງບໍລິຈາກ ຊົງອະນຸໂມທະນາ ແລະ ຊົງເຮັດພຣະທັຍໃຫ້ເຫຼື້ອມໃສໃນພາຍໃນເຖີ້ນ

໖. ທັງພວກທີ່ກ່າວຄຳຫຍາບ ທັງພວກທີ່ເວັ້ນຂາດຈາກການກ່າວຄຳຫຍາບ ຈັກພາກັນມາສູ່ພິທີບູຊາຍັນຂອງພຣະອົງ ບັນດາຊົນ ໔ ພວກນັ້ນ ພວກທີ່ກ່າວຄຳຫຍາບຈັກໄດ້ຮັບຜົນກຳຂອງເຂົາເອງ ຂໍພຣະອົງຊົງເຈາະຈົ່ງສະເພາະພວກທີ່ເວັ້ນຂາດຈາກການກ່າວຄຳຫຍາບເທົ່ານັ້ນ ແລ້ວຊົງບູຊາ ຊົງບໍລິຈາກ ຊົງອະນຸໂມທະນາ ແລະ ຊົງເຮັດພຣະທັຍໃຫ້ເຫຼື້ອມໃສໃນພາຍໃນເຖີ້ນ

໗. ທັງພວກທີ່ກ່າວຄຳເພີ້ເຈີ້ໂລເລ ທັງພວກທີ່ເວັ້ນຂາດຈາກການກ່າວຄຳເພີ້ເຈີ້ຈັກໂລເລຈັກພາກັນມາສູ່ພິທີບູຊາຍັນຂອງພຣະອົງ ບັນດາຊົນ ໔ ພວກນັ້ນ ພວກທີ່ກ່າວຄຳເພີ້ເຈີ້ໂລເລ້ຈັກໄດ້ຮັບຜົນກຳຂອງເຂົາເອງ ຂໍພຣະອົງຊົງເຈາະຈົ່ງສະເພາະພວກທີ່ເວັ້ນຂາດຈາກການກ່າວຄຳເພີ້ເຈີ້ໂລເລເທົ່ານັ້ນ ແລ້ວ ຊົງບູຊາ ຊົງບໍລິຈາກ ຊົງອະນຸໂມທະນາ ແລະ ຊົງທຳພຣະທັຍໃຫ້ເຫຼື້ອມໃສໃນພາຍໃນເຖີ້ນ

໗. ທັງພວກທີ່ເພ່ງເລັງຢາກໄດ້ຂອງເຂົາ ທັງພວກທີ່ບໍ່ເພ່ງເລັງຢາກໄດ້ຂອງເຂົາຈັກພາກັນມາສູ່ພິທີບູຊາຍັນຂອງພຣະອົງ ບັນດາຊົນ ໔ ພວກນັ້ນ ພວກທີ່ເພ່ງເລັງຢາກໄດ້ຂອງເຂົາຈັກໄດ້ຮັບຜົນກຳຂອງເຂົາເອງ ຂໍພຣະອົງ ຊົງເຈາະຈົ່ງສະເພາະພວກທີ່ບໍ່ເພ່ງເລັງຢາກໄດ້ຂອງເຂົາເທົ່ານັ້ນ ແລ້ວຊົງບູຊາ ຊົງບໍລິຈາກ ຊົງອະນຸໂມທະນາ ແລະ ຊົງເຮັດພຣະທັຍໃຫ້ເຫຼື້ອມໃສໃນພາຍໃນເຖີ້ນ

໙. ທັງພວກທີ່ມີຈິດພະຍາບາດ ທັງພວກທີ່ບໍ່ມີຈິດພະຍາບາດ ຈັກພາກັນມາສູ່ພິທີບູຊາຍັນຂອງພຣະອົງ ບັນດາຊົນ ໔ ພວກນັ້ນ ພວກທີ່ມີຈິດພະຍາບາດ ຈັກໄດ້ຮັບຜົນກຳຂອງເຂົາເອງ ຂໍພຣະອົງຊົງເຈາະຈົ່ງສະເພາະພວກທີ່ບໍ່ມີຈິດພະຍາບາດເທົ່ານັ້ນ ແລ້ວຊົງບູຊາ ຊົງບໍລິຈາກ ຊົງອະນຸໂມທະນາ ແລະ ຊົງເຮັດພຣະທັຍໃຫ້ເຫຼື້ອມໃສໃນພາຍໃນເຖີ້ນ

໑໐. ທັງພວກທີ່ເປັນມິດສາທິດຖິ ທັງພວກທີ່ເປັນສຳມາທິດຖິ ຈັກພາກັນມາສູ່ພິທີບູຊາຍັນຂອງພຣະອົງ ບັນດາຊົນ ໔ ພວກນັ້ນ ພວກທີ່ເປັນມິດສາທິດຖິຈັກໄດ້ຮັບຜົນກຳຂອງເຂົາເອງ ຂໍພຣະອົງຊົງເຈາະຈົ່ງ ສະເພາະພວກທີ່ເປັນສຳມາທິດຖິເທົ່ານັ້ນ ແລ້ວຊົງບູຊາຊົງບໍລິຈາກ ຊົງອະນຸໂມທະນາ ແລະ ຊົງເຮັດພຣະທັຍໃຫ້ເຫຼື້ອມໃສໃນພາຍໃນເຖີ້ນ

ພາມປຸໂລຫິດຖວາຍຄຳແນະນຳ ການຊຳລະຜູ້ທີ່ຈະເຂົ້າມາຮ່ວມໃນງານມະຫາຍັດໃຫ້ບໍລິສຸດ ແກ່ພຣະເຈົ້າມະຫາວິຊິດຕະຣາດດ້ວຍອາການ ໑໐ ແນວນີ້ກ່ອນຊົງບູຊາຍັນ

## ພຣະເຈົ້າມະຫາວິຊິດຕະຣາດຊົງບູຊາຍັນດ້ວຍອາການ ໑໖ ຢ່າງ

[໓໔໔] ຕໍ່ມາພາມປຸໂລຫິດໄດ້ຂາບທູນຊີ້ແຈງແນະນຳ ໃຫ້ເຫັນຊັດແຈ້ງຊັກຊວນໃຫ້ຢາກຮັບເອົາໄປປະຕິບັດ ສຸກຍູ້ພຣະທັຍຂອງພຣະເຈົ້າມະຫາວິຊິດຕະຣາດ ຜູ້ຈະຊົງຈັດພິທີບູຊາມະຫາຍັນ ພາໃຫ້ອາດຫານແກ້ກ້າ ປອບປະໂລມພຣະທັຍໃຫ້ສົດຊື່ນເບີກບານດ້ວຍອາການ ໑໖ ຢ່າງມີ ຄື

໑. ເມື່ອພຣະອົງກຳລັງຊົງບູຊາມະຫາຍັນໃຜ ໆ ຈະກ່າວວ່າພຣະເຈົ້າມະຫາວິຊິດຕະຣາດຊົງບູຊາມະຫາຍັນ ໂດຍບໍ່ຮັບສັ່ງໃຫ້ເຊີນເຈົ້າຜູ້ຄອງເມືອງທີ່ຢູ່ໃນນິຄົມ ແລະຢູ່ໃນຊົນນະບົດມາຮ່ວມງານບູຊາມະຫາຍັນຂະໜາດນັ້ນ ເປັນການສ່ວນພຣະອົງເອງ ແມ່ນເພາະເຫດນີ້ ກໍບໍ່ມີໃຜຕຳໜິພຣະອົງໄດ້ໂດຍທຳ ເພາະພຣະອົງໄດ້ຮັບສັ່ງໃຫ້ເຊີນເຈົ້າຜູ້ຄອງເມືອງທີ່ຢູ່ໃນນິຄົມ ແລະ ຢູ່ໃນຊົນນະບົດມາຮ່ວມເປີກສາແລ້ວ ໂຜດຊົງຮູ້ຕາມນີ້ເຖີ້ນ ຂໍພຣະອົງຊົງບູຊາ ຊົງບໍລິຈາກ ຊົງອະນຸໂມທະນາ ແລະ ຊົງເຮັດພຣະທັຍໃຫ້ເຫຼື້ອມໃສໃນພາຍໃນເຖີ້ນ

໔. ເມື່ອພຣະອົງກໍາລັງຊົງບູຊາມະຫາຍັນໃຜ ໆ ຈະກ່າວວ່າ ພຣະເຈົ້າມະຫາວິຊິດຕະຣາດຊົງບູຊາມະຫາຍັນ ໂດຍບໍ່ຮັບສັ່ງໃຫ້ເຊີນອໍາມາດ ຣາດຊະບໍຣິພານທີ່ຢູ່ໃນນິຄົມ ແລະ ຢູ່ໃນຊົນນະບົດມາເປີກສາ ຊົງບູຊາມະຫາຍັນຂະໜາດນັ້ນ ເປັນການສ່ວນພຣະອົງ ແມ່ນເພາະເຫດນີ້ກໍບໍ່ມີໃຜຕໍາໜິພຣະອົງໄດ້ໂດຍທໍາ ເພາະພຣະອົງໄດ້ຮັບສັ່ງໃຫ້ເຊີນອໍາມາດຣາດຊະບໍຣິພານທີ່ຢູ່ໃນນິຄົມ ແລະ ຢູ່ໃນຊົນນະບົດມາເປີກສາແລ້ວ ໂຜດຊົງຮູ້ຕາມນີ້ເຖີ້ນ ຂໍພຣະອົງຊົງບູຊາ ຊົງບໍລິຈາກ ຊົງອະນຸໂມທະນາ ແລະຊົງເຮັດພຣະທັຍໃຫ້ເຫຼື້ອມໃສໃນພາຍໃນເຖີ້ນ

໖. ເມື່ອພຣະອົງກໍາລັງຊົງບູຊາມະຫາຍັນໃຜ ໆ ຈະກ່າວວ່າ ພຣະເຈົ້າມະຫາວິຊິດຕະຣາດຊົງບູຊາມະຫາຍັນ ໂດຍບໍ່ຮັບສັ່ງໃຫ້ເຊີນພາມມະຫາສານທີ່ຢູ່ໃນນິຄົມ ແລະ ຢູ່ໃນຊົນນະບົດມາເປີກສາ ຊົງບູຊາມະຫາຍັນຂະໜາດນັ້ນ ເປັນການສ່ວນພຣະອົງ ແມ່ນເພາະເຫດນີ້ກໍບໍ່ມີໃຜຕໍາໜິພຣະອົງໄດ້ໂດຍທໍາ ເພາະພຣະອົງໄດ້ຮັບສັ່ງໃຫ້ເຊີນພາມມະຫາສານທີ່ຢູ່ໃນນິຄົມ ແລະຢູ່ໃນຊົນນະບົດມາເປີກສາແລ້ວໂຜດຊົງຮູ້ຕາມນີ້ເຖີ້ນ ຂໍພຣະອົງຊົງບູຊາ ຊົງບໍລິຈາກ ຊົງອະນຸໂມທະນາ ແລະ ຊົງເຮັດພຣະທັຍໃຫ້ເຫຼື້ອມໃສໃນພາຍໃນເຖີ້ນ

໔. ເມື່ອພຣະອົງກໍາລັງຊົງບູຊາມະຫາຍັນໃຜ ໆ ຈະກ່າວວ່າ ພຣະເຈົ້າມະຫາວິຊິດຕະຣາດຊົງບູຊາມະຫາຍັນ ໂດຍບໍ່ຮັບສັ່ງໃຫ້ເຊີນຄະຫະບໍດີຜູ້ມັ່ງຄັ່ງທີ່ຢູ່ໃນນິຄົມ ແລະ ຢູ່ໃນຊົນນະບົດມາເປີກສາ ຊົງບູຊາມະຫາຍັນຂະໜາດນັ້ນ ເປັນການສ່ວນພຣະອົງເອງ ແມ່ນເພາະເຫດນີ້ກໍບໍ່ມີໃຜຕໍາໜິພຣະອົງໄດ້ໂດຍທໍາ ເພາະພຣະອົງໄດ້ຮັບສັ່ງໃຫ້ເຊີນຄະຫະບໍດີຜູ້ມັ່ງຄັ່ງທີ່ຢູ່ໃນນິຄົມ ແລະ ຢູ່ໃນຊົນນະບົດມາເປີກສາແລ້ວ ໂຜດຊົງຮູ້ຕາມນີ້ເຖີ້ນ ຂໍພຣະອົງຊົງບູຊາ ຊົງບໍລິຈາກ ຊົງອະນຸໂມທະນາ ແລະ ຊົງເຮັດພຣະທັຍໃຫ້ເຫຼື້ອມໃສໃນພາຍໃນເຖີ້ນ

໕. ເມື່ອພຣະອົງກໍາລັງຊົງບູຊາມະຫາຍັນໃຜ ໆ ຈະກ່າວວ່າພຣະເຈົ້າມະຫາວິຊິດຕະຣາດຊົງບູຊາມະຫາຍັນ ໂດຍທີ່ພຣະອົງບໍ່ຊົງເປັນກະສັດຜູ້ມີພຣະຊາດກໍາເນີດດີທັງຝ່າຍພຣະຊະນົກ ແລະຝ່າຍພຣະຊົນນະນີ ບໍ່ຊົງຖືປະຕິສົນທິດ້ວຍເລືອດບໍລິສຸດຕະຫຼອດເຈັດອາຍຸໄຂຂອງບັນພະບຸລຸດ ເປັນຜູ້ທີ່ຈະຖືກຄັດຄ້ານຕໍາໜິໄດ້ເພາະອ້າງເຖິງຊາດຕະກູນວ່າ ຊົງບໍ່ບໍລິສຸດແນວນັ້ນກໍຍັງຊົງບູຊາມະຫາຍັນເຫັນແນວນັ້ນຢູ່ ແມ່ນເພາະເຫດນີ້ກໍບໍ່ມີໃຜຕໍາໜິພຣະອົງໄດ້ໂດຍທໍາ ເພາະພຣະອົງຊົງເປັນຜູ້ມີພຣະຊາດກໍາເນີດດີທັງຝ່າຍພຣະຊະນົກ ແລະ ຝ່າຍພຣະຊົນນີ ຊົງຖືປະຕິສົນທິດ້ວຍສາຍເລືອດບໍລິສຸດມາຕະຫຼອດເຈັດອາຍຸໄຂຂອງບັນພະບຸລຸດ ບໍ່ມີໃຜຈະຄັດຄ້ານຕໍາໜິໄດ້ ເພາະການອ້າງເຖິງຊາດຕະກູນ ໂຜດຊົງຮູ້ຕາມນີ້ເຖີ້ນ ຂໍພຣະອົງຊົງບູຊາ ຊົງບໍລິຈາກ ຊົງອະນຸໂມທະນາ ແລະ ຊົງເຮັດພຣະທັຍໃຫ້ເຫຼື້ອມໃສໃນພາຍໃນເຖີ້ນ

໖. ເມື່ອພຣະອົງກໍາລັງຊົງບູຊາມະຫາຍັນໃຜ ໆ ຈະກ່າວວ່າ ພຣະເຈົ້າມະຫາວິຊິດຕະຣາດຊົງບູຊາມະຫາຍັນ ໂດຍທີ່ພຣະອົງມີພຣະຮູບບໍ່ງົດງາມ ບໍ່ເປັນຕາເບິ່ງ ບໍ່ໜ້າເຫຼື້ອມໃສ

ພຣະສະຫວີວັນບໍ່ຜຸດຜ່ອງຄືພົມ ບໍ່ມີພຣະວໍຣະກາຍຄືພົມ ໂອກາດທີ່ຈະໄດ້ພົບເຫັນຫາບໍ່ຍາກເລີຍ ເຖິງແນວນັ້ນພຣະອົງກໍຍັງຊົງບູຊາມະຫາຍັນເຫັນປານນັ້ນຢູ່ ແມ່ນເພາະເຫດນີ້ກໍບໍ່ມີໃຜຕໍາໜິພຣະອົງໄດ້ໂດຍທໍາ ເພາະພຣະອົງມີພຣະຮູບງົດງາມໜ້າເບິ່ງໜ້າເຫຼື້ອມໃສ ມີພຣະສະຫວີວັນຜຸດຜ່ອງຫຼາຍຄືພົມ ມີພຣະວໍຣະກາຍຄືພົມຫາໂອກາດທີ່ຈະໄດ້ພົບເຫັນຍາກ ໂຜດຊົງຮູ້ຕາມນີ້ເຖີ້ນ ຂໍພຣະອົງຊົງບູຊາ ຊົງບໍລິຈາກ ຊົງອະນຸໂມທະນາ ແລະ ຊົງທໍາພຣະທັຍໃຫ້ເຫຼື້ອມໃສໃນພາຍໃນເຖີ້ນ

ໆ. ເມື່ອພຣະອົງກໍາລັງຊົງບູຊາມະຫາຍັນໃຜ ໆ ຈະກ່າວວ່າພຣະເຈົ້າມະຫາວິຊິດຕະຣາດຊົງບູຊາມະຫາຍັນໂດຍທີ່ພຣະອົງບໍ່ຊົງເປັນກະສັດຜູ້ມັ່ງຄັ່ງ ມີຊັບຫຼາຍ ມີໂພຄະຫຼາຍ ມີພືດພັນທັນຍາຫານເຕັມທ້ອງພຣະຄັງ ເຖິງແນວນັ້ນ ພຣະອົງກໍຍັງຊົງບູຊາມະຫາຍັນເຫັນແນວນັ້ນຢູ່ ແມ່ນເພາະເຫດນີ້ ກໍບໍ່ມີໃຜຕໍາໜິພຣະອົງໄດ້ໂດຍທໍາ ເພາະພຣະອົງຊົງເປັນກະສັດຜູ້ມັ່ງຄັ່ງ ມີຊັບຫຼາຍ ມີໂພຄະຫຼາຍ ມີພືດພັນທັນຍາຫານເຕັມທ້ອງພຣະຄັງ ໂຜດຊົງຮູ້ຕາມນີ້ເຖີ້ນ ຂໍພຣະອົງໄດ້ຊົງບູຊາ ຊົງບໍລິຈາກ ຊົງອະນຸໂມທະນາ ແລະ ຊົງທໍາພຣະທັຍໃຫ້ເຫຼື້ອມໃສໃນພາຍໃນເຖີ້ນ

ຓ. ເມື່ອພຣະອົງກໍາລັງຊົງບູຊາມະຫາຍັນໃຜ ໆ ຈະກ່າວວ່າພຣະເຈົ້າມະຫາວິຊິດຕະຣາດຊົງບູຊາມະຫາຍັນ ໂດຍທີ່ພຣະອົງບໍ່ຊົງມີກອງທະຫານທີ່ເຂັ້ມແຂງ ປະກອບດ້ວຍກອງທັບ ໔ ເຫຼົ່າ ຢູ່ໃນລະບຽບວິໄນຄອຍຖ້າຮັບພຣະບັນຊາ ບໍ່ຊົງມີພຣະບໍຣົມມະເດຊານຸພາບເໝືອນວ່າຈະເຜົາຜານຂ້າເສິກໄດ້ດ້ວຍພຣະຣາດຊະອິດສະຣິຍະຍົດ ເຖິງແນວນັ້ນ ພຣະອົງກໍຍັງຊົງບູຊາມະຫາຍັນເຫັນແນວນັ້ນຢູ່ ແມ່ນເພາະເຫດນີ້ ກໍບໍ່ມີໃຜຕໍາໜິພຣະອົງໄດ້ໂດຍທໍາ ເພາະພຣະອົງຊົງມີກອງທະຫານທີ່ເຂັ້ມແຂງ ປະກອບໄປດ້ວຍກອງທັບ ໔ ເຫຼົ່າ ຢູ່ໃນລະບຽບວິໄນ ຄອຍຖ້າຮັບພຣະບັນຊາ ຊົງມີພຣະບໍຣົມມະເດຊານຸພາບດັ່ງວ່າ ຈະເຜົາຜານຂ້າເສິກໄດ້ດ້ວຍພຣະຣາດຊະເດຊານຸພາບ ໂຜດຊົງຮູ້ຕາມນີ້ເຖີ້ນ ຂໍພຣະອົງຊົງບູຊາ ຊົງບໍລິຈາກຊົງອະນຸໂມທະນາ ແລະ ຊົງເຮັດພຣະທັຍໃຫ້ເຫຼື້ອມໃສໃນພາຍໃນເຖີ້ນ

໙. ເມື່ອພຣະອົງກໍາລັງຊົງບູຊາມະຫາຍັນໃຜ ໆ ຈະກ່າວວ່າພຣະເຈົ້າມະຫາວິຊິດຕະຣາດຊົງບູຊາມະຫາຍັນໂດຍທີ່ພຣະອົງບໍ່ຊົງມີພຣະຣາດຊະສັດທາ ບໍ່ຊົງເປັນທາຍົກ ບໍ່ຊົງເປັນທານະບໍດີ ຊົງປິດປະຕູໄວ້ ບໍ່ຊົງເປັນຄືໂຮງທານຂອງສະມະນະພາມ ຄົນກໍາພ້າ ຄົນເດີນທາງ ວະນິພົກແລະຍາຈົກ ເຖິງແນວນັ້ນ ພຣະອົງກໍຍັງຊົງບູຊາມະຫາຍັນເຫັນແນວນັ້ນຢູ່ ແມ່ນເພາະເຫດນີ້ກໍບໍ່ມີໃຜຕໍາໜິພຣະອົງໄດ້ໂດຍທໍາ ເພາະພຣະອົງຊົງມີພຣະຣາດສັດທາຊົງເປັນທາຍົກ ຊົງເປັນທານະບໍດີ ບໍ່ໄດ້ຊົງປິດປະຕູ ຊົງເປັນຄືໂຮງທານຂອງສະມະນະພາມ ຄົນກໍາພ້າ ຄົນເດີນທາງ ວະນິພົກ ແລະ ຍາຈົກຊົງ ພໍ່າເພັງພຣະຣາດຊະກຸສົນຢູ່ເນືອງ ໆ ໂຜດຊົງຮູ້ຕາມນີ້ເຖີ້ນ ຂໍພຣະອົງຊົງບູຊາ ຊົງບໍລິຈາກ ຊົງອະນຸໂມທະນາ ແລະ ຊົງເຮັດພຣະທັຍໃຫ້ເຫຼື້ອມໃສໃນພາຍໃນເຖີ້ນ

໑໐. ເມື່ອພຣະອົງກຳລັງຊົງບູຊາມະຫາຍັນໃຜ ໆ ຈະກ່າວວ່າ ພຣະເຈົ້າມະຫາວິຊິດຕະຣາດຊົງບູຊາມະຫາຍັນ ໂດຍທີ່ພຣະອົງບໍ່ຊົງຮູ້ປະເພນີທີ່ຖ່າຍທອດສືບ ໆ ຕໍ່ ໆ ກັນມາໄວ້ຫຼາຍ ເຖິງແນວນັ້ນພຣະອົງກໍຍັງຊົງບູຊາມະຫາຍັນເຫັນແນວນັ້ນຢູ່ ແມ່ນເພາະເຫດນີ້ກໍບໍ່ມີໃຜຕຳໜິພຣະອົງໄດ້ໂດຍທຳ ເພາະພຣະອົງຊົງຮູ້ປະເພນີທີ່ຖ່າຍທອດສືບ ໆ ຕໍ່ ໆກັນມາໄວ້ຫຼາຍ ໂຜດຊົງຮູ້ຕາມນີ້ເຖີ້ນ ຂໍພຣະອົງໄດ້ຊົງບູຊາ ຊົງບໍລິຈາກ ຊົງອະນຸໂມທະນາແລະຊົງເຮັດພຣະທັຍໃຫ້ເຫຼື້ອມໃສໃນພາຍໃນເຖີ້ນ

໑໑. ເມື່ອພຣະອົງກຳລັງຊົງບູຊາມະຫາຍັນໃຜ ໆ ຈະກ່າວວ່າພຣະເຈົ້າມະຫາວິຊິດຕະຣາດຊົງບູຊາມະຫາຍັນ ໂດຍທີ່ພຣະອົງບໍ່ຊົງຮູ້ຄວາມໝາຍແຫ່ງພາສິດທີ່ໄດ້ຊົງສຶກສາມານັ້ນວ່ານີ້ຄືຈຸດມຸ້ງໝາຍແຫ່ງພາສິດນີ້ ໆ ເຖິງແນວນັ້ນ ພຣະອົງກໍຍັງຊົງບູຊາມະຫາຍັນເຫັນແນວນັ້ນຢູ່ ແມ່ນເພາະເຫດນີ້ກໍບໍ່ມີໃຜຕຳໜິພຣະອົງໄດ້ໂດຍທຳ ເພາະພຣະອົງຊົງຮູ້ຄວາມໝາຍແຫ່ງພາສິດທີ່ໄດ້ ຊົງສຶກສານັ້ນວ່າ ນີ້ຄືຈຸດມຸ້ງໝາຍແຫ່ງພາສິດນີ້ ໆ ໂຜດຊົງຮູ້ຕາມນີ້ເຖີ້ນ ຂໍພຣະອົງໄດ້ຊົງບູຊາ ຊົງບໍລິຈາກ ຊົງອະນຸ ໂມທະນາ ແລະ ຊົງເຮັດພຣະທັຍໃຫ້ເຫຼື້ອມໃສໃນພາຍໃນເຖີ້ນ

໑໒. ເມື່ອພຣະອົງກຳລັງຊົງບູຊາມະຫາຍັນໃຜຈະກ່າວວ່າ ພຣະເຈົ້າມະຫາວິຊິດຕະຣາດຊົງບູຊາມະຫາຍັນ ໂດຍທີ່ພຣະອົງບໍ່ຊົງເປັນບັນດິດ ບໍ່ຊົງສະຫຼາດຫຼັກແຫຼມ ບໍ່ຊົງມີພຣະປີຊາສາມາດ ບໍ່ສາມາດຈະຊົງດຳລິອັດຖະທີ່ເປັນອະດີດ ອະນາຄົດ ແລະ ປະຈຸບັນໄດ້ ເຖິງແນວນັ້ນພຣະອົງກໍຍັງຊົງບູຊາມະຫາຍັນ ຂະໜາດນັ້ນຢູ່ ແມ່ນເພາະເຫດນີ້ກໍບໍ່ມີໃຜຕຳໜິພຣະອົງໄດ້ໂດຍທຳ ເພາະພຣະອົງຊົງເປັນບັນດິດ ສະຫຼາດ ຫຼັກແຫຼມ ຊົງມີພຣະປີຊາສາມາດ ຊົງສາມາດທີ່ຈະດຳລິອັດຖະທີ່ເປັນອະດີດ ອະນາຄົດ ແລະ ປະຈຸບັນໄດ້ ໂຜດຊົງຮູ້ຕາມນີ້ເຖີ້ນ ຂໍພຣະອົງຊົງບູຊາ ຊົງບໍລິຈາກ ຊົງອະນຸ ໂມທະນາ ແລະ ຊົງເຮັດພຣະທັຍໃຫ້ເຫຼື້ອມໃສໃນພາຍໃນເຖີ້ນ

໑໓. ເມື່ອພຣະອົງ ກຳລັງຊົງບູຊາມະຫາຍັນໃຜຈະກ່າວວ່າ ພຣະເຈົ້າມະຫາວິຊິດຕະຣາດຊົງບູຊາມະຫາຍັນ ແຕ່ພາມປຸໂລຫິດຂອງພຣະອົງບໍ່ແມ່ນເປັນຜູ້ມີຊາດກຳເນີດດີທັງຝ່າຍບິດາ ແລະ ຝ່າຍມານດາ ບໍ່ແມ່ນຜູ້ຖືປະຕິສົນທິດ້ວຍສາຍເລືອດບໍລິສຸດ ຕະຫຼອດເຈັດອາຍຸໄຂຂອງບັນພະບຸລຸດ ເປັນຜູ້ທີ່ຈະຖືກຄັດຄ້ານຕຳໜິໄດ້ ເພາະການອ້າງເຖິງຊາດຕະກູນ ເຖິງແນວນັ້ນພຣະອົງກໍຍັງຊົງບູຊາມະຫາຍັນເຫັນແນວນັ້ນຢູ່ ແມ່ນເພາະເຫດນີ້ກໍບໍ່ມີໃຜຕຳໜິພຣະອົງໄດ້ໂດຍທຳ ເພາະພາມປຸໂລຫິດຂອງພຣະອົງເປັນຜູ້ມີຊາດກຳເນີດທັງຝ່າຍບິດາ ແລະ ຝ່າຍມານດາຖືປະຕິສົນທິດ້ວຍເລືອດບໍລິສຸດ ຕະຫຼອດເຈັດອາຍຸຂອງບັນພະບຸລຸດ ບໍ່ມີໃຜຈະຄັດຄ້ານຕຳໜິໄດ້ ເພາະອ້າງເຖິງຊາດຕະກູນ ໂຜດຊົງຮູ້ຕາມນີ້ເຖີ້ນ ຂໍພຣະອົງຊົງບູຊາ ຊົງບໍລິຈາກ ຊົງອະນຸໂມທະນາ ແລະ ຊົງເຮັດພຣະທັຍໃຫ້ເຫຼື້ອມໃສໃນພາຍໃນເຖີ້ນ

໑໔. ເມື່ອພຣະອົງກຳລັງຊົງບູຊາມະຫາຍັນໃຜ ໆ ຈະກ່າວວ່າພຣະເຈົ້າມະຫາວິຊິດຕະຣາດຊົງບູຊາມະຫາຍັນ ແຕ່ພາມປຸໂລຫິດຂອງພຣະອົງບໍ່ແມ່ນຜູ້ຄົງແກ່ຮຽນ ບໍ່ຊົງຈຳມົນ ບໍ່ຮູ້ຈົບໄຕຣເພດ ບໍ່ຮູ້ນິຄັນຖຸສາດ ເກຕຸພະສາດ ອັກສອນສາດ ແລະ ປະຫວັດສາດ ບໍ່ແມ່ນຜູ້ຮູ້ແມ່ບົດ ແລະ ໄວຍາກອນ ບໍ່ແມ່ນຜູ້ຊຳນານໂລກາຍະຕະສາດ ແລະ ລັກສະນະມະຫາບຸຣຸດ ເຖິງແນວນັ້ນ ພຣະອົງກໍຍັງຊົງບູຊາມະຫາຍັນເຫັນແນວນັ້ນຢູ່ ແມ່ນເພາະເຫດນີ້ ກໍບໍ່ມີໃຜຕຳໜິພຣະອົງໄດ້ໂດຍທຳ ເພາະພາມປຸໂລຫິດຂອງພຣະອົງເປັນຜູ້ຄົງແກ່ຮຽນ ຊົງຈຳມົນຮູ້ຈົບໄຕຣເພດ ພ້ອມທັງນິຄັນຖຸສາດ ເກຕຸພະສາດ ອັກສອນສາດ ແລະ ປະຫວັດສາດຮູ້ແມ່ບົດ ແລະ ໄວຍາກອນຊຳນານໂລກາຍະຕະສາດ ແລະ ລັກສະນະມະຫາບຸຣຸດ ໂຜດຊົງຮູ້ຕາມນີ້ເຖີ້ນ ຂໍພຣະອົງຊົງບູຊາ ຊົງບໍລິຈາກ ຊົງອະນຸໂມທະນາ ແລະ ຊົງເຮັດພຣະທັຍໃຫ້ເຫຼື້ອມໃສໃນພາຍໃນເຖີ້ນ

໑໕. ເມື່ອພຣະອົງກຳລັງຊົງບູຊາມະຫາຍັນໃຜ ໆຈະກ່າວວ່າ ພຣະເຈົ້າມະຫາວິຊິດຕະຣາດຊົງບູຊາມະຫາຍັນ ແຕ່ພາມປຸໂລຫິດຂອງພຣະອົງບໍ່ແມ່ນຜູ້ມີສີນ ບໍ່ມີສີນທີ່ຈະເລີນ ບໍ່ປະກອບດ້ວຍສີນທີ່ຈະເລີນ ເຖິງແນວນັ້ນ ພຣະອົງກໍຍັງຊົງບູຊາມະຫາຍັນເຫັນແນວນັ້ນຢູ່ ແມ່ນເພາະເຫດນີ້ກໍບໍ່ມີໃຜຕຳໜິພຣະອົງໄດ້ໂດຍທຳ ເພາະພາມປຸໂລຫິດຂອງພຣະອົງເປັນຜູ້ມີສີນມີສີນທີ່ຈະເລີນປະກອບດ້ວຍສີນທີ່ຈະເລີນ ໂຜດຊົງຮູ້ຕາມນີ້ເຖີ້ນ ຂໍພຣະອົງຊົງບູຊາ ຊົງບໍລິຈາກຊົງອະນຸໂມທະນາ ແລະ ຊົງເຮັດພຣະທັຍໃຫ້ເຫຼື້ອມໃສໃນພາຍໃນເຖີ້ນ

໑໖. ເມື່ອພຣະອົງກຳລັງຊົງບູຊາມະຫາຍັນໃຜ ໆ ຈະກ່າວວ່າພຣະເຈົ້າມະຫາວິຊິດຕະຣາດ ຊົງບູຊາມະຫາຍັນ ແຕ່ພາມປຸໂລຫິດຂອງພຣະອົງບໍ່ແມ່ນບັນດິດ ຜູ້ສະຫລຽວສະຫຼາດມີປັນຍາລຳດັບທີ່ ໑ ຫຼື ທີ່ ໒ ໃນ ບັນດາພາມຜູ້ໄດ້ຮັບການບູຊາ ເຖິງແນວນັ້ນພຣະອົງກໍຍັງຊົງບູຊາມະຫາຍັນເຫັນແນວນັ້ນຢູ່ ແມ່ນເພາະເຫດນີ້ກໍບໍ່ມີໃຜຕຳໜິພຣະອົງໄດ້ໂດຍທຳ ເພາະພາມປຸໂລຫິດຂອງພຣະອົງ ເປັນຜູ້ສະຫລຽວສະຫຼາດ ມີປັນຍາລຳດັບທີ່ ໑ ຫຼື ທີ່ ໒ ໃນບັນດາພາມຜູ້ຮັບການບູຊາ ໂຜດຊົງຮູ້ຕາມນີ້ເຖີ້ນ ຂໍພຣະອົງຊົງບູຊາ ຊົງບໍລິຈາກ ຊົງອະນຸໂມທະນາ ແລະຊົງເຮັດພຣະທັຍໃຫ້ເຫຼື້ອມໃສໃນພາຍໃນເຖີ້ນ

ພາມປຸໂລຫິດໄດ້ຂາບທູນຊີ້ແຈງໃຫ້ເຫັນຊັດແຈ້ງ ຊັກຊວນໃຫ້ຢາກຮັບເອົາໄປປະຕິບັດສຸກຍູ້ພຣະທັຍຂອງພຣະເຈົ້າມະຫາວິຊິດຕະຣາດ ທີ່ຈະຊົງເຮັດພິທີບູຊາມະຫາຍັນ ໃຫ້ອາດຫານແກ້ກ້າ ປອບປະໂລມພຣະທັຍໃຫ້ສົດຊື່ນເບີກບານ ດ້ວຍອາການ ໑໖ ຢ່າງເຫຼົ່ານີ້ແລ

[໓໘໕] ໃນງານພິທີຍັນນັ້ນ ບໍ່ຕ້ອງຂ້າງົວ ແບ້ ແກະ ໄກ່ ໝູ ແລະ ສັດນານາຊະນິດບໍ່ຕ້ອງຕັດຕົ້ນໄມ້ມາເຮັດຫຼັກບູຊາຍັນ ບໍ່ຕ້ອງກ່ຽວຫຍ້າຄາເພື່ອບຽດບຽນສັດອື່ນ ແມ່ນເຫຼົ່າຊົນທີ່ເປັນຂ້າທາດຄົນຮັບໃຊ້ ກຳມະກອນຂອງພຣະເຈົ້າມະຫາວິຊິດຕະຣາດ ກໍບໍ່ຖືກລົງອາດຍາບໍ່ມີໄພຄຸກຄາມ ບໍ່ຕ້ອງຮ້ອງໄຫ້ຟູມຟາຍ ເປັນງານບູສາຍັນທີ່ເປັນບຸນຢ່າງແທ້ຈິງ ຄົນທີ່ປາດຖະໜາຈະ

ເຂົ້າຮ່ວມກໍເຂົ້າມາຮ່ວມ ທີ່ບໍ່ປາດຖະໜາກໍບໍ່ຕ້ອງເຂົ້າມາກໍໄດ້ ບໍ່ມີການບັງຄັບຜູ້ໃດ ໃນງານພິທີຍັນນີ້ ສຳເລັດລົງດ້ວຍພຽງເນີຍໃສ ນ້ຳມັນ ເນີຍຂົ້ນ ນົມສົ້ມ ນຳເຜີ້ງ ແລະ ນ້ຳອ້ອຍເທົ່ານັ້ນ

[໓໘໖] ຕໍ່ມາ ພວກເຈົ້າຜູ້ຄອງເມືອງທີ່ຢູ່ໃນນິຄົມ ແລະ ຢູ່ໃນຊົນນະບົດອັນຫ່າງໄກພວກອຳມາດຣາດຊະບໍຣິພານທີ່ຢູ່ໃນນິຄົມ ແລະ ຢູ່ໃນຊົນນະບົດ ພວກພາມມະຫາສານທີ່ຢູ່ໃນນິຄົມແລະຢູ່ໃນຊົນນະບົດ ພວກຄະຫະບໍດີຜູ້ມັ່ງຄັ່ງທີ່ຢູ່ໃນນິຄົມ ແລະ ຢູ່ໃນຊົນນະບົດພາກັນນຳຊັບຈຳນວນຫຼາຍ ເຂົ້າໄປເຝົ້າພຣະເຈົ້າມະຫາວິຊິດຕະຣາດຂາບທູນວ່າ "ຂ້າແຕ່ ມະຫາຣາດ ຂ້າພຣະອົງທັງຫຼາຍ ໄດ້ນຳຊັບຈຳນວນຫຼາຍນີ້ມາເພື່ອພຣະອົງ ຂໍພຣະອົງຊົງຮັບໄວ້ເຖີ້ນ" ພຣະອົງຕັດຕອບວ່າ "ຢ່າເລີຍທ່ານຜູ້ຈະເລີນທັງຫຼາຍ ເຮົາເອງໄດ້ໂຮມຖືລວມຊັບສິນຈຳນວນຫຼາຍມາຈາກພາສີອາກອນອັນຊອບທຳແລ້ວ ຊັບທີ່ພວກທ່ານນຳມານັ້ນກໍຈົ່ງເປັນຂອງພວກທ່ານຄືເກົ່າເຖີ້ນ ແລະ ຂໍໃຫ້ພວກທ່ານຈົ່ງນຳຊັບໃນບ່ອນນີ້ໄປເພີ່ມຕື່ມອີກ" ຄົນເຫຼົ່ານັ້ນ ເມື່ອຖືກປະຕິເສດຈຶ່ງພາກັນຈາກໄປ ພາກັນເປີກສາຫາຣືກັນວ່າ "ການທີ່ພວກເຮົາຈະຮັບຊັບສິນເຫຼົ່ານີ້ກັບຄືນໄປສູ່ບ້ານເມືອງຂອງຕົນອີກນັ້ນ ບໍ່ເປັນການສົມຄວນເລີຍ ພຣະເຈົ້າມະຫາວິຊິດຕະຣາດກຳລັງຊົງບູຊາມະຫາຍັນ ຖ້າຈັ່ງຊັ້ນ ພວກເຮົາມາຮ່ວມບູຊາຍັນໂດຍສະເດັດພຣະຣາດຊະກຸສົນກັນເຖີ້ນ"

[໓໘໗] ຕໍ່ມາພວກເຈົ້າຜູ້ຄອງເມືອງທີ່ຢູ່ໃນນິຄົມ ແລະ ຢູ່ໃນຊົນນະບົດ ພາກັນເລີ່ມພ່ຳເພັງທານທາງທິດຕາເວັນອອກຂອງຍັນ ພວກອຳມາດຣາດຊະບໍຣິພານທີ່ຢູ່ໃນນິຄົມ ແລະ ຢູ່ໃນຊົນນະບົດເລີ່ມພ່ຳເພັງທານທາງທິດໃຕ້ຂອງຍັນ ພວກພາມມະຫາສານທີ່ຢູ່ໃນນິຄົມ ແລະ ຢູ່ໃນຊົນນະບົດເລີ່ມພ່ຳເພັງທານທາງທິດຕາເວັນຕົກຂອງຍັນ ພວກຄະຫະບໍດີຜູ້ມັ່ງຄັ່ງທີ່ຢູ່ໃນນິຄົມ ແລະ ຢູ່ໃນຊົນນະບົດເລີ່ມພ່ຳເພັງທານທາງທິດເໜືອຂອງຍັນ ແມ່ນໃນຍັນຂອງເຈົ້າຜູ້ຄອງເມືອງເຫຼົ່ານັ້ນ ກໍບໍ່ຕ້ອງຂ້າງົວ ແບ້ ແກະ ໄກ່ ໝູ ແລະ ສັດນານາຊະນິດ ບໍ່ຕ້ອງຕັດຕົ້ນໄມ້ມາຕັ້ງເປັນຫຼັກບູຊາຍັນ ບໍ່ຕ້ອງກ່ຽວຫຍ້າຄາແລ້ວປຽດປຽນສັດອື່ນ ແມ່ນເຫຼົ່າຊົນທີ່ເປັນຂ້າທາດ ຄົນຮັບໃຊ້ກຳມະກອນຂອງເຈົ້າຜູ້ຄອງເມືອງເປັນຕົ້ນເຫຼົ່ານັ້ນ ກໍບໍ່ຕ້ອງຖືກລົງອາດຍາ ບໍ່ມີໄພຄຸກຄາມບໍ່ຕ້ອງຮ້ອງໄຫ້ຟູມຟາຍເພາະງານພິທີບູຊາຍັນ ເປັນງານພິທີບູສາຍັນທີ່ເປັນບຸນຢ່າງແທ້ຈິງ ຄົນທີ່ປາດຖະໜາຈະຮ່ວມໃນພິທີກໍເຂົ້າຮ່ວມໄດ້ ທີ່ບໍ່ປາດຖະໜາກໍບໍ່ຕ້ອງເຂົ້າມາຮ່ວມໃນພິທີຍັນນີ້ ບໍ່ມີການບັງຄັບ ສຳເລັດລົງໄດ້ດ້ວຍມີພຽງແຕ່ເນີຍໃສ ນ້ຳມັນ ເນີຍຂົ້ນ ນົມສົ້ມ ນຳເຜີ້ງ ແລະ ນ້ຳອ້ອຍເທົ່ານັ້ນ ປະຊາຣາດ ໔ ໝູ່ເຫັນດີພ້ອມຕາມພຣະຣາດຊະດຳລິຂອງພຣະເຈົ້າມະຫາວິຊິດຕະຣາດ ຊົງປະກອບດ້ວຍຄຸນລັກສະນະ ໘ ຢ່າງ ພາມປຸໂລຫິດປະກອບດ້ວຍຄຸນສົມບັດ ໔ ຢ່າງ ແລະ ຍັນພິທີອີກ ໓ ປະການ ຈຶ່ງຮວມຮຽກວ່າຍັນສົມບັດ ໓ ປະການມີອົງ ໑໖ ປະການ

[໓໘໘] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ ພວກພາມໄດ້ສົ່ງສຽງໂຮຮ້ອງດັ່ງຂຶ້ນມາວ່າ "ໂອ! ຍັນ ໂອ! ຍັນ ສົມບັດ" ສະແດງຄວາມຍິນດີ ມີແຕ່ພາມກູດທັນຕະຜູ້ດຽວທີ່ນັ່ງນິ່ງມິດງຽບຢູ່

ທັນໃດນັ້ນ ພວກພາມໄດ້ຖາມພາມກູດທັນຕະວ່າ “ເຫດໃດ ທ່ານກູດທັນຕະ ຈຶ່ງບໍ່ຊື່ນຊົມຍິນດີໃນພາສິດຂອງພຣະສະມະນະໂຄດົມວ່າ ເປັນຄຳກ່າວທີ່ຖືກຕ້ອງແນວນັ້ນ”

ພາມກູດທັນຕະຕອບວ່າ “ທ່ານຜູ້ຈະເລີນທັງຫຼາຍ ຂ້າພະເຈົ້າຈະບໍ່ຊື່ນຊົມໃນສຸພາສິດຂອງພຣະສະມະນະໂຄດົມວ່າ ເປັນຄຳກ່າວຖືກຕ້ອງກໍບໍ່ແມ່ນ ເຖິງແມ່ນວ່າ ຜູ້ທີ່ບໍ່ຊື່ນຊົມໃນສຸພາສິດຂອງພຣະສະມະນະໂຄດົມວ່າ ເປັນຄຳກ່າວຖືກຕ້ອງຫົວຂອງເຂົາຈະແຕກແຍກອອກຈາກກັນນັ້ນ ຂ້າພະເຈົ້າກໍຍັງຮູ້ສຶກແນວນີ້ວ່າ ພຣະສະມະນະໂຄດົມບໍ່ໄດ້ຕັດຢ່າງນີ້ວ່າ ເຮົາໄດ້ຟັງມາແນວນີ້ ຫຼື ວ່າ ເລື້ອງນີ້ຄວນເປັນແນວນີ້ ແຕ່ພຣະອົງຕັດວ່າ ເຫດແນວນີ້ໄດ້ເກີດຂຶ້ນແລ້ວໃນເວລານັ້ນ ເລື້ອງແນວນີ້ໄດ້ມີແລ້ວໃນເວລານັ້ນ ແຕ່ຂ້າພະເຈົ້າຄິດວ່າ ເໝືອນພຣະສະມະນະໂຄດົມ ຊິງເປັນພຣະເຈົ້າມະຫາວິຊິດຕະຣາດ ຜູ້ເປັນເຈົ້າຂອງແຫ່ງຍັນໃນຄັ້ງນັ້ນເສຍເອງ ຫຼື ພຣະອົງຊົງເປັນພາມປຸໂລຫິດ ຜູ້ອຳນວຍການບູຊາຍັນນັ້ນ ຢ່າງແນ່ນອນ” ທູນຖາມວ່າ “ທ່ານພຣະໂຄດົມຊົງຮູ້ແຈ້ງຊັດດ້ວຍພຣະອົງເອງ ຫຼື ວ່າຜູ້ບູຊາຍັນ ຫຼືຜູ້ອຳນວຍການບູຊາຍັນຂະໜາດນັ້ນ ຫຼັງຈາກຕາຍແລ້ວໄປບັງເກີດໃນສຸກຄະຕິໂລກສະຫວັນ”

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ “ພາມ ເຮົາຮູ້ແຈ້ງຊັດດ້ວຍຕົນເອງວ່າ ຜູ້ບູຊາຍັນຫຼືຜູ້ອຳນວຍການບູຊາຍັນເຫັນຢູ່ແນວນັ້ນ ຫຼັງຈາກຕາຍແລ້ວໄປບັງເກີດໃນສຸກຄະຕິໂລກສະຫວັນໃນສະໄໝນັ້ນ ເຮົາໄດ້ເກີດເປັນພາມປຸໂລຫິດ ຜູ້ອຳນວຍການບູຊາຍັນນັ້ນແລ

## ຍັນທີ່ສືບຕະກູນກັນມາ

[໓໔໙] ພາມກູດທັນຕະທູນຖາມວ່າ “ທ່ານພຣະໂຄດົມ ມີຍັນຢ່າງອື່ນອີກຫຼືບໍ່? ທີ່ໃຊ້ທຶນຊັບ ແລະ ມີການກະກຽມໜ້ອຍກວ່າ ແຕ່ມີຜະລານິສົງຫຼາຍກວ່າຍັນສົມບັດ ໓ ປະການ ມີອົງປະກອບ ໑໖ ປະການຢ່າງນັ້ນ”

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ “ມີຢູ່ພາມ”

ພາມທູນຖາມຕໍ່ໄປວ່າ “ທ່ານພຣະໂຄດົມຍັນນັ້ນເປັນແນວໃດ?”

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ “ພາມ ນິຕະຍະທານທີ່ເຮັດສືບ ໆ ກັນມາ ຖວາຍເຈາະຈົງແກ່ບັນພະຊິດຜູ້ມີສິນ ນີ້ເປັນຍັນເຊິ່ງໃຊ້ທຶນນະຊັບ ແລະ ມີການກະກຽມໜ້ອຍກວ່າ ແຕ່ມີຜະລານິສົງຫຼາຍກວ່າຍັນສົມບັດ ໓ ປະການ ມີອົງປະກອບ ໑໖ ປະການ ແນວນີ້ແລ

ເຂົາທູນຖາມວ່າ “ທ່ານພຣະໂຄດົມ ອັນໃດເປັນເຫດ ອັນໃດຄືປັດໄຈໃຫ້ນິຕະຍະທານທີ່ເຮັດສືບ ໆ ກັນມາ ຖວາຍເຈາະຈົງແກ່ບັນພະຊິດຜູ້ມີສິນ ໃຊ້ທຶນນະຊັບ ແລະ ມີການກະກຽມ

ໜ້ອຍກວ່າ ແຕ່ມີຜະລານິສົງຫຼາຍກວ່າຍັນສົມບັດ ໓ ປະການ ມີອົງປະກອບ ໑໖ ປະການ ຢ່າງນີ້”

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ “ພາມ ພຣະອະຣະຫັນ ຫຼື ທ່ານທີ່ບັນລຸອະຣະຫັນຕະມັກຍ່ອມບໍ່ເຂົ້າໄປສູ່ໃນຍັນພິທີເຊັ່ນນີ້ ເພາະໃນຍັນພິທີນັ້ນ ຍັງປາກົດວ່າມີການປະຫັດປະຫານສັດດ້ວຍທ່ອນໄມ້ ໗ລ໗ ທີ່ປະກົດວ່າເປັນບາບ ດັ່ງນັ້ນ ພຣະອະຣະຫັນ ຫຼື ທ່ານທີ່ບັນລຸອະຣະຫັນຕະມັກຈຶ່ງບໍ່ເຂົ້າໄປສູ່ຍັນພິທີແນວນັ້ນ ສ່ວນນິຕະຍະທານທີ່ເຮັດສືບກັນມາອັນເປັນກຸສົນຖວາຍເຈາະຈົງບັນພະຊິດຜູ້ມີສິນນັ້ນ ທີ່ພຣະອະຣະຫັນ ຫຼື ທ່ານທີ່ບັນລຸອະຣະຫັນຕະມັກປາດຖະນາເຂົ້າໄປສູ່ຍັນພິທີນັ້ນ ເພາະໃນຍັນນັ້ນ ບໍ່ປາກົດວ່າ ມີການປະຫັດປະຫານສັດດ້ວຍທ່ອນໄມ້ ໗ລ໗ ທີ່ເປັນກຸສົນ ດັ່ງນີ້ ພຣະອະຣະຫັນ ຫຼື ທ່ານທີ່ບັນລຸອະຣະຫັນຕະມັກ ຈຶ່ງປາດຖະໜາເຂົ້າຮ່ວມໃນງານຍັນພິທີນີ້ ນີ້ເປັນເຫດເປັນປັດໄຈໃຫ້ນິຕະຍະທານທີ່ເຮັດສືບ ໆ ກັນມາ ໃຊ້ທຶນນະຊັບ ແລະ ມີການກະກຽມໜ້ອຍກວ່າ ແຕ່ມີຜະລານິສົງຫຼາຍກວ່າຍັນສົມບັດ ໓ ປະການ ມີອົງປະກອບ ໑໖ ຢ່າງດັ່ງນີ້ແລ

[໓໕໐] ເຂົາທູນຖາມວ່າ “ທ່ານພຣະໂຄດົມ ມີຍັນຢ່າງອື່ນອີກຫຼືບໍ່? ທີ່ໃຊ້ທຶນນະຊັບແລະ ມີການກະກຽມໜ້ອຍກວ່າ ແຕ່ມີຜະລານິສົງຫຼາຍກວ່າຍັນສົມບັດ ໓ ປະການ ມີອົງປະກອບ ໑໖ ແລະ ຫຼາຍກວ່ານິຕະຍະທານທີ່ເຮັດສືບ ໆ ກັນມານັ້ນ”

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ “ມີຢູ່ພາມ”

ພາມທູນຖາມວ່າ “ທ່ານພຣະໂຄດົມຍັນນັ້ນ ເປັນແນວໃດນໍ?”

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ “ຍັນຂອງບຸກຄົນຜູ້ສ້າງວິຫານອຸທິດພຣະສົງ ຜູ້ມາຈາກທິດທັງ ໔ ນີ້ ເປັນຍັນທີ່ໃຊ້ທຶນນະຊັບ ແລະ ມີການກະກຽມໜ້ອຍກວ່າ ແຕ່ມີຜະລານິສົງຫຼາຍກວ່າຍັນສົມບັດ ໓ ປະການ ມີອົງປະກອບ ໑໖ ແລະ ຫຼາຍກວ່ານິຕະຍະທານທີ່ເຮັດສືບ ໆ ຕໍ່ກັນມານັ້ນ

[໓໕໑] ເຂົາທູນຖາມວ່າ “ທ່ານພຣະໂຄດົມ ຍັງມີຍັນຢ່າງອື່ນອີກຫຼືບໍ່? ທີ່ໃຊ້ທຶນນະຊັບແລະມີການກະກຽມໜ້ອຍກວ່າ ແຕ່ມີຜະລານິສົງຫຼາຍກວ່າຍັນສົມບັດ ໓ ປະການ ມີອົງປະກອບ ໑໖ ຢ່າງ ຫຼາຍກວ່ານິຕະຍະທານທີ່ທຳສືບກັນມາ ແລະ ຫຼາຍກວ່າວິຫານທານນັ້ນ”

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ “ມີຢູ່ພາມ”

ພາມທູນຖາມວ່າ “ທ່ານພຣະໂຄດົມຍັນນັ້ນເປັນແນວໃດ?”

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ຍັນຂອງບຸກຄົນຜູ້ມີຈິດເຫຼື້ອມໃສເຖິງພຣະພຸດທະເຈົ້າ ພ້ອມທັງພຣະທຳ ແລະ ພຣະສົງເປັນສະຣະນະນີ້ ນີ້ເປັນຍັນເຊິ່ງໃຊ້ທຶນນະຊັບ ແລະມີການກະກຽມໜ້ອຍກວ່າ ແຕ່ມີຜະລານິສົງຫຼາຍກວ່າຍັນສົມບັດ ໕ ປະການ ມີອົງປະກອບ ໑໖ ຫຼາຍກວ່ານິຕະຍະທານທີ່ທຳສືບກັນມາ ແລະ ຫຼາຍກວ່າວິຫານທານນັ້ນ

[໕໔໔] ເຂົາທູນຖາມວ່າ "ທ່ານພຣະໂຄດົມ ມີຍັນຢ່າງອື່ນອີກຫຼືບໍ່ ທີ່ໃຊ້ທຶນນະຊັບ ແລະມີການກະກຽມໜ້ອຍກວ່າ ແຕ່ມີຜະລານິສົງຫຼາຍກວ່າຍັນສົມບັດ ໕ ປະການ ມີອົງປະກອບ ໑໖ ຫຼາຍກວ່ານິຕະຍະທານທີ່ເຮັດສືບ ໆ ກັນມາ ຫຼາຍກວ່າວິຫານທານ ແລະ ຫຼາຍກວ່າການມີສັດທາຕໍ່ໄຕຣສະຣະນະຄົມນັ້ນ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ມີຢູ່ພາມ"

ພາມທູນຖາມວ່າ "ທ່ານພຣະໂຄດົມຍັນນັ້ນເປັນແນວໃດ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ການທີ່ບຸກຄົນຜູ້ມີຈິດເຫຼື້ອມໃສສະມາທານສິກຂາບົດເຫຼົ່ານີ້ ຄື ເຈຕະນາເປັນເຫດເວັ້ນຈາກການຂ້າສັດ ເຈຕະນາເປັນເຫດເວັ້ນຈາກການຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ເຈຕະນາເປັນເຫດເວັ້ນຈາກການປະພຶດຜິດໃນກາມ ເຈຕະນາເປັນເຫດເວັ້ນຈາກການເວົ້າຕົວະ ເຈຕະນາເປັນເຫດເວັ້ນຈາກການເສບຂອງມຶນເມົາສຸຣາ ແລະເມຣັຍອັນເປັນເຫດແຫ່ງຄວາມປະໝາດ ນີ້ເປັນຍັນເຊິ່ງໃຊ້ທຶນນະຊັບ ແລະ ມີການກະກຽມໜ້ອຍກວ່າແຕ່ມີຜະລານິສົງຫຼາຍກວ່າຍັນສົມບັດ ໕ ປະການ ມີອົງປະກອບ ໑໖ ຢ່າງ ຫຼາຍກວ່ານິຕະຍະທານທີ່ເຮັດສືບ ໆ ກັນມາ ຫຼາຍກວ່າວິຫານທານ ແລະ ຫຼາຍກວ່າການມີສັດທາຖືໄຕຣສະຣະນະຄົມນັ້ນ

[໕໔໕] ເຂົາທູນຖາມວ່າ "ທ່ານພຣະໂຄດົມມີຍັນຢ່າງອື່ນອີກຫຼືບໍ່? ທີ່ໃຊ້ທຶນນະຊັບ ແລະມີການກະກຽມໜ້ອຍກວ່າ ແຕ່ມີຜະລານິສົງຫຼາຍກວ່າຍັນສົມບັດ ໕ ປະການ ມີອົງປະກອບ ໑໖ ຢ່າງ ຫຼາຍກວ່ານິຕະຍະທານທີ່ເຮັດສືບ ໆ ກັນມາ ຫຼາຍກວ່າວິຫານທານ ຫຼາຍກວ່າສະໄຕຣສາຣະນະຄົມ ແລະ ຫຼາຍກວ່າສິກຂາບົດເຫຼົ່ານັ້ນ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ມີຢູ່ພາມ"

ພາມທູນຖາມວ່າ "ທ່ານພຣະໂຄດົມຍັນນັ້ນເປັນແນວໃດ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາມ ຕະຖາຄົດອຸບັດຂຶ້ນມາໃນໂລກນີ້ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຊອບ ฯລฯ (ເພິ່ງນຳຂໍ້ຄວາມເຕັມໃນສາມັນຍະຜົນສູດມາໃສ່ໄວ້ໃນບ່ອນນີ້) ພິກຂຸຊື່ວ່າ ສົມບູນດ້ວຍສີນເປັນແນວນີ້ແລ ฯລฯ ແລ້ວບັນລຸປະຖົມມະ

ຊານຢູ່ນີ້ເປັນຍັນທີ່ໃຊ້ທຶນນະຊັບ ແລະ ມີການກະກຽມໜ້ອຍກວ່າ ແຕ່ມີຜະລານິສົງຫຼາຍກວ່າຍັນທີ່ກ່າວມາແລ້ວກ່ອນໆ ຯລຯ ບັນລຸທຸຕິຍະຊານຢູ່ ບັນລຸຕະຕິຍະຊານຢູ່ ບັນລຸຈະຕຸດຖະຊານຢູ່ນີ້ເປັນຍັນທີ່ໃຊ້ທຶນນະຊັບແລະມີການກະກຽມໜ້ອຍກວ່າ ແຕ່ມີຜະລານິສົງຫຼາຍກວ່າຍັນທີ່ກ່າວມາແລ້ວກ່ອນ ໆ ຯລຯ ນ້ອມຈິດໄປເພື່ອຍານະທັດສະນະ ຯລຯ ນີ້ເປັນຍັນເຊິ່ງໃຊ້ທຶນນະຊັບ ແລະ ມີການກະກຽມໜ້ອຍກວ່າ ແຕ່ມີຜະລານິສົງຫຼາຍກວ່າຍັນທີ່ກ່າວມາແລ້ວກ່ອນ ໆ ຯລຯ ຮູ້ຊັດແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແບວນີ້ອີກຕໍ່ໄປ" ນີ້ແລ ເປັນຍັນເຊິ່ງໃຊ້ທຶນນະຊັບ ແລະ ມີການກະກຽມໜ້ອຍກວ່າ ແຕ່ມີຜະລານິສົງຫຼາຍກວ່າຍັນທີ່ກ່າວມາແລ້ວກ່ອນ ໆ ພາມບໍ່ມີຍັນສົມບັດອື່ນ ໆ ທີ່ຈະດີຍິ່ງກວ່າ ຫຼື ປະເສີດ ປະນີດກວ່າ ຍັນສົມບັດນີ້ອີກແລ້ວ

## ພາມກູດທັນຕະປະກາດຕົນເປັນອຸປາສົກ

[໓໕໔] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແບວນີ້ ພາມກູດທັນຕະໄດ້ຂາບທູນວ່າ "ຂ້າແຕ່ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມຊັດແຈ້ງມ່ວນຫຼາຍ ຂ້າແຕ່ ທ່ານພຣະໂຄດົມພາສິດຂອງທ່ານພຣະໂຄດົມຊັດແຈ້ງມ່ວນຫຼາຍ ທ່ານພຣະໂຄດົມຊົງປະກາດທຳຊັດແຈ້ງໂດຍປະການຕ່າງ ໆ ປຽບຄື ບຸກຄົນຫງາຍຂອງທີ່ງ້ວມຢູ່ ເປີດຂອງທີ່ປິດ ບອກທາງແກ່ຜູ້ຫຼົງທາງ ຫຼືເຍືອງໄຟໃນທີ່ມືດໂດຍຕັ້ງໃຈວ່າ ຄົນມີຕາດີຈັກເຫັນທາງໄດ້ ຂ້າພຣະອົງນີ້ ຂໍເຖິງທ່ານພຣະໂຄດົມ ພ້ອມທັງພຣະທຳ ແລະ ພຣະສົງເປັນສະຣະນະ ຂໍທ່ານພຣະໂຄດົມຈົ່ງຊົງຈືຂ້າພຣະອົງວ່າ ເປັນອຸປາສົກຜູ້ຖືສະຣະນະນັບຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ ຂ້າພຣະອົງໄດ້ປ່ອຍງົວເຖິກ ລູກງົວເຖິກ ລູກງົວເພດແມ່ ແບ້ ແກະ ຢ່າງລະ ໗໐໐ ໂຕ ໄດ້ຄືນຊີວິດໃຫ້ແກ່ສັດເຫຼົ່ານັ້ນ ຂໍສັດເຫຼົ່ານັ້ນ ຈົ່ງໄດ້ກິນຫຍ້າຂຽວສົດ ໄດ້ດື່ມນໍ້າເຢັນ ກະແສລົມອ່ອນ ໆ ຈົ່ງພັດຖືກໂຕສັດເຫຼົ່ານັ້ນ ໃຫ້ເປັນສຸກເຖີ້ນ

## ພາມກູດທັນຕະບັນລຸໂສດາປັດຕິຜົນ

[໓໕໕] ລຳດັບນັ້ນ ພຣະຜູ້ມີພຣະພາກໄດ້ຕັດສະແດງ ອະນຸປຸບພິກະຖາ ຊົງປະກາດເລື້ອງທານ ເລື້ອງສິນ ເລື້ອງສະຫວັນ ເລື້ອງໂທດ ຄວາມຕ່ຳຊາມ ຄວາມເສົ້າໝອງແຫ່ງກາມ ແລະ ອານິສົງໃນການອອກບວດແກ່ພາມກູດທັນຕະ ເມື່ອຊົງຮູ້ວ່າພາມກູດທັນຕະມີຈິດຄວນບັນລຸທຳ ສະຫງົບອ່ອນໂຍນ ປາສະຈາກນິວອນ ເບີກບານຜ່ອງໃສຢູ່ ຈຶ່ງຊົງປະກາດສາມຸກກັງສິກເທສະນາ ວ່າດ້ວຍຫົວຂໍທຳ ທຸກ ສະມຸທັຍ ນິໂຣດ ມັກ ທຳມະຈັກຂຸອັນປາສະຈາກທຸລີຄືກິເລດປາສະຈາກມົນທິນ ປັນຍາໄດ້ເກີດຂຶ້ນເອງ ແກ່ພາມກູດທັນຕະເທິງບ່ອນນັ່ງນັ້ນເອງວ່າ "ສິ່ງໃດສິ່ງໜຶ່ງ ມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດ ລ້ວນດັບໄປເປັນທຳມະດາ" ປຽບຄື ຜ້າຂາວສະອາດ ປາສະຈາກມົນທິນ ຄວນຮັບນ້ຳຍ້ອມໄດ້ເປັນຢ່າງດີດັ່ງນີ້ແລ

[໓໕໖] ເມື່ອພາມກູດທັນຕະມີດວງຕາເຫັນທຳ ບັນລຸທຳ ຮູ້ທຳ ໃຈປັກລົງສູ່ທຳໝົດສິ້ນຄວາມສົງໄສ ບໍ່ມີຄຳຖາມໃນທຳ ມີຄວາມແກ້ກ້າ ບໍ່ຕ້ອງເຊື່ອໃຜອີກໃນຫຼັກຄຳສອນຂອງພຣະສາດສະດາ ໄດ້ຂາບທູນພຣະຜູ້ມີພຣະພາກວ່າ "ຂໍທ່ານພຣະໂຄດົມ ພ້ອມກັບພິກຂຸສົງ ໂຜດຮັບພັດຕາຫານຂອງຂ້າພຣະອົງໃນມື້ອື່ນນີ້ເຖີ້ນ

ພຣະຜູ້ມີພຣະພາກເຈົ້າ ຊົງຮັບນິມົນດ້ວຍພຣະອາການດຸດສະດີ

[໓໕໗] ດ້ວຍອາການຢ່າງນັ້ນ ພາມກູດທັນຕະກໍຮູ້ແລ້ວວ່າ ພຣະຜູ້ມີພຣະພາກເຈົ້າ ຊົງຮັບນິມົນແລ້ວ ຈຶ່ງໄດ້ລຸກຈາກບ່ອນນັ່ງ ຂາບພຣະຜູ້ມີພຣະພາກເຈົ້າ ທຳປະທັກສິນແລ້ວກັບໄປ ເມື່ອລ່ວງຣາຕີນັ້ນ ເຂົາໄດ້ສັ່ງໃຫ້ຈັດກຽມຂອງຂົບສັນຢ່າງປະນີດໄວ້ໃນໂຮງພິທີບູຊາຍັນຂອງຕົນ ແລ້ວສັ່ງໃຫ້ຄົນໄປຂາບທູນພັດຕະການແດ່ພຣະຜູ້ມີພຣະພາກເຈົ້າວ່າ "ທ່ານພຣະໂຄດົມ ໄດ້ເວລາແລ້ວ ພັດຕາຫານສຳເລັດພ້ອມແລ້ວ"

[໓໕໘] ພຣະຜູ້ມີພຣະພາກ ຊົງຄອງອັນຕະຣະວາສົກຖືບາດ ແລະ ຈີວອນ ສະເດັດໄປສູ່ໂຮງພິທີບູຊາຍັນຂອງພາມກູດທັນຕະ ພ້ອມກັບພິກຂຸສົງ ເມື່ອມາຮອດແລ້ວ ຊົງປະທັບນັ່ງເທິງອາສະນະທີ່ປູຖວາຍໄວ້ໃຫ້ ຈາກນັ້ນ ພາມກູດທັນຕະ ໄດ້ນຳຂອງຂົບສັນອັນປະນີດອອກມາປະເຄນພິກຂຸສົງ ອັນມີພຣະພຸດທະເຈົ້າ ຊົງເປັນປະທານໃຫ້ອີ່ມໜຳດ້ວຍຕົນເອງ ເມື່ອພຣະຜູ້ມີພຣະພາກສະເຫວີຍສຳເລັດເສັດແລ້ວ ຊົງວາງພຣະຫັດອອກຈາກພາເຂົ້າ ພາມກູດທັນຕະ ຈຶ່ງນັ່ງລົງໃນທີ່ສົມຄວນຂອງຕົນ ເຊິ່ງນັ່ງຕ່ຳກວ່າພຣະຜູ້ມີພຣະພາກ ໆ ຊົງຊີ້ແຈງໃຫ້ພາມກູດທັນຕະເຫັນຊັດແຈ້ງ ຊັກຊວນໃຫ້ຢາກຮັບເອົາໄປປະຕິບັດ ສຸກຍູ້ໃຈໃຫ້ອາດຫານແກ້ກ້າ ປອບປະໂລມໃຈໃຫ້ສົດຊື່ນ ດ້ວຍທັມມີກະຖາແລ້ວ ຊົງລຸກຈາກອາສະນະສະເດັດຈາກໄປ

**ກູດທັນຕະສູດຈົບ**

# ๖. ມະຫາລິສູດ

## ວ່າດ້ວຍເຈົ້າລິດສະວີຊື່ມະຫາລີ

### ເລື້ອງພາມມະນະທູດ

[໓໕໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນກູຕາຄານສາລາ ໃນປ່າມະຫາວັນເຂດເມືອງເວສາລີ ເວລານັ້ນ ພາມມະນະທູດຊາວໂກສົນ ແລະ ຊາວມະຄົດຈຳນວນຫຼາຍ ມີວຽກຈຳເປັນຕ້ອງໄດ້ພັກເຊົາຢູ່ໃນເມືອງເວສາລີ ພາມມະນະທູດຊາວໂກສົນ ແລະ ຊາວມະຄົດເຫຼົ່ານັ້ນ ໄດ້ຟັງຂ່າວມາວ່າ “ທ່ານພຣະສະມະນະໂຄດົມ ເປັນສັກກະຍະບຸດ ສະເດັດອອກບວດຈາກສາກະຍະຕະກູນ ຊົງໄດ້ປະທັບຢູ່ໃນກູຕາຄານສາລາ ໃນປ່າມະຫາວັນເຂດເມືອງເວສາລີ ທ່ານພຣະໂຄດົມນັ້ນ ມີກິດຕິສັບອັນງາມຊ່າລືໄປທົ່ວແນວນີ້ວ່າ ฯລฯ ການໄດ້ພົບພຣະອະຣະຫັນທັງຫຼາຍແນວນີ້ ເປັນຄວາມດີຢ່າງແທ້ຈິງ

[໓๖໐] ຕໍ່ມາ ພາມມະນະທູດຊາວໂກສົນ ແລະ ຊາວມະຄົດເຫຼົ່ານັ້ນ ເຂົ້າໄປສູ່ກູຕາຄານສາລາໃນປ່າມະຫາວັນ ສະໄໝນັ້ນ ທ່ານພຣະນາຄິຕະເປັນພຣະພຸດອຸປັດຖາກ ພາມມະນະທູດຊາວໂກສົນ ແລະຊາວມະຄົດເຫຼົ່ານັ້ນ ໄດ້ເຂົ້າໄປຫາທ່ານພຣະນາຄິຕະແລ້ວຮຽນຖາມວ່າ “ທ່ານພຣະນາຄິຕະ ເວລານີ້ທ່ານພຣະໂຄດົມນັ້ນ ປະທັບຢູ່ທີ່ໃດພວກເຮົາຕ້ອງການເຂົ້າໄປເຝົ້າທ່ານພຣະໂຄດົມພຣະອົງນັ້ນ

ທ່ານພຣະນາຄິຕະຕອບວ່າ “ທ່ານຜູ້ຈະເລີນທັງຫຼາຍ ເວລານີ້ ບໍ່ແມ່ນເວລາສົມຄວນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເພາະພຣະຜູ້ມີພຣະພາກເຈົ້າ ຊົງປະທັບຫຼີກລີ້ຢູ່

ພາມມະນະທູດຊາວໂກສົນ ແລະ ຊາວມະຄົດເຫຼົ່ານັ້ນ ຈຶ່ງນັ່ງຖ້າໃນທີ່ສົມຄວນໃນພຣະວິຫານນັ້ນເອງ ດ້ວຍຫວັງວ່າ “ພວກເຮົາເມື່ອໄດ້ເຂົ້າໄປເຝົ້າທ່ານພຣະໂຄດົມແລ້ວກ່ອນຈຶ່ງຈະໄປ”

### ເລື້ອງເຈົ້າໂອຕະທັນທະລິດສະຫວີ

[໓๖໑] ຝ່າຍເຈົ້າໂອຕະທັນທະລິດສະຫວີ ພ້ອມດ້ວຍເຈົ້າລິດສະຫວີຜູ້ເປັນບໍລິວານໝູ່ໃຫຍ່ ສະເດັດເຂົ້າໄປຫາທ່ານພຣະນາຄິຕະທີ່ກູຕາຄານສາລາໃນປ່າມະຫາວັນ ຊົງຂາບທ່ານ

ພຣະນາຄິຕະແລ້ວປະທັບຢືນຢູ່ໃນທີ່ສົມຄວນ ຊົງຖາມວ່າ "ທ່ານພຣະນາຄິຕະ ເວລານີ້ ພຣະຜູ້ມີພຣະພາກອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ ປະທັບຢູ່ໃນທີ່ໃດ ເຮົາຕ້ອງການເຂົ້າໄປເຝົ້າພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ"

ທ່ານພຣະນາຄິຕະຕອບວ່າ "ຖວາຍພຣະພອນມະຫາລີ ເວລານີ້ ບໍ່ແມ່ນເວລາສົມຄວນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເພາະພຣະຜູ້ມີພຣະພາກເຈົ້າປະທັບຫຼີກລີ່ຢູ່ ເຈົ້າໂອຕະທັນທະລິດສະຫວີ ຈຶ່ງປະທັບນັ່ງຖ້າໃນທີ່ສົມຄວນໃນພຣະວິຫານນັ້ນເອງ ດ້ວຍຫວັງວ່າ "ເມື່ອເຮົາໄດ້ເຂົ້າເຝົ້າພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າກ່ອນຈຶ່ງຈະຈາກໄປ"

[໕໒໘] ຕໍ່ມາສາມະເນນສີຫະ ເຂົ້າໄປຫາທ່ານພຣະນາຄິຕະ ຂາບທ່ານພຣະນາຄິຕະແລ້ວຢືນຢູ່ໃນທີ່ສົມຄວນ ຮຽນຖາມຂຶ້ນວ່າ "ຂ້າແຕ່ ທ່ານພຣະກັດສະປະ ຜູ້ຈະເລີນພວກພາມມະນະທູດຊາວໂກສົນ ແລະ ຊາວມະຄົດຈຳນວນຫຼາຍ ເຂົ້າມາບ່ອນນີ້ເພື່ອຈະຂໍເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ ແມ່ນເຈົ້າໂອຕະທັນທະລິດສະຫວີ ພ້ອມດ້ວຍເຈົ້າລິດສະຫວີ ຜູ້ເປັນບໍລິວານໝູ່ໃຫຍ່ກໍສະເດັດມາບ່ອນນີ້ເພື່ອຈະຂໍເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ ຂໍໂອກາດເຖີ້ນຂ້ານ້ອຍ ຂໍໃຫ້ໝູ່ຊົນນັ້ນໄດ້ເຂົ້າເຝົ້າພຣະຜູ້ມີພຣະພາກແດ່"

ທ່ານພຣະນາຄິຕະຕອບ ວ່າ "ສີຫະ ຖ້າຈັ່ງຊັ້ນ ທ່ານຈົ່ງເຂົ້າໄປຂາບທູນພຣະຜູ້ມີພຣະພາກໃຫ້ຊົງຮູ້ເຖີ້ນ"

ສາມະເນນສີຫະ ຮັບຄຳຂອງທ່ານພຣະນາຄິຕະແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຂາບພຣະຜູ້ມີພຣະພາກແລ້ວ ຢືນຢູ່ໃນທີ່ສົມຄວນຂາບທູນວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ພາມມະນະທູດຊາວໂກສົນ ແລະ ຊາວມະຄົດຈຳນວນຫຼາຍ ເຂົ້າມາຮອດບ່ອນນີ້ເພື່ອຈະຂໍເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ ແມ່ນເຈົ້າໂອຕະທັນທະລິດສະຫວີ ພ້ອມດ້ວຍເຈົ້າລິດສະຫວີ ຜູ້ເປັນບໍລິວານໝູ່ໃຫຍ່ ກໍສະເດັດມາຮອດບ່ອນນີ້ ເພື່ອຈະຂໍເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ ຂ້າແຕ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ຂໍໃຫ້ໝູ່ຊົນເຫຼົ່ານັ້ນ ໄດ້ເຂົ້າເຝົ້າພຣະຜູ້ມີພຣະພາກເຖີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສີຫະ ຖ້າແນວນັ້ນ ທ່ານຈົ່ງປູອາສະນະໄວ້ໃນຮົ່ມເງົາຂອງວິຫານ"

ສາມະເນນສີຫະ ທູນຮັບສະໜອງພຣະດຳຣັດຂອງພຣະຜູ້ມີພຣະພາກເຈົ້າແລ້ວ ຈັດອາສະນະໃນຮົ່ມເງົາຂອງພຣະວິຫານ ຕາມທີ່ພຣະອົງຮັບສັ່ງ"

[໓໖໓] ຕໍ່ມາພຣະຜູ້ມີພຣະພາກເຈົ້າ ສະເດັດອອກຈາກພຣະວິຫານໄປປະທັບນັ່ງເທິງອາສະນະທີ່ສາມະເນນສີຫະຈັດໄວ້ໃນຮົ່ມເງົາຂອງພຣະວິຫານ ລຳດັບນັ້ນ ພາມມະນະທູດຊາວໂກສົນ ແລະ ຊາວມະຄົດເຫຼົ່ານັ້ນ ໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າໄດ້ທັກທວາຍປາໄສກັບພຣະຜູ້ມີພຣະພາກພໍຄຸ້ນເຄີຍກັນແລ້ວ ນັ່ງລົງໃນທີ່ສົມຄວນສວນຂອງຕົນ

[໓໖໔] ຝ່າຍເຈົ້າໂອຕະທັນທະລິດສະຫວີ ພ້ອມດ້ວຍເຈົ້າລິດສະຫວີຜູ້ເປັນບໍລິວານໝູ່ໃຫຍ່ ກໍໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກ ຊົງຂາບພຣະຜູ້ມີພຣະພາກແລ້ວ ປະທັບນັ່ງຢູ່ໃນທີ່ສົມຄວນສ່ວນຂອງຕົນ ຂາບທູນວ່າ “ຂ້າແຕ່ ພຣະອົງຜູ້ຈະເລີນ ເມື່ອຫຼາຍວັນມາແລ້ວ ເຈົ້າສຸນັກຂັດຕະລິດສະຫວີຜູ້ເປັນບຸດ ເຂົ້າໄປພົບຂ້າພຣະອົງແລ້ວບອກວ່າ “ມະຫາລິຕະ ຫຼອດເວລາທີ່ຂ້າພະເຈົ້າຢູ່ໃກ້ຊິດພຣະຜູ້ມີພຣະພາກເຖິງວ່າບໍ່ດົນຫຼາຍ ໄດ້ພຽງແຕ່ ໓ ປີ ໄດ້ເຫັນຮູບທິບອັນຊວນໃຫ້ຮັກ ດຶງໃຈໃຫ້ຕ້ອງການ ພາໃຈໃຫ້ກຳໜັດ ແຕ່ບໍ່ໄດ້ຍິນສຽງທິບອັນຊວນໃຫ້ຮັກ ດຶງໃຈໃຫ້ຕ້ອງການ ພາໃຈໃຫ້ກຳໜັດເລີຍ ຂ້າແຕ່ ພຣະອົງຜູ້ຈະເລີນ ສຽງທິບອັນຊວນໃຫ້ຮັກ ດຶງໃຈໃຫ້ຕ້ອງການ ພາໃຈໃຫ້ກຳໜັດທີ່ເຈົ້າສຸນັກຂັດຕະລິດສະຫວີ ຜູ້ເປັນບຸດບໍ່ໄດ້ຍິນນັ້ນ ມີຈິງຫຼືບໍ່ມີຢູ່ຈິງ”

## ສະມາທິທີ່ພິກຂຸຈະເລີນສະເພາະສ່ວນ

[໓໖໕] ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ “ມະຫາລີ ສຽງທິບຊວນໃຫ້ຮັກດຶງໃຈໃຫ້ຕ້ອງການ ພາໃຈໃຫ້ກຳໜັດທີ່ເຈົ້າສຸນັກຂັດຕະລິດສະຫວີ ຜູ້ເປັນບຸດບໍ່ໄດ້ຍິນນັ້ນມີຢູ່ຈິງບໍ່ແມ່ນບໍ່ມີເຈົ້າໂອຕະທັນທະລິດສະຫວີທູນຖາມວ່າ “ຂ້າແຕ່ ພຣະອົງຜູ້ຈະເລີນ ອັນໃດ? ທີ່ເປັນເຫດເປັນປັດໄຈ ເຮັດໃຫ້ເຈົ້າສຸນັກຂັດຕະລິດສະຫວີຜູ້ເປັນບຸດ ບໍ່ໄດ້ຍິນສຽງທິບທີ່ດຶງໃຈໃຫ້ຕ້ອງການ ພາໃຈໃຫ້ກຳໜັດ ເຊິ່ງມີຢູ່ຈິງບໍ່ແມ່ນບໍ່ມີນັ້ນນໍ?”

[໓໖໖] ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ “ມະຫາລີ ພິກຂຸໃນທຳວິໄນນີ້ ຈະເລີນສະມາທິສະເພາະສ່ວນ ເພື່ອເຫັນຮູບທິບອັນຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດໃນທິດຕາເວັນອອກ ແຕ່ບໍ່ຈະເລີນສະມາທິ ເພື່ອໃຫ້ໄດ້ຍິນສຽງທິບ ອັນຊວນໃຫ້ຮັກ ດຶງໃຫ້ຕ້ອງການພາໃຈໃຫ້ກຳໜັດ ເມື່ອຈະເລີນສະມາທິສະເພາະສ່ວນ ເພື່ອເຫັນຮູບທິບ ຯລຯ ໃນທິດຕາເວັນອອກແຕ່ບໍ່ຈະເລີນສະມາທິເພື່ອໃຫ້ໄດ້ຍິນສຽງທິບ ຯລຯ ທ່ານຈຶ່ງເຫັນແຕ່ຮູບທິບ ຯລຯ ໃນທິດຕາເວັນອອກ ແຕ່ບໍ່ໄດ້ຍິນສຽງທິບ ຯລຯ ຂໍ້ນັ້ນ ເພາະເຫດໃດ ເພາະທ່ານຈະເລີນສະມາທິສະເພາະສ່ວນ ເພື່ອເຫັນຮູບທິບອັນຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ ໃນທິດຕາເວັນອອກ ແຕ່ບໍ່ຈະເລີນສະມາທິເພື່ອໃຫ້ໄດ້ຍິນສຽງທິບອັນຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ ເພື່ອໃຫ້ໄດ້ຍິນໃນເສີຍງທິບນັ້ນ”

[໓໕໗] ຍັງມີອີກມະຫາລີ ພິກຂຸຈະເລີນສະມາທິສະເພາະສ່ວນ ເພື່ອເຫັນຮູບທິບອັນຊວນໃຫ້ຮັກດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ ໃນທິດໃຕ້ ຯລຯ ໃນທິດຕາເວັນຕົກ ຯລຯ ໃນທິດເໜືອ ຯລຯ ໃນທິດທາງເທິງ ທິດທາງຕ່ຳ ແລະ ທິດສຽງ ແຕ່ບໍ່ຈະເລີນສະມາທິເພື່ອໃຫ້ໄດ້ຍິນສຽງທິບ ອັນຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ ເມື່ອຈະເລີນສະມາທິສະເພາະສ່ວນເພື່ອເຫັນຮູບທິບ ຯລຯ ໃນທິດທາງເທິງ ທິດທາງຕ່ຳ ແລະ ທິດສ່ຽງ ແຕ່ບໍ່ຈະເລີນສະມາທິເພື່ອໃຫ້ໄດ້ຍິນສຽງທິບ ຯລຯ ທ່ານຈຶ່ງເຫັນແຕ່ຮູບທິບ ຯລຯ ໃນທິດທາງເທິງ ທິດທາງຕ່ຳ ແລະທິດສຽງ ແຕ່ບໍ່ໄດ້ຍິນສຽງທິບ ຯລຯ ຂໍ້ນັ້ນ ເພາະເຫດໃດ ເພາະທ່ານຈະເລີນສະມາທິ ສະເພາະແຕ່ສ່ວນເພື່ອເຫັນຮູບທິບ ອັນຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດໃນທິດທາງເທິງທິດທາງຕ່ຳ ແລະ ທິດສຽງ ແຕ່ບໍ່ຈະເລີນສະມາທິເພື່ອໃຫ້ໄດ້ຍິນສ່ຽງທິບອັນຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

[໓໕໘] ມະຫາລີ ພິກຂຸໃນທຳວິໄນນີ້ ຈະເລີນສະມາທິສະເພາະສ່ວນ ເພື່ອໃຫ້ໄດ້ຍິນສຽງທິບອັນຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ ແຕ່ບໍ່ຈະເລີນສະມາທິ ເພື່ອໃຫ້ໄດ້ເຫັນຮູບທິບອັນຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ ເມື່ອຈະເລີນສະມາທິສະເພາະສ່ວນເພື່ອໃຫ້ໄດ້ຍິນສຽງທິບ ຯລຯ ໃນທິດຕາເວັນອອກ ແຕ່ບໍ່ຈະເລີນສະມາທິ ເພື່ອໃຫ້ໄດ້ເຫັນຮູບທິບ ຯລຯ ທ່ານຈຶ່ງໄດ້ຍິນແຕ່ສຽງທິບ ຯລຯ ໃນທິດຕາເວັນອອກ ແຕ່ບໍ່ໄດ້ເຫັນຮູບທິບ ຯລຯ ຂໍ້ນັ້ນ ເພາະເຫດໃດ ເພາະທ່ານຈະເລີນສະມາທິສະເພາະສ່ວນ ເພື່ອໃຫ້ໄດ້ຍິນສຽງທິບ ອັນຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດໃນທິດຕາເວັນອອກ ແຕ່ບໍ່ຈະເລີນສະມາທິ ເພື່ອເຫັນຮູບທິບອັນຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

[໓໕໙] ຍັງມີອີກ ມະຫາລີ ພິກຂຸໃນທຳວິໄນນີ້ ຈະເລີນສະມາທິສະເພາະສ່ວນເພື່ອໃຫ້ໄດ້ຍິນສຽງທິບອັນຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດໃນທິດໃຕ້ ຯລຯ ໃນທິດຕາເວັນຕົກ ຯລຯ ໃນທິດເໜືອ ຯລຯ ໃນທິດທາງເທິງ ທິດທາງຕ່ຳ ແລະ ທິດສຽງ ແຕ່ບໍ່ຈະເລີນສະມາທິເພື່ອໃຫ້ໄດ້ເຫັນຮູບທິບອັນຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ ເມື່ອຈະເລີນສະມາທິສະເພາະສ່ວນເພື່ອໃຫ້ໄດ້ຍິນສຽງທິບ ຯລຯ ໃນທິດທາງເທິງ ທິດທາງຕ່ຳ ແລະທິດສຽງ ແຕ່ບໍ່ຈະເລີນສະມາທິ ເພື່ອໃຫ້ໄດ້ເຫັນຮູບທິບ ຯລຯ ທ່ານຈຶ່ງໄດ້ຍິນແຕ່ສຽງທິບ ຯລຯ ໃນທິດທາງເທິງທິດທາງຕ່ຳ ແລະ ທິດສຽງ ແຕ່ບໍ່ເຫັນຮູບທິບ ຯລຯ ຂໍ້ນັ້ນ ເພາະເຫດໃດ ເພາະທ່ານຈະເລີນສະມາທິສະເພາະສ່ວນ ເພື່ອໃຫ້ໄດ້ຍິນສຽງທິບ ອັນຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ ໃນທິດທາງເທິງ ທິດທາງຕ່ຳ ແລະ ທິດສຽງ ແຕ່ບໍ່ຈະເລີນສະມາທິ ເພື່ອໃຫ້ໄດ້ເຫັນຮູບທິບ ອັນຊວນໃຫ້ຮັກ ດຶງໃຫ້ຕ້ອງການພາໃຈໃຫ້ກຳໜັດ

[໓໖໐] ມະຫາລີ ພິກຂຸໃນທຳວິໄນນີ້ ຈະເລີນສະມາທິທັງ ໒ ສ່ວນ ເພື່ອໃຫ້ໄດ້ເຫັນຮູບທິບແລະໃຫ້ໄດ້ຍິນສຽງທິບ ອັນຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດໃນທິດຕາເວັນ

ອອກ ເມື່ອຈະເລີນສະມາທິທັງ ໔ ສ່ວນ ເພື່ອໃຫ້ໄດ້ເຫັນຮູບທິບ ແລະ ໃຫ້ໄດ້ຍິນສຽງທິບ ຯລຯ ໃນທິດຕາເວັນອອກ ທ່ານຈຶ່ງໄດ້ເຫັນຮູບທິບ ແລະ ໄດ້ຍິນສຽງທິບ ຯລຯ ໃນທິດຕາເວັນອອກ ຂໍ້ນັ້ນ ເພາະເຫດໃດ ເພາະທ່ານຈະເລີນສະມາທິທັງ ໔ ສ່ວນ ເພື່ອໃຫ້ໄດ້ເຫັນຮູບທິບ ແລະໃຫ້ໄດ້ຍິນສຽງທິບ ອັນຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ ໃນທິດຕາເວັນອອກ

[໓໗໑] ຍັງມີອີກມະຫາລີ ພິກຂຸໃນທຳວິໄນນີ້ ຈະເລີນສະມາທິທັງ ໔ ສ່ວນ ເພື່ອໃຫ້ໄດ້ເຫັນຮູບທິບ ແລະ ໃຫ້ໄດ້ຍິນສຽງທິບ ອັນຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດໃນທິດໃຕ້ ຯລຯ ໃນທິດຕາເວັນຕົກ ຯລຯ ໃນທິດເໜືອ ຯລຯ ໃນທິດທາງເທິງ ທິດທາງຕ່ຳ ແລະທິດສຽງ ເມື່ອຈະເລີນສະມາທິທັງ ໔ ສ່ວນ ເພື່ອໃຫ້ໄດ້ເຫັນທັງຮູບທິບແລະໄດ້ຍິນສຽງທິບຯລຯ ໃນທິດທາງເທິງທິດທາງຕ່ຳແລະທິດສຽງ ທ່ານຈຶ່ງໄດ້ເຫັນຮູບທິບ ແລະ ໄດ້ຍິນສຽງທິບ ຯລຯ ໃນທິດທາງເທິງທິດທາງຕ່ຳແລະທິດສຽງ ຂໍ້ນັ້ນເພາະເຫດໃດເພາະທ່ານຈະເລີນສະມາທິທັງ ໔ ສ່ວນ ເພື່ອໃຫ້ໄດ້ເຫັນຮູບທິບ ແລະ ໃຫ້ໄດ້ຍິນສຽງທິບ ອັນຊວນໃຫ້ຮັກດຶງໃຫ້ຕ້ອງການພາໃຈໃຫ້ກຳໜັດໃນທິດທາງເທິງທິດທາງຕ່ຳ ແລະ ທິດສຽງມະຫາລີນີ້ແລ ເປັນເຫດເປັນປັດໄຈເຮັດໃຫ້ສຸນັກຂັດຕະລິດສະຫວິບຸດ ບໍ່ໄດ້ຍິນສຽງທິບອັນຊວນໃຫ້ຮັກ ດຶງໃຫ້ຕ້ອງການພາໃຈໃຫ້ກຳໜັດເຊິ່ງມີຢູ່ຈິງບໍ່ແມ່ນບໍ່ມີນັ້ນ

[໓໗໔] ເຈົ້າໂອຕະທັນທະລິດສະຫວີ ຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າ ຄົງຈະມຸ້ງບັນລຸສະມາທິບາວະນາທັງສອງແນວນັ້ນແມ່ນບໍ?

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມະຫາລີ ບໍ່ແມ່ນແນວນັ້ນ ພິກຂຸປະພຶດພົມມະຈັນໃນທຳວິໄນນີ້ ບໍ່ແມ່ນເພື່ອບັນລຸສະມາທິບາວະນາທັງສອງນີ້ເທົ່ານັ້ນ ແທ້ຈິງ ຍັງມີທຳອື່ນທີ່ດີກວ່າ ແລະປະເສີດປະນີດສູງກວ່ານັ້ນອີກ ທີ່ພິກຂຸຜູ້ປະພຶດພົມມະຈັນໃນເຮົາມຸ້ງຈະບັນລຸເຖິງ

## ອະຣິຍະຜົນ ໔

[໓໗໓] ເຈົ້າໂອຕະທັນທະລິດສະຫວີທູນຖາມຂຶ້ນມາວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ທຳທີ່ດີກວ່າ ແລະ ປະນີດກວ່າ ທີ່ພິກຂຸປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າ ມຸ້ງຈະບັນລຸນັ້ນຄືອັນໃດນໍ? ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ມະຫາລີ ພິກຂຸໃນທຳວິໄນນີ້ ເປັນໂສດາບັນ ເພາະລະສັງໂຍດໄດ້ ໓ ຢ່າງ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນ ທີ່ຈະໄດ້ບັນລຸທຳໃນວັນຂ້າງໜ້າ ທຳນີ້ແລ ດີກວ່າ ແລະປະນີດກວ່າ ທີ່ພິກຂຸປະພຶດພົມມະຈັນໃນເຮົາມຸ້ງຈະບັນລຸ

ຍັງມີອີກມະຫາລີ ພິກຂຸເປັນສະກະທາຄາມີ ເພາະລະສັງໂຍດໄດ້ ໓ ຢ່າງບັນເທົາຣາຄະ ໂທສະ ແລະ ໂມຫະ ໃຫ້ເບົາບາງລົງໄດ້ ມາສູ່ໂລກນີ້ອີກພຽງຄັ້ງດຽວ ກໍຈະເຮັດທີ່ສຸດແຫ່ງທຸກໄດ້ ທຳນີ້ແລ ດີກວ່າ ແລະ ປະນີດກວ່າ ທີ່ພິກຂຸປະພຶດພົມມະຈັນໃນເຮົາມຸ້ງຈະບັນລຸ

ຍັງມີອີກມະຫາລີ ພິກຂຸໄປບັງເກີດເປັນໂອປະປາຕິກະ ໓ ເພາະລະສັງໂຍດທາງຕ່ຳໄດ້ ໕ ຢ່າງ ປະຣິນິບພານໃນພົບນັ້ນ ຈະບໍ່ຫວນກັບມາຈາກໂລກຈາກນັ້ນອີກ ທຳນີ້ແລ ດີກວ່າ ແລະ ປະນີດກວ່າ ທີ່ພິກຂຸປະພຶດພົມມະຈັນໃນເຮົາມຸ້ງຈະບັນລຸ

ຍັງມີອີກມະຫາລີ ພິກຂຸເຮັດໃຫ້ແຈ້ງເຈໂຕວິມຸດຕິ ແລະ ປັນຍາວິມຸດຕິ ອັນບໍ່ມີອາສະວະ ເພາະອາສະວະສິ້ນໝົດໄປດ້ວຍປັນຍາອັນຍິ່ງ ເຂົ້າເຖິງຢູ່ໃນປະຈຸບັນ ທຳນີ້ແລ ດີກວ່າ ແລະປະນີດກວ່າທີ່ພິກຂຸປະພຶດພົມມະຈັນໃນເຮົາມຸ້ງຈະບັນລຸ ມະຫາລີທຳເຫຼົ່ານີ້ແລ ທັງດີກວ່າ ແລະປະນີດກວ່າທີ່ພິກຂຸປະພຶດພົມມະຈັນໃນເຮົາມຸ້ງຈະບັນລຸ

## ອະຣິຍະມັກມີອົງ ๘

[໓໗໔] ເຈົ້າໂອຕະທັນທະລິດສະຫວິທູນຖາມວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ມີທາງ ມີຂໍ້ປະຕິບັດ ເພື່ອບັນລຸທຳເຫຼົ່ານັ້ນຢູ່ແມ່ນບໍ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ມະຫາລີ ມີທາງ ມີຂໍ້ປະຕິບັດ ເພື່ອບັນລຸທຳເຫຼົ່ານັ້ນຢູ່"

[໓໗໕] ເຈົ້າໂອຕະທັນທະລິດສະຫວິທູນຖາມວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນທາງເປັນແນວໃດ ຂໍ້ປະຕິບັດ ເພື່ອບັນລຸທຳເຫຼົ່ານັ້ນ ເປັນແນວໃດ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ມັກມີອົງ ๘ ອັນປະເສີດເຫຼົ່ານີ້ ຄື ສຳມາທິດຖິ (ເຫັນຊອບ), ສຳມາສັງກັບປະ (ດຳຣິຖືກ), ສຳມາວາຈາ (ເຈຣະຈາຖືກ), ສຳມາກຳມັນຕະ (ກະທຳຖືກ), ສຳມາອາຊີວະ (ລ້ຽງຊີບຖືກ), ສຳມາວາຍາມະ (ພະຍາຍາມຖືກ), ສຳມາສະຕິ (ຣະລຶກຖືກ) ແລະ ສຳມາສະມາທິ (ຕັ້ງຈິດໄວ້ໝັ້ນຖືກ) ນີ້ແລ ຄື ທາງ ນີ້ແລ ຄື ຂໍ້ປະຕິ ບັດ ເພື່ອບັນລຸທຳເຫຼົ່ານັ້ນ"

## ເລື້ອງນັກບວດ ໒ ອົບ

[໓໗໖] ມະຫາລີ ສະໄໝໜຶ່ງ ເຮົາຢູ່ໃນໂຄສິຕາຣາມເຂດເມືອງໂກສຳພີມີນັກບວດ ໒ ອົງ ຄື ມັນຖິຍະປະຣິພາຊົກ ແລະ ຊາລິຍະປະຣິພາຊົກ ເຊິ່ງເປັນສິດຂອງພວກທາຣຸປັດຕິກະ (ນັກບວດຜູ້ນິຍົມໃຊ້ບາດໄມ້) ເຂົ້າໄປຫາເຮົາທັກທວາຍກັບເຮົາ ພໍຄຸ້ນເຄີຍກັນດີແລ້ວ ຢືນຢູ່ໃນທີ່

ສົມຄວນຖາມເຮົາວ່າ "ທ່ານພຣະໂຄດົມ ຊີວະກັບສະຣີຣະເປັນຢ່າງດຽວກັນ ຫຼື ວ່າຊີວະກັບສະຣີຣະເປັນຄົນລະຢ່າງກັນ"

[໔໗໗] ເຮົາຕອບວ່າ "ຜູ້ມີອາຍຸ ຖ້າແນວນັ້ນ ທ່ານຈົ່ງຟັງ ຈົ່ງຕັ້ງໃຈໃຫ້ດີ ເຮົາຈະສະແດງໃຫ້ທານຮູ້" ນັກບວດທັງ ໒ ອົງນັ້ນ ຮັບຄຳຂອງເຮົາແລ້ວ ເຮົາຈຶ່ງກ່າວວ່າ "ຜູ້ມີອາຍຸຕະຖາຄົດອຸບັດຂຶ້ນມາໃນໂລກນີ້ ເປັນພຣະອະຣະຫັນ ຕັດສະຮູ້ດ້ວຍຕົນເອງໂດຍຊອບ ຯລຯ (ເພິ່ງນຳຂໍ້ຄວາມເຕັມໃນສາມັນຍະຜົນສູດມາໃສ່ໄວ້ໃນບ່ອນນີ້) ຜູ້ມີອາຍຸ ພິກຂຸຊື່ວ່າ ສົມບູນດ້ວຍສີນເປັນແນວນີ້ແລ ຯລຯ ພິຂຸບັນຜູ້ລຸປະຖົມມະຊານຢູ່ ຜູ້ມີອາຍຸ ພິກຂຸຜູ້ຮູ້ຜູ້ເຫັນແນວນີ້ຄວນແລ້ວບໍ? ທີ່ຈະກ່າວວ່າ "ຊີວະກັບສະຣີຣະເປັນຢ່າງດຽວກັນ ຫຼື ວ່າຊີວະກັບສະຣີຣະເປັນຄົນລະຢ່າງກັນ"

ນັກບວດທັງ ໒ ອົງ ນັ້ນ ຕອບວ່າ "ພິກຂຸ ຜູ້ຮູ້ຜູ້ເຫັນແນວນີ້ ຍັງຄວນທີ່ຈະກ່າວວ່າຊີວະກັບສະຣີຣະເປັນຢ່າງດຽວກັນ ຫຼື ວ່າ ຊີວະກັບສະຣີຣະເປັນຄົນລະຢ່າງກັນ"

ເຮົາກ່າວວ່າ "ຜູ້ມີອາຍຸ ເຮົາຮູ້ເຮົາເຫັນແນວນີ້ ແຕ່ກໍບໍ່ກ່າວວ່າ ຊີວະກັບສະຣີຣະເປັນຢ່າງດຽວກັນ ຫຼື ວ່າ ຊີວະກັບສະຣີຣະເປັນຄົນລະຢ່າງກັນ ຯລຯ ພິກຂຸຜູ້ບັນລຸທຸຕິຍະຊານຢູ່ ບັນລຸຕະຕິຍະຊານຢູ່ ບັນລຸຈະຕຸດຖະຊານຢູ່ ຜູ້ມີອາຍຸ ພິກຂຸຜູ້ຮູ້ ຜູ້ເຫັນແນວນີ້ ຄວນແລ້ວບໍ? ທີ່ຈະກ່າວວ່າ ຊີວະກັບສະຣີຣະເປັນຢ່າງດຽວກັນ ຫຼື ວ່າ ຊີວະກັບສະຣີຣະເປັນຄົນລະຢ່າງກັນ"

ນັກບວດທັງ ໒ ອົງນັ້ນ ຕອບວ່າ "ພິກຂຸ ຜູ້ຮູ້ຜູ້ເຫັນແນວນີ້ ຍັງຄວນທີ່ຈະກ່າວວ່າຊີວະກັບສະຣີຣະເປັນຢ່າງດຽວກັນ ຫຼື ວ່າ ຊີວະກັບສະຣີຣະເປັນຄົນລະຢ່າງກັນຢູ່"

ເຮົາກ່າວວ່າ "ຜູ້ມີອາຍຸ ເຮົາຮູ້ເຮົາເຫັນແນວນີ້ ແຕ່ກໍບໍ່ກ່າວວ່າຊີວະກັບສະຣີຣະເປັນຢ່າງດຽວກັນ ຫຼື ວ່າ ຊີວະກັບສະຣີຣະເປັນຄົນລະຢ່າງກັນ ຯລຯ ນ້ອມຈິດໄປເພື່ອຍານະທັດສະນະຜູ້ມີອາຍຸ ພິກຂຸຜູ້ຮູ້ ຜູ້ເຫັນແນວນີ້ ຄວນແລ້ວບໍ? ທີ່ຈະກ່າວວ່າ ຊີວະກັບສະຣີຣະເປັນຢ່າງດຽວກັນ ຫຼື ວ່າ ຊີວະກັບສະຣີຣະເປັນຄົນລະຢ່າງກັນ"

ນັກບວດທັງ ໒ ອົງນັ້ນ ຕອບວ່າ "ພິກຂຸ ຜູ້ຮູ້ຜູ້ເຫັນແນວນີ້ ບໍ່ຄວນທີ່ຈະກ່າວວ່າຊີວະກັບສະຣີຣະເປັນຢ່າງດຽວກັນ ຫຼື ວ່າ ຊີວະກັບສະຣີຣະເປັນຄົນລະຢ່າງກັນ"

ເຮົາກ່າວວ່າ "ຜູ້ມີອາຍຸ ເຮົາຮູ້ເຮົາເຫັນແນວນີ້ ແຕ່ກໍບໍ່ກ່າວວ່າ ຊີວະກັບສະຣີຣະເປັນຢ່າງດຽວກັນ ຫຼື ວ່າ ຊີວະກັບສະຣີຣະເປັນຄົນລະຢ່າງກັນ ຯລຯ ຮູ້ຊັດແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ ຜູ້ມີອາຍຸ ພິກຂຸ ຜູ້ຮູ້ຜູ້ເຫັນແນວນີ້ຄວນແລ້ວບໍ? ທີ່ຈະກ່າວວ່າຊີວະກັບສະຣີຣະເປັນຢ່າງດຽວກັນ ຫຼື ວ່າຊີວະກັບສະຣີຣະເປັນຄົນລະຢ່າງກັນ"

ນັກບວດທັງ ໔ ອົງນັ້ນ ຕອບວ່າ "ພິກຂຸ ຜູ້ຮູ້ຜູ້ເຫັນແບບນີ້ ບໍ່ຄວນທີ່ຈະກ່າວວ່າຊີວະກັບສະຣີຣະເປັນຢ່າງດຽວກັນ ຫຼື ວ່າຊີວະກັບສະຣີຣະເປັນຄົນລະຢ່າງກັນ"

ເຮົາກ່າວວ່າ "ຜູ້ມີອາຍຸ ເຮົາຮູ້ເຮົາເຫັນແບບນີ້ ຈຶ່ງບໍ່ກ່າວວ່າ ຊີວະກັບສະຣີຣະເປັນຢ່າງດຽວກັນ ຫຼື ວ່າ ຊີວະກັບສະຣີຣະເປັນຄົນລະຢ່າງກັນ" ດັ່ງນີ້

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແບບນີ້ ເຈົ້າໂອຕະທັນທະລິດສະຫວີມີໃຈຍິນດີ ຊື່ນຊົມໃນພາສິດຂອງພຣະຜູ້ມີພຣະພາກແລ

**ມະຫາລິສູດທີ ໖ ຈົບ**

# ໗. ຊາລິຍະສູດ

## ວ່າດ້ວຍປະຣິພາຊົກຊື່ຊາລິຍະ

## ເລື້ອງນັກບວດ ໔ ອົງ

[໕໗໘] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໂຄສິຕາຣາມ ເຂດເມືອງໂກສຳພີ ມີນັກບວດ ໔ ອົງ ຄື ມັນຖິຍະປະຣິພາຊົກ ແລະ ຊາລິຍະປະຣິພາຊົກ ເຊິ່ງເປັນສິດຂອງພວກທາຣຸປັດຕິກະ (ນັກ ບວດຜູ້ນິຍົມໃຊ້ບາດໄມ້) ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ສົນທະນາກັບພຣະຜູ້ມີພຣະພາກພໍຄຸ້ນເຄີຍແລ້ວ ຢືນຢູ່ໃນທີ່ສົມຄວນ ທູນຖາມພຣະຜູ້ມີພຣະພາກວ່າ "ທ່ານພຣະໂຄດົມ ຊີວະກັບສະຣີຣະເປັນຢ່າງດຽວກັນ ຫຼື ວ່າ ຊີວະກັບສະຣີຣະເປັນຄົນລະຢ່າງກັນ"

[໕໗໙] ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ຜູ້ມີອາຍຸ ຖ້າແບບນັ້ນ ທ່ານຈົ່ງຟັງຈົ່ງຕັ້ງໃຈໃຫ້ດີເຮົາຈະບອກ"

ນັກບວດທັງ ໔ ອົງນັ້ນ ທູນຮັບສະໜອງພຣະດຳຣັດຂອງພຣະຜູ້ມີພຣະພາກແລ້ວ ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຜູ້ມີອາຍຸ ຕະຖາຄົດອຸບັດຂຶ້ນມາໃນໂລກນີ້ ເປັນພຣະອະຣະຫັນຕັດສະຣູ້ດ້ວຍຕົນເອງໂດຍຊອບ ฯລฯ (ເພີ່ງນຳຂໍ້ຄວາມເຕັມໃນສາມັນຍະຜົນສູດມາໃສ່ໄວ້ໃນບ່ອນນີ້) ຜູ້ມີອາຍຸພິກຂຸຊື່ວ່າ ສົມບູນດ້ວຍສີນເປັນແບບນີ້ແລ ฯລฯ ບັນລຸປະຖົມມະຊານຢູ່ ຜູ້ມີອາຍຸ

ພິກຂຸຜູ້ຮູ້ຜູ້ເຫັນແນວນີ້ຄວນແລ້ວບໍ? ທີ່ຈະກ່າວວ່າ ຊີວະກັບສະຣີຣະເປັນຢ່າງດຽວກັນ ຫຼືວ່າຊີວະກັບສະຣີຣະເປັນຄົນລະຢ່າງກັນ

ນັກບວດທັງ ໔ ອົງນັ້ນ ທູນຕອບວ່າ "ພິກຂຸຜູ້ຮູ້ຜູ້ເຫັນແນວນີ້ ຍັງຄວນທີ່ຈະກ່າວວ່າຊີວະກັບສະຣີຣະເປັນຢ່າງດຽວກັນ ຫຼື ວ່າ ຊີວະກັບສະຣີຣະເປັນຄົນລະຢ່າງກັນຢູ່"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຜູ້ມີອາຍຸ ເຮົາຮູ້ເຮົາເຫັນແນວນີ້ ແຕ່ກໍບໍ່ໄດ້ກ່າວວ່າຊີວະກັບສະຣີຣະເປັນຢ່າງດຽວກັນ ຫຼື ວ່າ ຊີວະກັບສະຣີຣະເປັນຄົນລະຢ່າງກັນ ຯລຯ ບັນລຸທຸຕິຍະຊານຢູ່ ບັນລຸຕະຕິຍະຊານຢູ່ ບັນລຸຈະຕຸດຖະຊານຢູ່ ຜູ້ມີອາຍຸ ພິກຂຸຜູ້ຮູ້ຜູ້ເຫັນແນວນີ້ຄວນແລ້ວບໍ? ທີ່ຈະກ່າວວ່າ ຊີວະກັບສະຣີຣະເປັນຢ່າງດຽວກັນ ຫຼື ວ່າ ຊີວະກັບສະຣີຣະເປັນຄົນລະຢ່າງກັນ

ນັກບວດທັງ ໔ ອົງນັ້ນ ທູນຕອບວ່າ "ພິກຂຸ ຜູ້ຮູ້ຜູ້ເຫັນແນວນີ້ ຍັງຄວນທີ່ຈະກ່າວວ່າຊີວະກັບສະຣີຣະເປັນຢ່າງດຽວກັນ ຫຼື ວ່າ ຊີວະກັບສະຣີຣະເປັນຄົນລະຢ່າງກັນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຜູ້ມີອາຍຸ ເຮົາຮູ້ເຮົາເຫັນແນວນີ້ ແຕ່ກໍບໍ່ກ່າວວ່າຊີວະກັບສະຣີຣະເປັນຢ່າງດຽວກັນ ຫຼື ວ່າ ຊີວະກັບສະຣີຣະເປັນຄົນລະຢ່າງກັນ ຯລຯ ພິກຂຸນັ້ນ ນ້ອມຈິດໄປເພື່ອຍານະທັດສະນະ ຜູ້ມີອາຍຸ ພິກຂຸ ຜູ້ຮູ້ຜູ້ເຫັນແນວນີ້ຄວນແລ້ວບໍ? ທີ່ຈະກ່າວວ່າຊີວະກັບສະຣີຣະເປັນຢ່າງດຽວກັນ ຫຼື ວ່າ ຊີວະກັບສະຣີຣະເປັນຄົນລະຢ່າງກັນ

ນັກບວດທັງ ໔ ອົງນັ້ນ ທູນຕອບວ່າ "ພິກຂຸ ຜູ້ຮູ້ຜູ້ເຫັນແນວນີ້ ຍັງຄວນທີ່ຈະກ່າວວ່າຊີວະກັບສະຣີຣະເປັນຢ່າງດຽວກັນ ຫຼື ວ່າ ຊີວະກັບສະຣີຣະເປັນຄົນລະຢ່າງກັນຢູ່"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຜູ້ມີອາຍຸ ເຮົາຮູ້ເຮົາເຫັນແນວນີ້ ແຕ່ກໍບໍ່ກ່າວວ່າຊີວະກັບສະຣີຣະເປັນຢ່າງດຽວກັນ ຫຼື ວ່າ ຊີວະກັບສະຣີຣະເປັນຄົນລະຢ່າງກັນ"

[໕໗໐] ຯລຯ ເມື່ອຮູ້ຊັດແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ ຜູ້ມີອາຍຸ ພິກຂຸຜູ້ຮູ້ຜູ້ເຫັນແນວນີ້ຄວນແລ້ວບໍ? ທີ່ຈະກ່າວວ່າ ຊີວະກັບສະຣີຣະເປັນຢ່າງດຽວກັນ ຫຼື ວ່າ ຊີວະກັບສະຣີຣະເປັນຄົນລະຢ່າງກັນ

ນັກບວດທັງ ໔ ອົງ ນັ້ນທູນຕອບວ່າ "ພິກຂຸຜູ້ຮູ້ຜູ້ເຫັນແນວນີ້ ບໍ່ຄວນທີ່ຈະກ່າວວ່າຊີວະກັບສະຣີຣະເປັນຢ່າງດຽວກັນ ຫຼື ວ່າ ຊີວະກັບສະຣີຣະເປັນຄົນລະຢ່າງກັນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຜູ້ມີອາຍຸ ເຮົາຮູ້ເຮົາເຫັນແນວນີ້ ຈຶ່ງບໍ່ກ່າວວ່າຊີວະກັບສະຣີຣະເປັນຢ່າງດຽວກັນ ຫຼື ວ່າ ຊີວະກັບສະຣີຣະເປັນຄົນລະຢ່າງກັນ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ ນັກບວດທັງ ໔ ອົງນັ້ນ ມີໃຈຍິນດີຕ່າງຊື່ນຊົມພາສິດຂອງພຣະຜູ້ມີພຣະພາກເຈົ້າແລ

**ຊາລິຍະສູດທີ ໗ ຈົບ**

# ໘. ມະຫາສີຫະນາທະສູດ

## ວ່າດ້ວຍການບັນລືສຽງຢ່າງອົງອາດດັ່ງພະຍາຣາດຊະສີ

## ເລື້ອງອະເຈລະກັດສະປະ

[໓໘໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນກັນນະກະຖະລະມະຣິຄະທາຍະວັນ ເຂດເມືອງອຸຊຸຍຍາ ໃນຄັ້ງນັ້ນ ອະເຈລະກັດສະປະເຂົ້າໄປເຝົ້າພຣະຜູ້ມີພຣະພາກ ສົນທະນາກັບພຣະອົງພໍຄຸ້ນເຄີຍແລ້ວ ຢືນຢູ່ໃນທີ່ສົມຄວນທູນຖາມວ່າ "ທ່ານພຣະໂຄດົມ ຂ້າພຣະອົງໄດ້ຍິນມາວ່າ "ພຣະສະມະນະໂຄດົມ ຊົງຕຳໜິຕະບະທຸກຂະນິດ ຊົງຄັດຄ້ານ ແລະ ຊີ້ໂທດຜູ້ພ່ຳເພັງຕະບະທັງປວງວ່າ ເປັນຜູ້ມີອາຊີວະເສົ້າໝອງຢ່າງດຽວ" ສະມະນະພາມທີ່ເວົ້າແນວນີ້ວ່າ "ພຣະສະມະນະໂຄດົມ ຊົງຕຳໜິຕະບະທຸກຂະນິດ ຊົງຄັດຄ້ານ ແລະ ຊີ້ໂທດຜູ້ພ່ຳເພັງຕະບະທັງປວງວ່າ ເປັນຜູ້ມີອາຊີວະເສົ້າໝອງຢ່າງດຽວ" ຊື່ວ່າເວົ້າກົງຕາມທີ່ທ່ານພຣະໂຄດົມໄດ້ຕັດໄວ້ ບໍ່ຊື່ວ່າກ່າວຕູ່ທ່ານພຣະໂຄດົມດ້ວຍຄຳຕົວະ ຫຼື ຊື່ວ່າເປັນຜູ້ເວົ້າຢ່າງສົມເຫດສົມຜົນ ເວົ້າແທ້ສົມດ້ວຍຄຳເລົ່າລືອັນຊອບດ້ວຍທຳ ບໍ່ມີເຫດທີຄວນຕຳໜິຕິຕຽນໄດ້ ເພາະພວກຂ້າພຣະອົງບໍ່ປະສົງຈະກ່າວຕູ່ທ່ານພຣະໂຄດົມເລີຍ

[໓໘໔] ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ກັດສະປະ ສະມະນະພາມທີ່ກ່າວວ່າ "ພຣະສະມະນະໂຄດົມຊົງຕຳໜິຕະບະທຸກຂະນິດ ຊົງຄັດຄ້ານ ແລະ ຊີ້ໂທດຜູ້ພ່ຳເພັງຕະບະທັງປວງວ່າ ເປັນຜູ້ມີອາຊີວະເສົ້າໝອງຢ່າງດຽວ" ບໍ່ຖືວ່າເວົ້າກົງຕາມທີ່ເຮົາເວົ້າ ບໍ່ຖືວ່າກ່າວຕູ່ເຮົາດ້ວຍຄຳຕົວະ ດ້ວຍການອາໄສຕາທິບອັນບໍລິສຸດເໜືອມະນຸດ ເຮົາຈຶ່ງເຫັນບຸກຄົນຜູ້ພ່ຳເພັງຕະບະລາງຄົນໃນໂລກນີ້ມີອາຊີວະເສົ້າໝອງ ຫຼັງຈາກຕາຍແລ້ວໄປບັງເກີດໃນອະບາຍທຸຄະຕິວິນິບາດນະຣົກກໍມີ ໄປບັງເກີດໃນສຸກຄະຕິໂລກສະຫວັນກໍມີ

[໓໘໓] ດ້ວຍອາໄສຕາທິບອັນບໍລິສຸດເໜືອມະນຸດ ເຮົາເຫັນບຸກຄົນຜູ້ພໍາເພັງຕະບະລາງຄົນໃນໂລກນີ້ຢູ່ເປັນທຸກເພາະບຸນໜ້ອຍ ຫຼັງຈາກຕາຍແລ້ວໄປບັງເກີດໃນອະບາຍທຸຄະຕິວິນິບາດ ນະຮົກກໍມີ ໄປບັງເກີດໃນສຸກຄະຕິໂລກສະຫວັນກໍມີ ເຮົາຮູ້ການມາ ການໄປ ການຈຸຕິ ແລະ ການເກີດຂຶ້ນຂອງຄົນເຫຼົ່ານັ້ນ ຕາມຄວາມເປັນຈິງແນວນີ້ ຖ້າເປັນຈັ່ງຊັ້ນແລ້ວ ເປັນຫຍັງ? ເຮົາຈຶ່ງຈະຕໍາໜິຕະບະທຸກຂະນິດ ຫຼື ຄັດຄ້ານ ແລະ ຊີ້ໂທດຜູ້ພໍາເພັງຕະບະທັງປວງວ່າ ເປັນຜູ້ມີອາຊີວະເສົ້າໝອງຢ່າງດຽວແນວນັ້ນບໍ?

[໓໘໔] ກັດສະປະ ມີສະມະນະພາມລາງພວກເປັນບັນດິດ ຊົງພູມປັນຍາມັກໂຕ້ແຍ້ງມີທ່າທາງດັ່ງນາຍທະນູຜູ້ເກ່ງ ມີຈຸດປະສົງຈະກໍາຈັດທິດຖິຄວາມເຫັນຂອງຜູ້ອື່ນດ້ວຍປັນຍາຂອງຕົນ ສະມະນະພາມເຫຼົ່ານັ້ນ ມີທັດສະນະກົງກັບເຮົາໃນບາງເລື້ອງ ບໍ່ກົງກັນກັບເຮົາໃນບາງເລື້ອງ ບາງເລື້ອງທີ່ພວກເຂົາວ່າດີ ແມ່ນເຮົາກໍວ່າດີ ບາງເລື້ອງທີ່ພວກເຂົາວ່າບໍ່ດີ ແມ່ນເຮົາກໍວ່າບໍ່ດີ ບາງເລື້ອງທີ່ພວກເຂົາວ່າດີແຕ່ເຮົາວ່າບໍ່ດີ ບາງເລື້ອງທີ່ພວກເຂົາວ່າບໍ່ດີແຕ່ເຮົາວ່າດີ ບາງເລື້ອງທີ່ເຮົາວ່າດີ ສະມະນະພາມພວກອື່ນກໍວ່າດີ ບາງເລື້ອງທີ່ເຮົາວ່າບໍ່ດີ ສະມະນະພາມພວກອື່ນກໍວ່າບໍ່ດີ ບາງເລື້ອງທີ່ເຮົາວ່າດີສະມະນະພາມພວກອື່ນກັບວ່າບໍ່ດີ ບາງເລື້ອງທີ່ເຮົາວ່າບໍ່ດີ ສະມະນະພາມພວກອື່ນກັບວ່າດີ

## ວ່າດ້ວຍການໄລ່ລຽງສອບສວນ

[໓໘໕] ກັດສະປະ ເມື່ອເຮົາເຂົ້າໄປຫາສະມະນະພາມເຫຼົ່ານັ້ນແລ້ວ ໄດ້ເວົ້າແນວນີ້ວ່າ "ຜູ້ມີອາຍຸ ເລື້ອງທີ່ເຮັດໃຫ້ພວກເຮົາມີວັດປະຕິບັດບໍ່ກົງກັນຈົ່ງງົດໄວ້ກ່ອນ ໃນເລື້ອງທີ່ເຫັນກົງກັນກັບວິນຍູຊົນທັງຫຼາຍ ເຮົາຈະສົນທະນາກັນໃນເລື້ອງນີ້ ເມື່ອປຽບທຽມສາດສະດາກັບສາດສະດາ ໝູ່ສາວົກກັບໝູ່ສາວົກວ່າ ທໍາຂອງທ່ານເຫຼົ່ານີ້ສ່ວນໃດທີ່ເປັນອະກຸສົນກໍຈັດວ່າເປັນອະກຸສົນ ທີ່ມີໂທດກໍຈັດວ່າມີໂທດ ທີ່ບໍ່ຄວນຖືກໍຈັດວ່າບໍ່ຄວນຖື ທີ່ບໍ່ປະເສີດກໍຈັດວ່າບໍ່ປະເສີດ ແລະທີ່ເປັນຝ່າຍຊົ່ວກໍຈັດວ່າເປັນຝ່າຍຊົ່ວ ຜູ້ໃດນໍ? ທີ່ລະທໍາເຫຼົ່ານີ້ໄດ້ເດັດຂາດ ພຣະສະມະນະໂຄດົມ ຫຼື ວ່າຄະນາຈານຜູ້ຈະເລີນເຫຼົ່າອື່ນທີ່ເຮັດໄດ້?"

[໓໘໖] ກັດສະປະ ເປັນໄປໄດ້ທີ່ວິນຍູຊົນ ເມື່ອຊັກໄຊ້ໄລ່ລຽງສອບສວນແລ້ວ ຈະເພິ່ງເວົ້າແນວນີ້ວ່າ "ທໍາຂອງທ່ານເຫຼົ່ານີ້ ສ່ວນໃດທີ່ເປັນອະກຸສົນກໍຈັດວ່າເປັນອະກຸສົນ ທີ່ມີໂທດກໍຈັດວ່າມີໂທດ ທີ່ບໍ່ຄວນຖືກໍຈັດວ່າບໍ່ຄວນຖື ທີ່ບໍ່ປະເສີດກໍຈັດວ່າບໍ່ປະເສີດ ແລະ ທີ່ເປັນຝ່າຍຊົ່ວກໍຈັດວ່າເປັນຝ່າຍຊົ່ວ ພຣະສະມະນະໂຄດົມລະທໍາເຫຼົ່ານີ້ໄດ້ເດັດຂາດ ຫຼື ວ່າຄະນາຈານຜູ້ຈະເລີນເຫຼົ່າອື່ນທີ່ເຮັດໄດ້" ໃນເລື້ອງນັ້ນ ວິນຍູຊົນຜູ້ຮູ້ ເມື່ອຖືກຊັກໄຊ້ໄລ່ລຽງສອບສວນແນວນີ້ໂດຍຫຼາຍຈະສັນລະເສີນພວກເຮົາຝ່າຍດຽວເທົ່ານັ້ນ

[໓໗໗] ຍັງມີອີກກັດສະປະ ວິນຍູຊົນ ເມື່ອຊັກໄຊ້ໄລ່ລຽງສອບສວນພວກເຮົາ ປຽບທຽມສາດສະດາກັບສາດສະດາ ໝູ່ສາວົກກັບໝູ່ສາວົກວ່າ "ທຳຂອງທ່ານເຫຼົ່ານີ້ສ່ວນໃດທີ່ເປັນກຸສົນກໍຈັດວ່າເປັນກຸສົນ ທີ່ບໍ່ມີໂທດກໍຈັດວ່າບໍ່ມີໂທດ ທີ່ຄວນຖືກໍຈັດວ່າຄວນຖື ທີ່ປະເສີດກໍຈັດວ່າປະເສີດ ແລະ ທີ່ເປັນຝ່າຍດີກໍຈັດວ່າເປັນຝ່າຍດີ ໃຜເລົ່າທີ່ສະມາທານປະພຶດທຳເຫຼົ່ານີ້ໄດ້ຄົບຖ້ວນ ພຣະສະມະນະໂຄດົມ ຫຼື ວ່າ ຄະນາຈານຜູ້ຈະເລີນເຫຼົ່າອື່ນເຮັດໄດ້"

[໓໗໘] ກັດສະປະ ເປັນໄປໄດ້ທີ່ວິນຍູຊົນ ເມື່ອຊັກໄຊ້ໄລ່ລຽງສອບສວນແລ້ວ ຈະເພິ່ງເວົ້າແນວນີ້ວ່າ "ທຳຂອງທ່ານເຫຼົ່ານີ້ ສ່ວນໃດທີ່ເປັນກຸສົນກໍຈັດວ່າເປັນກຸສົນ ທີ່ບໍ່ມີໂທດກໍຈັດວ່າບໍ່ມີໂທດ ທີ່ຄວນຖືກໍຈັດວ່າຄວນຖື ທີ່ປະເສີດກໍຈັດວ່າປະເສີດ ແລະ ທີ່ເປັນຝ່າຍດີກໍຈັດວ່າເປັນຝ່າຍດີ ພຣະສະມະນະໂຄດົມ ສະມາທານປະພຶດທຳເຫຼົ່ານີ້ໄດ້ຄົບຖ້ວນ ຫຼື ວ່າຄະນາຈານຜູ້ຈະເລີນເຫຼົ່າອື່ນເຮັດໄດ້" ໃນເລື້ອງນັ້ນ ວິນຍູຊົນເມື່ອຊັກໄຊ້ໄລ່ລຽງສອບສວນແນວນີ້ໂດຍຫຼາຍຈະສັນລະເສີນພວກເຮົາຝ່າຍດຽວເທົ່ານັ້ນ

[໓໗໙] ຍັງມີອີກກັດສະປະ ວິນຍູຊົນເມື່ອຊັກໄຊ້ໄລ່ລຽງສອບສວນພວກເຮົາແລ້ວ ປຽບທຽມສາດສະດາກັບສາດສະດາ ໝູ່ສາວົກກັບໝູ່ສາວົກວ່າ "ທຳຂອງທ່ານເຫຼົ່ານີ້ ສ່ວນໃດທີ່ເປັນອະກຸສົນກໍຈັດວ່າເປັນອະກຸສົນ ທີ່ມີໂທດກໍຈັດວ່າມີໂທດ ທີ່ບໍ່ຄວນຖືກໍຈັດວ່າບໍ່ຄວນຖື ທີ່ບໍ່ປະເສີດກໍຈັດວ່າບໍ່ປະເສີດ ແລະ ທີ່ເປັນຝ່າຍຊົ່ວກໍຈັດວ່າເປັນຝ່າຍຊົ່ວ ຜູ້ໃດນໍ? ທີ່ລະທຳເຫຼົ່ານີ້ໄດ້ເດັດຂາດ ໝູ່ສາວົກຂອງພຣະສະມະນະໂຄດົມ ຫຼື ວ່າໝູ່ສາວົກຂອງຄະນາຈານຜູ້ຈະເລີນເຫຼົ່າອື່ນເຮັດໄດ້"

[໓໘໐] ກັດສະປະ ເປັນໄປໄດ້ທີ່ວິນຍູຊົນ ເມື່ອຊັກໄຊ້ໄລ່ລຽງສອບສວນແລ້ວ ຈະເພິ່ງເວົ້າແນວນີ້ວ່າ "ທຳຂອງທ່ານເຫຼົ່ານີ້ ສ່ວນໃດທີ່ເປັນອະກຸສົນກໍຈັດວ່າເປັນອະກຸສົນ ທີ່ມີໂທດກໍຈັດວ່າມີໂທດ ທີ່ບໍ່ຄວນຖືກໍຈັດວ່າບໍ່ຄວນຖື ທີ່ບໍ່ປະເສີດກໍຈັດວ່າບໍ່ປະເສີດ ແລະ ທີ່ເປັນຝ່າຍຊົ່ວກໍຈັດວ່າເປັນຝ່າຍຊົ່ວ ໝູ່ສາວົກຂອງພຣະສະມະນະໂຄດົມລະທຳເຫຼົ່ານີ້ໄດ້ເດັດຂາດ ຫຼື ວ່າໝູ່ສາວົກຂອງຄະນາຈານຜູ້ຈະເລີນເຫຼົ່າອື່ນເຮັດໄດ້" ໃນເລື້ອງນັ້ນ ວິນຍູຊົນ ເມື່ອຊັກໄຊ້ໄລ່ລຽງສອບສວນແນວນີ້ໂດຍຫຼາຍຈະສັນລະເສີນພວກເຮົາຝ່າຍດຽວເທົ່ານັ້ນ

[໓໘໑] ຍັງມີອີກກັດສະປະ ວິນຍູຊົນ ເມື່ອຊັກໄຊ້ໄລ່ລຽງສອບສວນພວກເຮົາແລ້ວ ປຽບທຽມສາດສະດາກັບສາດສະດາ ໝູ່ສາວົກກັບໝູ່ສາວົກວ່າ "ທຳຂອງທ່ານເຫຼົ່ານີ້ສ່ວນໃດທີ່ເປັນກຸສົນກໍຈັດວ່າເປັນກຸສົນ ທີ່ບໍ່ມີໂທດກໍຈັດວ່າບໍ່ມີໂທດ ທີ່ຄວນຖືກໍຈັດວ່າຄວນຖື ທີ່ປະເສີດກໍຈັດວ່າປະເສີດ ແລະທີ່ເປັນຝ່າຍດີກໍຈັດວ່າເປັນຝ່າຍດີ ໃຜເລົ່າທີ່ສະມາທານປະພຶດທຳເຫຼົ່ານີ້ໄດ້ຄົບຖ້ວນ ໝູ່ສາວົກຂອງພຣະສະມະນະໂຄດົມ ຫຼື ວ່າໝູ່ສາວົກຂອງຄະນາຈານຜູ້ຈະເລີນເຫຼົ່າອື່ນເຮັດໄດ້"

[໓໗໔] ກັດສະປະເປັນໄປໄດ້ທີ່ວິນຍູຊົນ ເມື່ອຊັກໄຊ້ໄລ່ລຽງສອບສວນຈະເພິ່ງເວົ້າແນວນີ້ວ່າ "ທຳຂອງທ່ານເຫຼົ່ານີ້ ສ່ວນໃດທີ່ເປັນກຸສົນກໍຈັດວ່າເປັນກຸສົນ ທີ່ບໍ່ມີໂທດກໍຈັດວ່າບໍ່ມີໂທດ ທີ່ຄວນຖືກໍຈັດວ່າຄວນຖື ທີ່ປະເສີດກໍຈັດວ່າປະເສີດ ແລະ ທີ່ເປັນຝ່າຍດີກໍຈັດວ່າເປັນຝ່າຍດີ ໝູ່ສາວົກຂອງພຣະສະມະນະໂຄດົມ ສະມາທານປະພຶດທຳເຫຼົ່ານີ້ໄດ້ຄົບຖ້ວນ ຫຼື ວ່າໝູ່ສາວົກຂອງຄະນາຈານຜູ້ຈະເລີນເຫຼົ່າອື່ນເຮັດໄດ້" ໃນເລື້ອງນັ້ນ ວິນຍູຊົນ ເມື່ອຊັກໄຊ້ໄລ່ລຽງສອບສວນແນວນີ້ໂດຍຫຼາຍ ຈະສັນລະ ເສີນພວກເຮົາຝ່າຍດຽວເທົ່ານັ້ນ

## ອະຣິຍະມັກມີອົງ ໘

[໓໗໓] ກັດສະປະ ມີຂໍ້ປະຕິບັດທີ່ຜູ້ປະຕິບັດຕາມຈະຮູ້ເອງເຫັນເອງໄດ້ວ່າ "ພຣະສະມະນະໂຄດົມຕັດຖືກເວລາ ຕັດຄຳຈິງ ຕັດອີງປະໂຫຍດ ຕັດອີງທຳຕັດອີງວິໄນ" ກັດສະປະອັນໃດຄືທາງ ອັນໃດຄືຂໍ້ປະຕິບັດທີ່ຜູ້ປະຕິບັດຕາມ ຈະຮູ້ເອງ ເຫັນເອງໄດ້ວ່າ "ພຣະສະມະນະໂຄດົມຕັດຖືກເວລາ ຕັດຄຳຈິງ ຕັດອີງປະໂຫຍດ ຕັດອີງທຳ ຕັດອີງວິໄນ" ມັກມີອົງ ໘ ອັນປະເສີດເຫຼົ່ານີ້ ຄື ສຳມາທິດຖິ (ເຫັນຖືກ), ສຳມາສັງກັບປະ (ດຳຣິຖືກ), ສຳມາວາຈາ (ເຈຣະຈາຖືກ), ສຳມາກຳມັນຕະ (ກະທຳຖືກ), ສຳມາອາຊີວະ (ລ້ຽງຊີບຖືກ), ສຳມາວາຍາມະ (ພະຍາຍາມຖືກ), ສຳມາສະຕິ (ຣະລຶກຖືກ) ແລະ ສຳມາສະມາທິ (ຕັ້ງຈິຕໝັ້ນຖືກ) ກັດສະປະນີ້ແລ ຄືທາງ ຄືຂໍ້ປະຕິບັດທີ່ຜູ້ປະຕິບັດຕາມຈະຮູ້ເອງ ເຫັນເອງວ່າ ພຣະສະມະນະໂຄດົມຕັດຖືກເວລາ ຕັດຄຳຈິງ ຕັດອີງປະໂຫຍດ ຕັດອີງທຳ ຕັດອີງວິໄນ

## ວ່າດ້ວຍການຫຼີກເວັ້ນຈາກບາບດ້ວຍຕະບະ

[໓໗໔] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ອະເຈລະກັດສະປະຂາບທູນວ່າ "ທ່ານພຣະໂຄດົມ ການພ່ຳເພັງຕະບະທີ່ນັບວ່າເປັນສາມັນຍະຄຸນ ແລະເປັນພົມມັນຍະຄຸນຂອງສະມະນະພາມແມ່ນເຫຼົ່ານີ້ ຄື ເປັນອະເຈະລະກະ (ປະພຶດເປືອຍກາຍ) ບໍ່ມີມາລະຍາດເລຍມີເຂົາເຊີນໃຫ້ໄປຮັບອາຫານກໍບໍ່ໄປ ເຂົາເຊີນໃຫ້ຢຸດຮັບອາຫານກໍບໍ່ຢຸດ ບໍ່ຮັບອາຫານທີ່ເຂົາແບ່ງໄວ້ໃຫ້ ບໍ່ຮັບອາຫານທີ່ເຂົາເຮັດເຈາະຈົ່ງ ບໍ່ຍິນດີອາຫານທີ່ເຂົາເຊີນ ບໍ່ຮັບອາຫານຈາກປາກໝໍ້ບໍ່ຮັບອາຫານຈາກປາກພາຊະນະ ບໍ່ຮັບອາຫານກວມທໍລະນີປະຕູ ບໍ່ຮັບອາຫານກວມທ່ອນໄມ້ບໍ່ຮັບອາຫານກວມສາກ ບໍ່ຮັບອາຫານຂອງຄົນ ໒ ຄົນ ທີ່ກຳລັງບໍລິໂພກຢູ່ ບໍ່ຮັບອາຫານຂອງຍິງຖືພາ ບໍ່ຮັບອາຫານຂອງຍິງຜູ້ກຳລັງໃຫ້ບຸດດື່ມນົມ ບໍ່ຮັບອາຫານຂອງຍິງທີ່ກ້ຽວລົມຊາຍບໍ່ຮັບອາຫານທີ່ນັດແດ່ກັນເຮັດໄວ້ ບໍ່ຮັບອາຫານໃນທີ່ລ້ຽງໝາ ບໍ່ຮັບອາຫານໃນທີ່ມີແມງວັນໄຕ່ຕອມເປັນກຸ່ມ ໆ ບໍ່ກິນປາ ບໍ່ກິນຊີ້ນ ບໍ່ດື່ມສຸຣາ ບໍ່ດື່ມເມຣັຍ ບໍ່ດື່ມຢາດອງ ຮັບອາຫານໃນເຮືອນຫຼັງດຽວ ລ້ຽງຊີບດ້ວຍເຂົ້າຄຳດຽວ ຮັບອາຫານໃນເຮືອນ ໒ ຫຼັງ ລ້ຽງຊີບດ້ວຍເຂົ້າ ໒ ຄຳຮັບອາຫານໃນເຮືອນ ໗ ຫຼັງ ລ້ຽງຊີບດ້ວຍເຂົ້າ ໗ ຄຳ ລ້ຽງຊີບດ້ວຍອາຫານໃນຖາດນ້ອຍ ໑

ໃບລ້ຽງຊີບດ້ວຍອາຫານໃນຖາດນ້ອຍ ໔ ໃບ ລ້ຽງຊີບດ້ວຍອາຫານໃນຖາດນ້ອຍ ໗ ໃບ ກິນອາຫານທີ່ເກັບໄວ້ຄ້າງຄືນ ໑ ວັນ ກິນອາຫານທີ່ເກັບໄວ້ຄ້າງຄືນ ໔ ວັນ ກິນອາຫານທີ່ເກັບໄວ້ຄ້າງຄືນ ໗ ວັນ ຖືການບໍລິໂພກອາຫານ ໑໕ ວັນຕໍ່ ໑ ຄາບ

[໓໙໕] ການພໍ່າເພັງຕະບະທີ່ນັບວ່າເປັນສາມັນຍະຄຸນ ແລະ ພົມມັນຍະຄຸນຂອງສະມະນະພາມເຫຼົ່ານັ້ນ ຖືການກິນຜັກດອງເປັນອາຫານ ກິນເຂົ້າຟ່າງເປັນອາຫານ ກິນໝາກເດືອຍເປັນອາຫານ ກິນເຂົ້າຕິດກົ້ນໝໍ້ເປັນອາຫານ ກິນຢາງເປັນອາຫານ ກິນໄຖຫີນເປັນອາຫານ ກິນຮໍາເປັນອາຫານ ກິນເຂົ້າຕັງເປັນອາຫານ ກິນກໍາຍານເປັນອາຫານ ກິນຫຍ້າເປັນອາຫານ ກິນຂີ້ງົວເປັນອາຫານ ກິນເຫງົ້າແລະໝາກໄມ້ປ່າເປັນອາຫານ ບໍລິໂພກໝາກໄມ້ຫຼົ່ນລ້ຽງຊີບ

[໓໙໖] ການພໍ່າເພັງຕະບະທີ່ນັບວ່າເປັນສາມັນຍະຄຸນ ແລະ ພົມມັນຍະຄຸນຂອງສະມະນະພາມເຫຼົ່ານັ້ນ ຖືການນຸ່ງຫົ່ມຜ້າປ່ານ ນຸ່ງຫົ່ມຜ້າປົນຝ້າຍ ນຸ່ງຫົ່ມຜ້າຫໍ່ສົບ ນຸ່ງຫົ່ມຜ້າບັງສຸກຸນ ນຸ່ງຫົ່ມຜ້າເປືອກໄມ້ ນຸ່ງຫົ່ມໜັງເສືອ ນຸ່ງຫົ່ມໜັງເສືອມີເລັບ ນຸ່ງຫົ່ມຜ້າຫຍ້າຄາ ນຸ່ງຫົ່ມຜ້າເປືອກປໍ ນຸ່ງຫົ່ມຜ້າໝາກໄມ້ ນຸ່ງຫົ່ມຜ້າກໍາພົນຜົມມະນຸດ ນຸ່ງຫົ່ມຜ້າກໍາພົນຂົນສັດ ນຸ່ງຫົ່ມຜ້າຂົນປີກນົກເຄົ້າ ຫຼົກຜົມແລະໜວດ ຄື ຖືການຫຼົກຜົມ ແລະ ໜວດ ຍືນຢູ່ຢ່າງດຽວບໍ່ຍອມນັ່ງ ຖືການຍ່າງແຢ່ງແຍ້ (ຢຽບພື້ນບໍ່ເຕັມຕີນ) ນອນເທິງໜາມ ນອນເທິງແຜ່ນກະດານ ນອນເທິງເນີນດິນນອນຕະແຄງທາງດຽວ ເອົາຝຸ່ນໂຮຍໂຕ ຢູ່ກາງແຈ້ງ ນັ່ງເທິງອາສະນະຕາມທີ່ປູໄວ້ ບໍລິໂພກຂອງເສຍ ບໍ່ດື່ມນໍ້າເຢັນ ອາບນໍ້າວັນລະ ໓ ເທື່ອ.

## ວ່າດ້ວຍການຫຼີກບາບດ້ວຍຕະບະທີ່ປາສະຈາກປະໂຫຍດ

[໓໙໗] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ກັດສະປະ ແມ່ນຖ້າສະມະນະພາມເປັນອະເຈລະກະບໍ່ມີມາລະຍາດເລຍມີ ຯລຯ ຖືການບໍລິໂພກອາຫານ ໑໕ ວັນຕໍ່ ໑ ຄາບ ເຊັ່ນນີ້ ສີລະສໍາປະທາ ຈິດຕະສໍາປະທາ ຫຼື ປັນຍາສໍາປະທາ ກໍຍັງບໍ່ຖືວ່າສະມະນະພາມຜູ້ນັ້ນໄດ້ອົບຮົມຈິດ ເຮັດໃຫ້ແຈ້ງເຊິ່ງທໍາ ແທ້ຈິງແລ້ວ ເຂົາຍັງຫ່າງໄກຈາກສາມັນຍະຄຸນ ແລະ ພົມມັນຍະຄຸນ ຕໍ່ເມື່ອພິກຂຸຈະເລີນເມດຕາຈິດ ອັນບໍ່ມີເວນ ບໍ່ມີຄວາມບຽດບຽນ ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ເພາະອາສະວະດັບສິ້ນໄປດ້ວຍປັນຍາອັນຍິ່ງນີ້ເອງ ເຂົ້າເຖິງຢູ່ໃນປະຈຸບັນ ພິກຂຸນີ້ເຮົາຮຽກວ່າ ສະມະນະແດ່ ວ່າພາມແດ່ ແມ່ນຖ້າສະມະນະພາມເປັນຜູ້ກິນຜັກດອງເປັນອາຫານ ກິນເຂົ້າຟ່າງເປັນອາຫານ ຯລຯ ກິນເຫງົ້າແລະໝາກໄມ້ປ່າເປັນອາຫານ ກິນໝາກໄມ້ຫຼົ່ນລ້ຽງຊີບຢູ່ ສີລະສໍາປະທາ ຈິດຕະສໍາປະທາ ຫຼືປັນຍາສໍາປະທາກໍຍັງບໍ່ເປັນອັນສະມະນະພາມນັ້ນ ໄດ້ອົບຮົມເຮັດໃຫ້ແຈ້ງ ແທ້ຈິງແລ້ວ ເຂົາຍັງຫ່າງໄກຈາກສາມັນຍະຄຸນ ແລະ ພົມມັນຍະຄຸນ ຕໍ່ເມື່ອພິກຂຸຈະເລີນເມດຕາຈິດອັນບໍ່ມີເວນ ບໍ່ມີຄວາມບຽດບຽນ ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະຫຼົງເຫຼືອຢູ່ ເພາະອາສະວະດັບສິ້ນໝົດໄປ ດ້ວຍປັນຍາອັນ

ຍິ່ງນີ້ເອງ ເຂົ້າເຖິງຢູ່ໃນປະຈຸບັນ ພິກຂຸນີ້ເຮົາຮຽກວ່າ ສະມະນະແດ່ ວ່າພາມແດ່ ແມ່ນຖ້າສະມະນະພາມເປັນຜູ້ນຸ່ງຫົ່ມຜ້າປ່ານ ນຸ່ງຫົ່ມຜ້າແກມໄໝ ຯລຯ ອາບນ້ຳວັນລະ ໓ ເທື່ອ ຄື ຖືການລົງອາບນ້ຳ ສີລະສຳປະທາ ຈິດຕະສຳປະທາ ຫຼື ປັນຍາສຳປະທາກໍຍັງບໍ່ເປັນອັນສະມະນະພາມນັ້ນໄດ້ອົບຮົມເຮັດໃຫ້ແຈ້ງ ແທ້ຈິງແລ້ວ ເຂົາຍັງຫ່າງໄກຈາກສາມັນຍະຄຸນ ແລະພົມມັນຍະຄຸນຕໍ່ເມື່ອພິກຂຸຈະເລີນເມດຕາຈິດ ອັນບໍ່ມີເວນ ບໍ່ມີຄວາມບຽດບຽນ ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະຫຼົງເຫຼືອ ເພາະອາສະວະດັບສິ້ນໝົດໄປ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປະຈຸບັນ ພິກຂຸນີ້ເຮົາຮຽກວ່າ ສະມະນະແດ່ ວ່າພາມແດ່

[໓໙໘] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ອະເຈລະກັດສະປະຂາບທູນວ່າ "ທ່ານພຣະໂຄດົມ ສາມັນຍະຄຸນເປັນກິດທີ່ເຮັດໄດ້ຍາກ ພົມມັນຍະຄຸນເປັນກິດທີ່ເຮັດໄດ້ຍາກ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຂໍ້ທີ່ສາມັນຍະຄຸນເປັນກິດທີ່ເຮັດໄດ້ຍາກ ພົມມັນຍະຄຸນເປັນກິດທີ່ເຮັດໄດ້ຍາກ ເປັນເລື້ອງປົກກະຕິໃນໂລກ ຖ້າຫາກແມ່ນວ່າ ສະມະນະພາມເປັນອະເຈລະກະບໍ່ມີມາລະຍາດເລຍມີ ຯລຯ ຖືການບໍລິໂພກອາຫານ ໑໕ ວັນຕໍ່ ໑ ຄາບ ແນວນີ້ ຖ້າສາມັນຍະຄຸນ ຫຼື ພົມມັນຍະຄຸນ ເຊິ່ງຖືວ່າ ເປັນກິດທີ່ເຮັດໄດ້ຍາກແສນຍາກນັ້ນ ຈັກມີໄດ້ດ້ວຍການປະຕິບັດເລັກ ໆນ້ອຍ ໆ ແນວນັ້ນ ແລະ ດ້ວຍການພ່ຳເພັງຕະບະດັ່ງກ່າວມາແລ້ວ ກໍບໍ່ຄວນຈະກ່າວວ່າ "ສາມັນຍະຄຸນເປັນກິດທີ່ເຮັດໄດ້ຍາກ ພົມມັນຍະຄຸນເປັນກິດທີ່ເຮັດໄດ້ຍາກ"

ເພາະວ່າຄະຫະບໍດີ ຫຼື ບຸດຄະຫະບໍດີ ແມ່ນວ່ານາງກຸມພະທາສີ ກໍອາດຈະເຮັດສາມັນຍະຄຸນ ແລະພົມມັນຍະຄຸນນັ້ນໄດ້ດ້ວຍກ່າວວ່າ "ເອົາຖ້ອນ ເຮົາຈະເປັນອະເຈລະກະ ບໍ່ມີມາລະຍາດເລຍມີ ຯລຯ ຖືການບໍລິໂພກອາຫານ ໑໕ ວັນຕໍ່ ໑ ຄາບແນວນີ້" ເພາະສາມັນຍະຄຸນ ຫຼື ພົມມັນຍະຄຸນ ຈັກໄດ້ຊື່ວ່າ ເປັນກິດທີ່ເຮັດໄດ້ຍາກແສນຍາກ ກໍຕໍ່ເມື່ອໄດ້ເວັ້ນຈາກການປະຕິບັດເລັກ ໆ ນ້ອຍ ໆ ເຫຼົ່າ ນັ້ນ ແລະ ຈາກການພ່ຳເພັງຕະບະເຊັ່ນນັ້ນ ສະນັ້ນ ຈຶ່ງຄວນກ່າວໄດ້ວ່າ "ສາມັນຍະຄຸນເປັນກິດທີ່ເຮັດໄດ້ຍາກ ພົມມັນຍະຄຸນເປັນກິດທີ່ເຮັດໄດ້ຍາກ" ຫາກພິກຂຸຈະເລີນເມດຕາຈິດອັນບໍ່ມີເວນ ບໍ່ມີຄວາມບຽດບຽນ ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະຫຼົງເຫຼືອ ເພາະອາສະວະດັບສິ້ນໝົດໄປ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປະຈຸບັນ ພິກຂຸນີ້ເຮົາຮຽກວ່າສະມະນະແດ່ ວ່າພາມແດ່

ແມ່ນຖ້າຫາກວ່າ ສະມະນະພາມເປັນຜູ້ກິນຜັກດອງເປັນອາຫານ ກິນເຂົ້າຟ່າງເປັນອາຫານຯລຯ ກິນເຫງົ້າ ແລະ ໝາກໄມ້ປ່າເປັນອາຫານ ກິນໝາກໄມ້ຫຼົ່ນລ້ຽງຊີບ ຖ້າສາມັນຍະຄຸນ ຫຼື ພົມມັນຍະຄຸນ ເຊິ່ງຖືວ່າ ເປັນກິດທີ່ເຮັດໄດ້ຍາກແສນຍາກ ຈັກມີໄດ້ດ້ວຍການປະຕິບັດເລັກ ໆ ນ້ອຍ ໆພຽງເທົ່ານັ້ນ ແລະ ດ້ວຍການພ່ຳເພັງຕະບະດັ່ງກ່າວນັ້ນແລ້ວ ກໍບໍ່ຄວນຈະກ່າວວ່າ "ສາມັນຍະຄຸນເປັນກິດທີ່ເຮັດໄດ້ຍາກ ພົມມັນຍະຄຸນເປັນກິດທີ່ເຮັດໄດ້ຍາກ"

ຍ້ອນວ່າ ຄະຫະບໍດີ ຫຼື ບຸດຄະຫະບໍດີ ແມ່ນຈົນຮອດວ່າ ນາງກຸມພະທາສີ ກໍອາດຈະເຮັດສາມັນຍະຄຸນ ແລະ ພົມມັນຍະຄຸນນັ້ນໄດ້ ດ້ວຍການກ່າວວ່າ "ເອົາຖ້ອນ ເຮົາຈະກິນຜັກດອງເປັນອາຫານ ກິນເຂົ້າຟ່າງເປັນອາຫານ ຯລຯ ກິນເຫງົ້າ ແລະ ໝາກໄມ້ປ່າເປັນອາຫານກິນໝາກໄມ້ຫຼົ່ນລ້ຽງຊີບ" ເພາະສາມັນຍະຄຸນ ຫຼື ພົມມັນຍະຄຸນ ຈັກໄດ້ຊື່ວ່າເປັນກິດທີ່ເຮັດໄດ້ຍາກແສນຍາກກໍຕໍ່ເມື່ອໄດ້ເວັ້ນຈາກການປະຕິບັດເລັກ ໆ ນ້ອຍ ໆ ເຫຼົ່ານັ້ນ ແລະ ຈາກການພໍ່າເພັງຕະບະແນວນັ້ນ ສະນັ້ນ ຈຶ່ງຄວນກ່າວວ່າ "ສາມັນຍະຄຸນເປັນກິດທີ່ເຮັດໄດ້ຍາກ ພົມມັນຍະຄຸນເປັນກິດທີ່ເຮັດໄດ້ຍາກ" ຫາກພິກຂຸຈະເລີນເມດຕາຈິດອັນບໍ່ມີເວນ ບໍ່ມີຄວາມບຽດບຽນ ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະຫຼົງເຫຼືອຢູ່ ເພາະອາສະວະດັບສິ້ນໝົດໄປດ້ວຍປັນຍາອັນຍິ່ງ ເຂົ້າເຖິງຢູ່ໃນປະຈຸບັນ ພິກຂຸນີ້ເຮົາຮຽກວ່າສະມະນະແດ່ ວ່າພາມແດ່

ແມ່ນຖ້າຫາກວ່າ ສະມະນະພາມເປັນຜູ້ນຸ່ງຫົ່ມຜ້າປ່ານ ນຸ່ງຫົ່ມຜ້າແກມໄໝ ຯລຯ ຖືການອາບນໍ້າວັນລະ ໓ ເທື່ອ ຖ້າສາມັນຍະຄຸນ ຫຼື ພົມມັນຍະຄຸນ ເຊິ່ງຖືວ່າເປັນກິດທີ່ເຮັດໄດ້ຍາກແສນຍາກ ຈັກມີໄດ້ດ້ວຍການປະຕິບັດເລັກ ໆ ນ້ອຍ ໆ ເຫຼົ່ານັ້ນ ແລະ ດ້ວຍການພໍ່າເພັງຕະບະດັ່ງກ່າວນີ້ແລ້ວ ກໍບໍ່ຄວນຈະກ່າວວ່າ "ສາມັນຍະຄຸນເປັນກິດທີ່ເຮັດໄດ້ຍາກ ພົມມັນຍະຄຸນເປັນກິດທີ່ເຮັດໄດ້ຍາກ" ເພາະຄະຫະບໍດີ ຫຼື ບຸດຄະຫະບໍດີ ແມ່ນວ່ານາງກຸມພະທາສີ ກໍອາດຈະເຮັດສາມັນຍະຄຸນ ແລະພົມມັນຍະຄຸນນັ້ນໄດ້ ດ້ວຍການກ່າວວ່າ "ເອົາຖ້ອນ ເຮົາຈະນຸ່ງຫົ່ມຜ້າປ່ານ ນຸ່ງຫົ່ມຜ້າແກມໄໝຯລຯ ແລ້ວຖືການອາບນໍ້າວັນລະ ໓ ເທື່ອໄດ້ຄືກັນ"

ເພາະສາມັນຍະຄຸນ ຫຼື ພົມມັນຍະຄຸນຈະໄດ້ຊື່ວ່າ ເປັນກິດທີ່ເຮັດໄດ້ຍາກແສນຍາກ ກໍຕໍ່ເມື່ອໄດ້ເວັ້ນຈາກການປະຕິບັດເລັກ ໆ ນ້ອຍ ໆ ເຫຼົ່ານັ້ນ ແລະ ຈາກການພໍ່າເພັງຕະບະແນວນັ້ນ ສະນັ້ນ ຈຶ່ງຄວນກ່າວໄດ້ວ່າ "ສາມັນຍະຄຸນເປັນກິດທີ່ເຮັດໄດ້ຍາກ ພົມມັນຍະຄຸນເປັນກິດທີ່ເຮັດໄດ້ຍາກ" ຫາກພິກຂຸຈະເລີນເມດຕາຈິດ ອັນບໍ່ມີເວນ ບໍ່ມີຄວາມບຽດບຽນ ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະຫຼົງເຫຼືອຢູ່ ເພາະອາສະວະດັບສິ້ນໝົດໄປ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປະຈຸບັນ ພິກຂຸນີ້ເຮົາຮຽກວ່າ ສະມະນະແດ່ ວ່າພາມແດ່

[໓໙໙] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ອະເຈລະກັດສະປະຂາບທູນວ່າ "ທ່ານພຣະໂຄດົມ ສະມະນະເປັນຜູ້ທີ່ຮູ້ໄດ້ຍາກ ພາມເປັນຜູ້ທີ່ຮູ້ໄດ້ຍາກ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຂໍ້ທີ່ສະມະນະເປັນຜູ້ທີ່ຮູ້ໄດ້ຍາກ ພາມເປັນຜູ້ທີ່ຮູ້ໄດ້ຍາກເປັນເລື້ອງປົກກະຕິໃນໂລກ ແມ່ນຖ້າຫາກວ່າ ສະມະນະພາມເປັນອະເຈລະກະ ບໍ່ມີມາລະຍາດເລຍມີ ຯລຯ ຖືການບໍລິໂພກອາຫານ ໑໕ ວັນຕໍ່ ໑ ຄາບ ແນວນີ້ ຖ້າສະມະນະ ຫຼື ພາມເຊິ່ງຖືວ່າເປັນຜູ້ທີ່ຮູ້ໄດ້ຍາກແສນຍາຈະມີໄດ້ດ້ວຍການປະຕິບັດພຽງເລັກໆນ້ອຍໆເຫຼົ່ານັ້ນ ແລະດ້ວຍການພໍ່າເພັງຕະບະດັ່ງກ່າວນັ້ນແລ້ວ ກໍບໍ່ຄວນຈະກ່າວວ່າ "ສະມະນະເປັນຜູ້ທີ່ຮູ້ໄດ້ຍາກພາມເປັນ

ຜູ້ທີ່ຮູ້ໄດ້ຍາກ" ເພາະຄະຫະບໍດີ ຫຼືບຸດຄະຫະບໍດີ ແມ່ນວ່ານາງກຸມພະທາສີກໍອາດຮູ້ຈັກສະມະນະ ແລະພາມນັ້ນໄດ້ ດ້ວຍກ່າວວ່າ "ຜູ້ນີ້ເປັນອະເຈລະກະບໍ່ມີມາລະຍາດເລຍມີ ຯລຯ ຖືການບໍລິໂພກອາຫານ ໑໕ ວັນຕໍ່ ໑ ມື້ແນວນີ້"

ເພາະສະມະນະ ຫຼື ພາມຈັກໄດ້ຊື່ວ່າ ເປັນຜູ້ທີ່ຮູ້ໄດ້ຍາກແສນຍາກ ກໍຕໍ່ເມື່ອໄດ້ເວັ້ນຈາກການປະຕິບັດເລັກ ໆ ນ້ອຍ ໆ ເຫຼົ່ານັ້ນ ແລະ ຈາກການພ່ຳເພັງຕະບະແນວນັ້ນ ສະນັ້ນ ຈຶ່ງຄວນກ່າວວ່າ "ສະມະນະເປັນຜູ້ທີ່ຮູ້ໄດ້ຍາກ ພາມເປັນຜູ້ທີ່ຮູ້ໄດ້ຍາກ" ຫາກພິກຂຸຈະເລີນເມດຕາຈິດອັນບໍ່ມີເວນ ບໍ່ມີຄວາມບຽດບຽນ ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະຫຼົງເຫຼືອ ເພາະອາສະວະດັບສິ້ນໝົດໄປ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປະຈຸບັນ ພິກຂຸນີ້ເຮົາຮຽກວ່າສະມະນະແດ່ ວ່າພາມແດ່

ແມ່ນຖ້າສະມະນະພາມເປັນຜູ້ກິນຜັກດອງເປັນອາຫານ ກິນເຂົ້າຟ່າງເປັນອາຫານ ຯລຯ ຖືການກິນເຫງົ້າ ແລະ ໝາກໄມ້ປ່າເປັນອາຫານ ກິນໝາກໄມ້ສະເພາະທີ່ຫຼົ່ນລົງມາລ້ຽງຊີບ ຖ້າສະມະນະ ຫຼື ພາມເຊິ່ງຖືວ່າເປັນຜູ້ທີ່ຮູ້ໄດ້ຍາກແສນຍາກ ຈັກມີໄດ້ດ້ວຍການປະຕິບັດເລັກ ໆ ນ້ອຍ ໆ ເຫຼົ່ານັ້ນ ແລະ ດ້ວຍການພ່ຳເພັງຕະບະດັ່ງກ່າວນັ້ນແລ້ວ ກໍບໍ່ຄວນຈະກ່າວວ່າ "ສະມະນະເປັນຜູ້ທີ່ຮູ້ໄດ້ຍາກ ພາມເປັນຜູ້ທີ່ຮູ້ໄດ້ຍາກ" ເພາະຄະຫະບໍດີ ຫຼື ບຸດຄະຫະບໍດີ ແມ່ນຮອດວ່ານາງກຸມພະທາສີ ກໍອາດຮູ້ຈັກສະມະນະ ແລະ ພາມນັ້ນ ໄດ້ດ້ວຍກ່າວວ່າ "ຜູ້ນີ້ກິນຜັກດອງເປັນອາຫານ ກິນເຂົ້າຟ່າງເປັນອາຫານ ຯລຯ ກິນເຫງົ້າ ແລະ ໝາກໄມ້ປ່າເປັນອາຫານກິນໝາກໄມ້ຫຼົ່ນລ້ຽງຊີບ"

ເພາະສະມະນະ ຫຼື ພາມຈັກໄດ້ຊື່ວ່າ ເປັນຜູ້ທີ່ຮູ້ໄດ້ຍາກແສນຍາກກໍຕໍ່ເມື່ອໄດ້ເວັ້ນຈາກການປະຕິບັດເລັກ ໆ ນ້ອຍ ໆ ເຫຼົ່ານັ້ນ ແລະ ຈາກການພ່ຳເພັງຕະບະແນວນັ້ນ ສະນັ້ນ ຈຶ່ງຄວນກ່າວໄດ້ວ່າ "ສະມະນະເປັນຜູ້ທີ່ຮູ້ໄດ້ຍາກ ພາມເປັນຜູ້ທີ່ຮູ້ໄດ້ຍາກ" ຫາກພິກຂຸຈະເລີນເມດຕາຈິດອັນບໍ່ມີເວນ ບໍ່ມີຄວາມບຽດບຽນ ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະຫຼົງເຫຼືອຢູ່ ເພາະອາສະວະດັບສິ້ນໝົດໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປະຈຸບັນ ພິກຂຸນີ້ເຮົາຮຽກວ່າ ສະມະນະແດ່ວ່າພາມແດ່

ແມ່ນຖ້າສະມະນະພາມເປັນຜູ້ນຸ່ງຫົ່ມຜ້າປ່ານ ນຸ່ງຫົ່ມຜ້າແກມໄໝ ຯລຯ ອາບນ້ຳວັນລະ ໓ ເທື່ອ ຄື ຖືການລົງອາບນ້ຳ ຖ້າສະມະນະ ຫຼື ພາມເຊິ່ງຖືວ່າເປັນຜູ້ທີ່ຮູ້ໄດ້ຍາກແສນຍາກ ຈັກມີໄດ້ດ້ວຍການປະຕິບັດເລັກ ໆ ນ້ອຍ ໆ ເຫຼົ່ານັ້ນ ແລະ ດ້ວຍການພ່ຳເພັງຕະບະດັ່ງກ່າວນັ້ນແລ້ວ ກໍບໍ່ຄວນຈະກ່າວວ່າ "ສະມະນະເປັນຜູ້ທີ່ຮູ້ໄດ້ຍາກ ພາມເປັນຜູ້ທີ່ຮູ້ໄດ້ຍາກ" ເພາະຄະຫະບໍດີ ຫຼື ບຸດຄະຫະບໍດີ ແມ່ນວ່າ ນາງກຸມພະທາສີກໍອາດຮູ້ຈັກສະມະນະ ແລະ ພາມນັ້ນໄດ້

ດ້ວຍການກ່າວວ່າ "ຜູ້ນີ້ນຸ່ງຫົ່ມຜ້າປ່ານ ນຸ່ງຫົ່ມຜ້າແກມໄໝ ຯລຯ ອາບນ້ຳວັນລະ ໓ ເທື່ອ ຖື ການລົງອາບນ້ຳຫາບໍ່ໄດ້ເລີຍ"

ເພາະສະມະນະ ຫຼື ພາມຈັກໄດ້ຊື່ວ່າ ເປັນຜູ້ທີ່ຮູ້ໄດ້ຍາກແສນຍາກ ກໍຕໍ່ເມື່ອໄດ້ເວັ້ນຈາກ ການປະຕິບັດເລັກ ໆ ນ້ອຍ ໆ ເຫຼົ່ານັ້ນ ແລະ ຈາກການພ່ຳເພັງຕະບະແນວນັ້ນ ສະນັ້ນ ຈຶ່ງ ຄວນກ່າວໄດ້ວ່າ "ສະມະນະເປັນຜູ້ທີ່ຮູ້ໄດ້ຍາກ ພາມເປັນຜູ້ທີ່ຮູ້ໄດ້ຍາກ" ຫາກພິກຂຸຈະເລີນເມດ ຕາຈິດອັນບໍ່ມີເວນ ບໍ່ມີຄວາມບຽດບຽນ ເຮັດໃຫ້ຮູ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະ ວະຫຼົງເຫຼືອຢູ່ ເພາະອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປະຈຸບັນ ພິກຂຸນີ້ເຮົາ ຮຽກວ່າ ສະມະນະແດ່ ວ່າພາມແດ່

## ຄວາມສົມບູນດ້ວຍສິນ

[໔໐໐] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ ອະເຈລະກັດສະປະທູນຖາມວ່າ "ທ່ານ ພຣະໂຄດົມ ສີລະສຳປະທານັ້ນເປັນແນວໃດ? ຈິດຕະສຳປະທານັ້ນເປັນແນວໃດ ປັນຍາສຳປະ ທານັ້ນເປັນແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ກັດສະປະ ຕະຖາຄົດອຸບັດຂຶ້ນມາໃນໂລກນີ້ ເປັນ ພຣະອະຣະຫັນ ຕັດສະຮູ້ດ້ວຍຕົນເອງໂດຍທຳ ຯລຯ ເຫັນໄພໃນໂທດແມ່ນພຽງເລັກໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດ ປະກອບດ້ວຍກາຍະກຳ ແລະ ວະຈີກຳອັນເປັນກຸສົນ ມີອາ ຊີວະບໍລິສຸດສົມບູນດ້ວຍສິນ ຄຸ້ມຄອງທະວານໃນອິນຊີທັງຫຼາຍ ສົມບູນດ້ວຍສະຕິສຳປະຊັນຍາ ແລະ ເປັນຜູ້ສັນໂດດຢູ່

[໔໐໑] ພິກຂຸຊື່ວ່າ ສົມບູນດ້ວຍສິນເປັນແນວໃດ? ຄື ພິກຂຸໃນທຳວິໄນນີ້ ລະເວັ້ນຂາດ ຈາກການຂ້າສັດ ວາງທັນດາວຸດ ແລະ ສາດຕາວຸດ ມີຄວາມລະອາຍ ມີຄວາມອີດູ ມຸ້ງປະ ໂຫຍດເກື້ອກູນຕໍ່ສັບພະສັດຢູ່ ຂໍ້ນີ້ຈັດເປັນສີລະສຳປະທາຂອງພິກຂຸຢ່າງໜຶ່ງ ຯລຯ ພິກຂຸຜູ້ສົມ ບູນດ້ວຍສິນແນວນີ້ ຍ່ອມບໍ່ປະສົບໄພອັນຕະລາຍຈາກການສັງລວມໃນສິນເລີຍ ປຽບຄື ກະສັດຜູ້ ໄດ້ຮັບມູນທາພິເສກເປັນພຣະຣາຊາ ກຳຈັດຂ້າເສິກໄດ້ຣາບຄາບທັງໝົດແລ້ວ ຍ່ອມບໍ່ປະສົບໄພ ອັນຕະລາຍຈາກຂ້າເສິກອີກເລີຍ ພິກຂຸຜູ້ສົມບູນດ້ວຍອະຣິຍະສິນຂັນແນວນີ້ ຍ່ອມສະເຫວີຍສຸກ ອັນບໍ່ມີໂທດໃນພາຍໃນ ກັດສະປະ ພິກຂຸຊື່ວ່າ ສົມບູນດ້ວຍສິນເປັນແນວນີ້ ນີ້ແລ ຄື ສີລະສຳ ປະທາ ຯລຯ ບັນລຸປະຖົມມະຊານຢູ່ ບັນລຸທຸຕິຍະຊານຢູ່ ບັນລຸຕະຕິຍະຊານຢູ່ ບັນລຸຈະຕຸດຖະ ຊານຢູ່ ນີ້ແລ ເປັນຈິດຕະສຳປະທາ ເມື່ອມີຈິດເປັນສະມາທິແນວນີ້ ຯລຯ ພິກຂຸ ນ້ອມຈິດໄປ ເພື່ອຍານະທັດສະນະ ຯລຯ ຮູ້ຊັດແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກແລ້ວ ນີ້ ແລ ຄື ປັນຍາສຳປະທາ ກັດສະປະ ສີນະສຳປະທາ ຈິດຕະສຳປະທາ ແລະ ປັນຍາສຳປະທາ

ຢ່າງອື່ນທີ່ຍອດຢ້ຽມ ແລະ ປະນີດປະເສີດກວ່າ ສີລະສຳປະທາຈິດຕະສຳປະທາ ແລະ ປັນຍາສຳປະທານີ້ບໍ່ມີອີກແລ້ວ

## ວ່າດ້ວຍຊົງບັນລືຢ່າງອົງອາດດັ່ງພະຍາຣາດຊະສີ

[໔໐໔] ກັດສະປະ ມີສະມະນະພາມພວກໜຶ່ງເວົ້າເລື້ອງສີນ ກ່າວສັນລະເສີນສີນເອົາໄວ້ຢ່າງຫຼວງຫຼາຍ ສີນອັນຍອດຢ້ຽມທັງຫຼາຍເຫຼົ່ານັ້ນ ເຮົາຍັງແນມບໍ່ເຫັນຜູ້ຈະທັດທຽມເຮົາໄດ້ໃນໃນເລື້ອງສີນທັງຫຼາຍເຫຼົ່ານັ້ນ ຈະໄປຫາຜູ້ທີ່ຍິ່ງກວ່າເຮົາມາຈາກໄສໄດ້ອີກນໍ ເປັນຄວາມຈິງ ເຮົາຜູ້ດຽວເທົ່ານັ້ນ ເປັນຜູ້ລ້ຳເລີດໃນສີນອັນຍອດຢ້ຽມໃນອະທິສີນ

ກັດສະປະມີສະມະນະພາມພວກໜຶ່ງ ເວົ້າເລື້ອງຕະບະທີ່ຂວາງກັ້ນ ກຳຈັດກິເລດ ກ່າວສັນລະ ເສີນຕະບະທີ່ຂວາງກັ້ນກິເລດໄວ້ຢ່າງຫຼວງຫຼາຍ ຕະບະທີ່ຂວາງກັ້ນ ກຳຈັດກິເລດຢ່າງຍອດຢ້ຽມທັງຫຼາຍທີ່ກ່າວນັ້ນ ເຮົາຍັງແນມບໍ່ເຫັນຜູ້ຈະທັດທຽມສະເໝີເຮົາໄດ້ໃນເລື້ອງຕະບະນັ້ນຈະໄປຫາຜູ້ທີ່ເຮັດໄດ້ຍິ່ງກວ່າເຮົາມາຈາກໄສໄດ້ນໍ ເປັນຄວາມຈິງ ເຮົາຜູ້ດຽວເປັນຜູ້ລ້ຳເລີດໃນຕະບະທີ່ຂວາງກັ້ນກຳຈັດກິເລດ ອັນຍອດຢ້ຽມໄດ້ ຄື ອະທິເຊຄຸດສະ

ກັດສະປະ ມີສະມະນະພາມພວກໜຶ່ງເວົ້າເລື້ອງປັນຍາ ກ່າວສັນລະເສີນປັນຍາໄວ້ຫຼວງຫຼາຍ ປັນຍາຢ່າງຍອດຢ້ຽມທັງຫຼາຍທີ່ກ່າວນັ້ນ ເຮົາຍັງບໍ່ແນມເຫັນຜູ້ຈະທັດທຽມເຮົາໄດ້ ໃນເລື້ອງປັນຍານັ້ນໄດ້ເລີຍ ຈະໄປຫາຜູ້ທີ່ຍິ່ງກວ່າເຮົາມາຈາກໄສໄດ້ນໍ ເປັນຄວາມຈິງ ເຮົາຜູ້ດຽວເປັນຜູ້ລ້ຳເລີດໃນປັນຍາອັນຍອດຢ້ຽມ ຄື ອະທິປັນຍາ

ກັດສະປະ ມີສະມະນະພາມພວກໜຶ່ງເວົ້າເລື້ອງຄວາມຫຼຸດພົ້ນ ກ່າວສັນລະເສີນຄວາມຫຼຸດພົ້ນໄວ້ຫຼວງຫຼາຍ ຄວາມຫຼຸດພົ້ນອັນຍອດຢ້ຽມທັງຫຼາຍເຫຼົ່ານັ້ນ ເຮົາຍັງແນມບໍ່ເຫັນຜູ້ໃດຈະທັດທຽມເຮົາໄດ້ໃນເລື້ອງຄວາມຫຼຸດພົ້ນນັ້ນໄດ້ເລີຍ ຈະໄປຫາຜູ້ທີ່ຍິ່ງກວ່າເຮົາມາຈາກໄສໄດ້ນໍ ທີ່ແທ້ເຮົາຜູ້ດຽວເປັນຜູ້ລ້ຳເລີດໃນເລື້ອງຄວາມຫຼຸດພົ້ນ ຄື ອະທິວິມຸດຕິ

[໔໐໕] ກັດສະປະ ເປັນໄປໄດ້ທີ່ພວກປະຣິພາຊົກອັນຍະເດຍຣະຖີ ຈະເວົ້າແນວນີ້ວ່າ "ພຣະສະມະນະໂຄດົມ ຊົງບັນລືສີຫະນາດ ແຕ່ຊົງບັນລືໃນເຮືອນວ່າງເທົ່ານັ້ນ ບໍ່ຊົງກ້າບັນລືໃນທ່າມກາງບໍລິສັດເລີຍ" ທ່ານເພິ່ງບອກພວກເຂົາວ່າ "ພວກທ່ານຢ່າເວົ້າແນວນັ້ນ ພຣະສະມະນະໂຄດົມຊົງບັນລືສີຫະນາດ ແລະ ຊົງບັນລືທ່າມກາງໃນບໍລິສັດດ້ວຍ"

ກັດສະປະ ເປັນໄປໄດ້ທີ່ພວກປະຣິພາຊົກ ອັນຍະເດຍຣະຖີຈະເວົ້າແນວນີ້ວ່າ "ພຣະສະມະນະໂຄດົມຊົງບັນລືສີຫະນາດ ແລະ ຊົງບັນລືໃນທ່າມກາງບໍລິສັດ ແຕ່ບໍ່ຊົງບັນລືຢ່າງອົງອາດ"

ທ່ານເພິ່ງບອກພວກເຂົາວ່າ "ພວກທ່ານຢ່າເວົ້າແນວນັ້ນ ພຣະສະມະນະໂຄດົມຊົງບັນລືສີຫະນາດ ແລະຊົງບັນລືໃນທ່າມກາງບໍລິສັດ ພ້ອມທັງຊົງບັນລືຢ່າງອົງອາດດ້ວຍ"

ກັດສະປະ ເປັນໄປໄດ້ທີ່ພວກປະຣິພາຊົກ ອັນຍະເດຍຣະຖີ ຈະເວົ້າແນວນີ້ວ່າ "ພຣະສະມະນະໂຄດົມ ຊົງບັນລືສີຫະນາດ ແລະ ຊົງບັນລືໃນບໍລິສັດ ພ້ອມທັງຊົງບັນລືຢ່າງອົງອາດ ແຕ່ເທວະດາແລະມະນຸດ ບໍ່ໄດ້ທູນຖາມບັນຫາ ຯລຯ ເທວະດາ ແລະ ມະນຸດທູນຖາມບັນຫາ ແຕ່ພຣະອົງກໍຊົງຕອບບໍ່ໄດ້ ຯລຯ ພຣະອົງຊົງຕອບໄດ້ແຕ່ກໍເຮັດໃຫ້ຜູ້ຖາມພໍໃຈບໍ່ໄດ້ ຯລຯ ພຣະອົງຊົງເຮັດໃຫ້ຜູ້ຖາມພໍໃຈໄດ້ແຕ່ພວກເຂົາກໍບໍ່ສົນໃຈຟັງ ຯລຯ ພວກເຂົາສົນໃຈຟັງແຕ່ກໍບໍ່ເຫຼື້ອມໃສ ຯລຯ ພວກເຂົາເຫຼື້ອມໃສແຕ່ກໍບໍ່ສະແດງອອກ ຯລຯ ພວກເຂົາສະແດງອອກແຕ່ກໍບໍ່ປະຕິບັດຕາມ ຯລຯ ພວກເຂົາປະຕິບັດຕາມແຕ່ກໍບໍ່ຊື່ນຊົມຍິນດີ" ທ່ານເພິ່ງບອກພວກເຂົາແນວນີ້ວ່າ "ພວກທ່ານຢ່າໄດ້ເວົ້າແນວນັ້ນ ພຣະສະມະນະໂຄດົມຊົງບັນລືສີຫະນາດ ຊົງບັນລືໃນບໍລິສັດ ແລະ ຊົງບັນລືຢ່າງອົງອາດ ເທວະດາແລະມະນຸດພາກັນທູນຖາມບັນຫາພຣະອົງຊົງຕອບໄດ້ ພຣະອົງຊົງເຮັດໃຫ້ຜູ້ຖາມພໍໃຈໄດ້ ພວກເຂົາກໍສົນໃຈຟັງ ຟັງແລ້ວກໍເຫຼື້ອມໃສ ເຫຼື້ອມໃສແລ້ວກໍສະແດງອອກ ສະແດງອອກດ້ວຍການປະຕິບັດຕາມ ເມື່ອປະຕິບັດຕາມຕ່າງກໍພາກັນຊື່ນຊົມຍິນດີຢູ່"

## ວ່າດ້ວຍການຢູ່ປະຣິວາດຂອງເດຍຣະຖີ

[໔໐໔] ກັດສະປະ ຄັ້ງໜຶ່ງ ເຮົາຢູ່ໃນພູຄິຊະກູດ ເຂດເມືອງຣາດຊະຄຶ ເພື່ອນພົມມະຈາຣີຄົນໜຶ່ງຂອງທ່ານທີ່ຢູ່ໃນເມືອງຣາດຊະຄຶ ຊື່ນິໂຄທະປະຣິພາຊົກໄດ້ຖາມບັນຫາເລື້ອງຕະບະທີ່ຂວາງກັ້ນກິເລດຢ່າງຍອດຢ້ຽມກັບເຮົາ ເມື່ອເຮົາໄດ້ຕອບຄໍາຖາມແກ່ເຂົາກໍດີໃຈຍິນດີຫຼາຍ ອະເຈລະກັດສະປະທູນວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນມີໃຜແດ່ ທີ່ຟັງທໍາຂອງພຣະຜູ້ມີພຣະພາກເຈົ້າແລ້ວ ຈະບໍ່ດີໃຈ ແມ່ນຂ້າພຣະອົງໄດ້ຟັງທໍາຂອງພຣະຜູ້ມີພຣະພາກເອງແລ້ວ ກໍຍັງດີໃຈເປັນຢ່າງຫຼາຍ ຂ້າແຕ່ ພຣະອົງຜູ້ຈະເລີນ ພາສິດຂອງພຣະຜູ້ມີພຣະພາກເຈົ້າຊັດແຈ້ງມ່ວນຫຼາຍ ຂ້າແຕ່ ພຣະອົງຜູ້ຈະເລີນ ພາສິດຂອງພຣະຜູ້ມີພຣະພາກເຈົ້າຊັດແຈ້ງມ່ວນຫຼາຍ ພຣະຜູ້ມີພຣະພາກເຈົ້າ ຊົງປະກາດທໍາຊັດແຈ້ງໂດຍປະການຕ່າງ ໆ ປຽບ ຄື ບຸກຄົນຫງາຍຂອງທີ່ງ້ວມຢູ່ເປີດຂອງທີ່ປິດ ບອກທາງແກ່ຜູ້ຫຼົງທາງ ຫຼື ເຍືອງໄຟໃນທີ່ມືດໂດຍຕັ້ງໃຈວ່າ ຜູ້ມີຕາດີຈັກແນມເຫັນທາງໄດ້ ຂ້າພຣະອົງນີ້ ຂໍເຖິງພຣະຜູ້ມີພຣະພາກພ້ອມທັງພຣະທໍາ ແລະ ພຣະສົງເປັນສະຣະນະ ຂ້າແຕ່ ພຣະອົງຜູ້ຈະເລີນ ຂໍໃຫ້ຜູ້ຂ້າເພິ່ງໄດ້ບັນພະຊາ ເພິ່ງໄດ້ອຸປະສົມບົດໃນສໍານັກຂອງພຣະຜູ້ມີພຣະພາກເຈົ້າດ້ວຍເທີ້ນ

[໔໐໕] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ກັດສະປະ ຜູ້ເຄີຍເປັນອັນຍະເດຍຣະຖີ ເມື່ອມີປະສົງຈະບັນພະຊາອຸປະສົມບົດໃນທໍາວິໄນນີ້ ຈະຕ້ອງຢູ່ປະຣິວາດ ໔ ເດືອນກ່ອນ ຫຼັງຈາກ ໔

ເດືອນລ່ວງໄປແລ້ວ ເມື່ອເຮັດໃຫ້ພິກຂຸສົງພໍໃຈໃນວັດປະຕິບັດໄດ້ແລ້ວ ຈຶ່ງໃຫ້ບັນພະຊາອຸປະສົມບົດເປັນພິກຂຸ ອັນໜຶ່ງ ໃນເລື້ອງນີ້ເຮົາໄດ້ຄຳນຶງເຖິງຄວາມແຕກຕ່າງລະຫວ່າງບຸກຄົນ ແລະການຖືວັດປະຕິບັດ”

ທ່ານກັດສະປະຂາບທູນວ່າ “ຂ້າແຕ່ ພຣະອົງຜູ້ຈະເລີນ ຫາກຜູ້ເຄີຍເປັນອັນຍະເດຍຣະຖີປະສົງຈະບັນພະຊາອຸປະສົມບົດໃນທຳວິໄນນີ້ ຈະຕ້ອງຢູ່ປະຣິວາດ ໔ ເດືອນກ່ອນ ຫຼັງຈາກ ໔ ເດືອນລ່ວງໄປແລ້ວ ເມື່ອເຮັດໃຫ້ພິກຂຸສົງພໍໃຈໃນວັດປະຕິບັດໄດ້ແລ້ວ ຈຶ່ງໃຫ້ບັນພະຊາອຸປະສົມບົດເປັນພິກຂຸ ຂ້າພຣະອົງຈັກຂໍຢູ່ປະຣິວາດ ໔ ປີ ຫຼັງຈາກ ໔ ປີລ່ວງໄປແລ້ວ ເມື່ອພິກຂຸສົງພໍໃຈໃນວັດປະຕິບັດ ຈຶ່ງອະນຸຍາດໃຫ້ຂ້ານ້ອຍບັນພະຊາອຸປະສົມບົດເປັນພິກຂຸ ເຖີ້ນ ຂ້ານ້ອຍ”

ເມື່ອແລ້ວ ອະເຈລະກັດສະປະໄດ້ບັນພະຊາອຸປະສົມບົດ ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ເມື່ອບວດແລ້ວບໍ່ດົນຫຼີກອອກໄປຢູ່ຜູ້ດຽວ ເປັນຜູ້ບໍ່ປະໝາດ ມີຄວາມພຽນ ມຸ້ງຕໍ່ພຣະນິບພານຢູ່ ບໍ່ດົນຫຼາຍ ກໍເຮັດໃຫ້ແຈ້ງເຊິ່ງທີ່ສຸດແຫ່ງພົມມະຈັນອັນຍອດຢ້ຽມ ທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດໂດຍຊອບ ຕ້ອງການດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປະຈຸບັນ ຮູ້ຊັດແຈ້ງວ່າ “ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ” ຈຶ່ງເປັນອັນວ່າ ທ່ານພຣະກັດສະປະໄດ້ເປັນພຣະອະຣະຫັນອົງໜຶ່ງ ໃນບັນດາພຣະອະຣະຫັນທັງຫຼາຍ

**ມະຫາສີຫະນາດສູດທີ ໗ ຈົບ**

# ໗. ໂປດຕະຖະປາທະສູດ

## ວ່າດ້ວຍປະຣິພາຊົກຊື່ໂປດຕະຖະປາທະ

## ເລື້ອງໂປດຕະຖະປາທະປະຣິພາຊົກ

[໔໐໖] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນພຣະເຊດວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດເມືອງສາວັດຖີ ໃນສະໄໝນັ້ນ ໂປດຕະຖະປາທະປະຣິພາຊົກ ພ້ອມດ້ວຍປະຣິພາຊົກບໍລິສັດໝູ່ໃຫຍ່ ມີປະມານ ໓,໐໐໐ ອົງ ພັກຢູ່ໃນພຣະຣາດຊະອຸທະຍານຂອງພຣະນາງມັນລິກາ ຊື່ເອກະສາລະກະ ທີ່ໄດ້ຈັດໄວ້ເພື່ອເປັນທີ່ປະກາດລັດທິອັນລາຍລ້ອມດ້ວຍຕົ້ນໝາກພັບ ໃນເຊົ້າວັນນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຄອງອັນຕະຣະວາສົກ ຖືບາດ ແລະ ຈີວອນ ສະເດັດເຂົ້າໄປເມືອງສາວັດຖີເພື່ອບິນທະບາດ

[໔໐໗] ພຣະຜູ້ມີພຣະພາກເຈົ້າ ຊົງດຳລິວ່າ "ຍັງເຊົ້າໂພດທີ່ຈະທ່ຽວບິນທະບາດໃນເມືອງສາວັດຖີ ທາງທີ່ດີເຮົາຄວນເຂົ້າໄປຫາໂປດຕະຖະປາທະປະຣິພາຊົກ ໃນພຣະຣາດຊະອຸດທະຍານຂອງພຣະນາງມັນລິກາ ຊື່ເອກະສາລະກະທີ່ຈັດໄວ້ ເພື່ອເປັນທີ່ປະກາດລັດທິ" ຈຶ່ງສະເດັດເຂົ້າໄປສູ່ພຣະຣາດຊະອຸດທະຍານຂອງພຣະນາງມັນລິກາ ຊື່ເອກະສາລະກະທີ່ຈັດໄວ້ເພື່ອເປັນທີ່ປະກາດລັດທິ

[໔໐໘] ເວລານັ້ນ ໂປດຕະຖະປາທະປະຣິພາຊົກ ກຳລັງນັ່ງສົນທະນາດ້ວຍສຽງດັ່ງພຶດພື້ນຢູ່ກັບປະຣິພາຊົກບໍລິສັດໝູ່ໃຫຍ່ ກຳລັງເວົ້າເຖິງເດຣັດສານກະຖາຕ່າງ ໆ ຄື ເລື້ອງພຣະຣາຊາ ເລື້ອງໂຈນ ເລື້ອງມະຫາອຳມາດ ເລື້ອງກອງທັບ ເລື້ອງໄພ ເລື້ອງການສູ່ຮົບ ເລື້ອງເຂົ້າ ເລື້ອງນ້ຳ ເລື້ອງຜ້າ ເລື້ອງບ່ອນນອນ ເລື້ອງພວງດອກໄມ້ ເລື້ອງຂອງຫອມ ເລື້ອງຍາດຕິພີ່ນ້ອງ ເລື້ອງຍານພາຫານະ ເລື້ອງບ້ານ ເລື້ອງນິຄົມ ເລື້ອງເມືອງຫຼວງ ເລື້ອງຊົນນະບົດ ເລື້ອງສະຕີ ເລື້ອງບຸຣຸດ ເລື້ອງຄົນກ້າຫານ ເລື້ອງຮ່ອມ ເລື້ອງທ່ານ້ຳ ເລື້ອງຄົນທີ່ລ່ວງລັບໄປແລ້ວ ເລື້ອງຕ່າງ ໆ ເລື້ອງໂລກ ເລື້ອງທະເລ ເລື້ອງຄວາມຈະເລີນ ແລະ ຄວາມເສື່ອມ

[໔໐໙] ໂປດຕະຖະປາທະປະຣິພາຊົກເຫັນພຣະຜູ້ມີພຣະພາກເຈົ້າ ສະເດັດມາແຕ່ໄກຈຶ່ງຫ້າມບໍລິສັດຂອງຕົນວ່າ "ທ່ານທັງຫຼາຍໂຜດງຽບກ່ອນ ຢ່າສົ່ງສຽງດັ່ງ ພຣະສະມະນະໂຄດົມກຳລັງສະເດັດມາຮອດ ພຣະອົງໂຜດສຽງຄ່ອຍ ຕັດສັນລະເສີນສຽງຄ່ອຍ ເມື່ອພຣະອົງຊົງຮູ້ວ່າ

ໃນບໍລິສັດມີສຽງຄ່ອຍ ອາດຈະສະເດັດເຂົ້າມາກໍໄດ້" ເມື່ອເຂົາເວົ້າແນວນີ້ປະຣິພາຊົກເຫຼົ່ານັ້ນ ຈຶ່ງໄດ້ພາກັນມິດງຽບສະຫງົບຢູ່"

[໔໑໐] ໃນທີນັ້ນ ພຣະຜູ້ມີພຣະພາກເຈົ້າ ສະເດັດເຂົ້າໄປຫາໂປດຕະຖະປາທະປະຣິພາຊົກໂປດຕະຖະປາທະປະຣິພາຊົກ ຈຶ່ງທູນເຊີນວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າສະເດັດເຂົ້າມາເຖີ້ນ ຂ້ານ້ອຍ ຂໍນິມົນພຣະຜູ້ມີພຣະພາກເຈົ້າຢູ່ດີ ໆ ຂໍນິມົນພຣະອົງຈົ່ງສະເດັດມານີ້ໄດ້ຕະຫຼອດເວລາ ຂໍພຣະຜູ້ມີພຣະພາກເຈົ້າປະທັບນັ່ງເທິງອາສະນະທີ່ປູໄວ້ຖວາຍເຖີ້ນ ຂ້ານ້ອຍ"

ເມື່ອແລ້ວ ພຣະຜູ້ມີພຣະພາກເຈົ້າ ຊົງປະທັບນັ່ງເທິງອາສະນະທີ່ປູໄວ້ໃຫ້ ສ່ວນໂປດຕະຖະປາທະປະຣິພາຊົກກໍໄດ້ຫາບ່ອນນັ່ງ ເຊິ່ງຢູ່ຕ່ຳກວ່າພຣະຜູ້ມີພຣະພາກ ໆ ໄດ້ຕັດຖາມວ່າ "ໂປດຕະຖະປາທະ ເວລານີ້ ພວກທ່ານນັ່ງສົນທະນາກັນດ້ວຍເລື້ອງອັນໃດ ເວົ້າເລື້ອງອັນໃດຄ້າງໄວ້ຢູ່ນໍ"

## ວ່າດ້ວຍອະພິສັນຍານິໂຣດ

[໔໑໑] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ ໂປດຕະຖະປາທະປະຣິພາຊົກຂາບທູນວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ເລື້ອງທີ່ພວກຂ້າພຣະອົງສົນທະນາກັນໃນວລານີ້ ຂໍງົດໄວ້ກ່ອນ ເລື້ອງນີ້ພຣະອົງຈະຊົງສະດັບເມື່ອໃດກໍໄດ້ໃນພາຍຫຼັງ ຂ້າແຕ່ ພຣະອົງຜູ້ຈະເລີນ ວັນກ່ອນ ໆ ພວກສະມະນະພາມຜູ້ມີລັດທິຕ່າງກັນ ໄດ້ມາຊຸມນຸມກັນໃນສາລານີ້ ໄດ້ຖົກຖຽງກັນ ຕັ້ງເລື້ອງຂຶ້ນສົນທະນາກັນ ເລື້ອງອະພິສັນຍານິໂຣດວ່າ "ທ່ານທັງຫຼາຍ ອະພິສັນຍານິໂຣດເປັນແນວໃດ?" ໃນບັນດາສະມະນະພາມເຫຼົ່ານັ້ນ ລາງພວກສະເໜີວ່າ "ສັນຍາຂອງຄົນບໍ່ມີເຫດ ບໍ່ມີປັດໄຈ ເກີດດັບໄປເອງ ເວລາທີ່ເກີດສັນຍາຄົນກໍມີຄວາມຈຳ ເມື່ອສັນຍາດັບຄົນກໍຈື່ຈຳອັນໃດບໍ່ໄດ້" ພວກໜຶ່ງສະເໜີເລື້ອງອະພິສັນຍານິໂຣດໄວ້ແນວນີ້ ສະມະນະພາມອີກຄົນໜຶ່ງສະເໜີວ່າ "ທ່ານທັງຫຼາຍເລື້ອງນັ້ນ ບໍ່ຖືກເພາະສັນຍາເປັນອັດຕາ (ຕົວຕົນ) ຂອງຄົນທີ່ວຽນເຂົ້າວຽນອອກ ເວລາທີ່ສັນຍາເປັນອັດຕາວຽນເຂົ້າຄົນກໍມີຄວາມຈື່ຈຳ ເມື່ອສັນຍາເປັນອັດຕາວຽນອອກຄົນກໍຈື່ຈຳອັນໃດບໍ່ໄດ້" ພວກໜຶ່ງ ໄດ້ສະເໜີຄວາມເຫັນເລື້ອງອະພິສັນຍານິໂຣດໄວ້ແນວນີ້

ສະມະນະພາມອີກຄົນໜຶ່ງໄດ້ສະເໜີວ່າ "ທ່ານທັງຫຼາຍ ເລື້ອງນັ້ນ ກໍບໍ່ຖືກເພາະມີສະມະນະພາມຜູ້ມີລິດຫຼາຍ ມີອານຸພາບຫຼາຍ ສາມາດບັນດານສັນຍາຂອງຄົນໃຫ້ເຂົ້າໄປ ຫຼື ໃຫ້ອອກກໍໄດ້ ເວລາທີ່ບັນດານໃຫ້ສັນຍາເຂົ້າໄປຄົນກໍມີຄວາມຈື່ຈຳ ເມື່ອບັນດານໃຫ້ສັນຍາອອກໄປຄົນກໍຈື່ຈຳອັນໃດບໍ່ໄດ້" ພວກໜຶ່ງສະເໜີເລື້ອງອະພິສັນຍານິໂຣດໄວ້ແນວນີ້

ສະມະນະພາມອີກຄົນໜຶ່ງ ສະເໜີວ່າ "ທ່ານທັງຫຼາຍ ເລື່ອງນັ້ນ ກໍບໍ່ຖືກເພາະມີເທວະດາຜູ້ມີລິດຫຼາຍ ມີອານຸພາບຫຼາຍ ສາມາດບັນດານສັນຍາຂອງຄົນໃຫ້ເຂົ້າໄປ ຫຼື ໃຫ້ອອກກໍໄດ້ ເວລາທີ່ບັນດານໃຫ້ສັນຍາເຂົ້າຄົນກໍມີຄວາມຈື່ຈໍາ ເມື່ອບັນດານໃຫ້ສັນຍາອອກໄປຄົນກໍຈື່ຈໍາອັນໃດບໍ່ໄດ້" ພວກໜຶ່ງສະເໜີເລື່ອງອະພິສັນຍານິໂຣດໄວ້ແບບນີ້

ຂ້າແຕ່ ພຣະອົງຜູ້ຈະເລີນ ຂ້າພຣະອົງລະລຶກເຖິງພຣະຜູ້ມີພຣະພາກເຈົ້າວ່າ "ເປັນຜູ້ສະຫຼາດໃນທໍາເຫຼົ່ານີ້ ຕ້ອງເປັນພຣະຜູ້ມີພຣະພາກເຈົ້າ ຜູ້ພຣະສຸຄົດເທົ່ານັ້ນ ຈຶ່ງສາມາດຕອບໃນບັນຫານີ້ໄດ້" ຂ້າແຕ່ ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າ ຊົງສະຫຼາດຮອບຮູ້ໃນເລື່ອງອະພິສັນຍານິໂຣດນີ້ ຂ້າແຕ່ ພຣະອົງຜູ້ຈະເລີນ ອະພິສັນຍານິໂຣດທີ່ແທ້ຈິງແລ້ວ ປະກົດເປັນຢ່າງໃດກັນແທ້ນໍ? ຂ້ານ້ອຍ"

## ວ່າດ້ວຍສັນຍາມີເຫດມີປັດໄຈເກີດດັບ

[໔໑໘] ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ໂປດຕະຖະປາທະ ບັນດາສະມະນະພາມເຫຼົ່ານັ້ນ ຄວາມເຫັນຂອງພວກທີ່ກ່າວວ່າ "ສັນຍາຂອງຄົນບໍ່ມີເຫດ ບໍ່ມີປັດໄຈເກີດດັບໄປເອງນັ້ນ" ເປັນຄໍາກ່າວທີ່ຜິດຕັ້ງແຕ່ໃນເບື້ອງຕົ້ນເພາະເຫດໃດ? ເພາະສັນຍາຂອງຄົນມີເຫດມີປັດໄຈເກີດກໍມີ ດັບກໍມີ ສັນຍາຢ່າງໜຶ່ງເກີດເພາະການສຶກສາກໍມີ ສັນຍາອີກຢ່າງໜຶ່ງດັບເພາະການສຶກສາກໍມີ

[໔໑໙] ການສຶກສາເປັນແບບໃດ? ໂປດຕະຖະປາທະ ຕະຖາຄົດອຸບັດຂຶ້ນມາໃນໂລກນີ້ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍຕົນເອງໂດຍທໍາ ຯລຯ (ເພິ່ງນໍາຂໍ້ຄວາມເຕັມໃນສາມັນຍະຜົນສູດມາໃສ່ໄວ້ບ່ອນນີ້) ພິກຂຸຊື່ວ່າ ສົມບູນດ້ວຍສິນເປັນແບບນີ້ ຯລຯ ເມື່ອພິກຂຸນັ້ນ ພິຈາລະນາເຫັນນິວອນ ໕ ທີ່ຕົນລະໄດ້ແລ້ວນັ້ນ ຍ່ອມເກີດຄວາມເບີກບານໃຈ ເມື່ອເບີກບານໃຈກໍຍ່ອມເກີດປີຕິ ເມື່ອໃຈມີປີຕິກາຍຍ່ອມສະຫງົບ ທ່ານມີກາຍສະຫງົບຍ່ອມໄດ້ຮັບຄວາມສຸກ ເມື່ອມີຄວາມສຸກຈິດຍ່ອມຕັ້ງໝັ້ນ ພິກຂຸນັ້ນສະຫງັດຈາກກາມ ແລະ ອະກຸສົນທໍາທັງຫຼາຍ ແລ້ວບັນລຸປະຖົມມະຊານທີ່ມີວິຕົກ ວິຈານ ປີຕິ ແລະ ສຸກອັນເກີດຈາກວິເວກຢູ່ ກາມສັນຍາ (ຄວາມຈື່ໄດ້ໝາຍຮູ້ໃນເລື່ອງກາມ) ຂອງທ່ານທີ່ມີຢູ່ກ່ອນຈະດັບໄປ ສັດຈະສັນຍາອັນລະອຽດມີປີຕິ ແລະ ສຸກອັນເກີດຈາກວິເວກ ຈະເກີດຂຶ້ນແທນສັນຍາຢ່າງໜຶ່ງ ເກີດເພາະການສຶກສາສັນຍາອີກຢ່າງໜຶ່ງດັບເພາະການສຶກສາແບບນີ້ ນີ້ຈັດເປັນການສຶກສາຢ່າງໜຶ່ງ

ຍັງມີອີກໂປດຕະຖະປາທະ ເພາະວິຕົກວິຈານສະຫງົບລະງັບດັບໄປ ພິກຂຸບັນລຸທຸຕິຍະຊານມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິ ແລະ ສຸກອັນເກີດຈາກສະມາທິຢູ່ ສັດຈະສັນຍາອັນລະອຽດມີປີຕິ ແລະ ສຸກອັນເກີດຈາກວິເວກທີ່

ມີຢູ່ກ່ອນຈະດັບໄປ ສັດຈະສັນຍາອັນລະອຽດ ມີປີຕິ ແລະ ສຸກອັນເກີດຈາກສະມາທິຈະເກີດຂຶ້ນແທນສັນຍາຢ່າງໜຶ່ງ ເກີດເພາະການສຶກສາສັນຍາອີກຢ່າງໜຶ່ງ ດັບເພາະການສຶກສາແນວນີ້ ນີ້ຈັດເປັນການສຶກສາຢ່າງໜຶ່ງ

ຍັງມີອີກໂປດຕະຖະປາທະ ເພາະປີຕິຈາງຄາຍໄປພິກຂຸມີອຸເປກຂາ ມີສະຕິສຳປະຊັນຍະສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍ ສັນລະເສີນວ່າ ຜູ້ມີອຸເປກຂາ ມີສະຕິຢູ່ເປັນສຸກ ສັດຈະສັນຍາອັນລະອຽດມີປີຕິ ແລະ ສຸກອັນເກີດຈາກສະມາທິທີ່ມີຢູ່ກ່ອນຈະດັບໄປ ສັດຈະສັນຍາອັນລະອຽດມີສຸກອັນເກີດຈາກອຸເປກຂາຈະເກີດຂຶ້ນມາແທນ ສັນຍາຢ່າງໜຶ່ງເກີດເພາະການສຶກສາສັນຍາອີກຢ່າງໜຶ່ງດັບ ເພາະການສຶກສາແນວນີ້ ນີ້ຈັດເປັນການສຶກສາຢ່າງໜຶ່ງ

ຍັງມີອີກໂປດຕະຖະປາທະ ເພາະລະສຸກ ແລະ ທຸກໄດ້ ເພາະໂສມະນັດ ແລະ ໂທມະນັດດັບໄປກ່ອນແລ້ວ ພິກຂຸບັນລຸຈະຕຸດຖະຊານທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດເພາະອຸເປກຂາຢູ່ ສັດຈະສັນຍາອັນລະອຽດ ມີສຸກອັນເກີດຈາກອຸເປກຂາທີ່ມີຢູ່ກ່ອນຈະດັບໄປ ສັດຈະສັນຍາອັນລະອຽດທີ່ບໍ່ມີທຸກ ບໍ່ມີສຸກຈະເກີດຂຶ້ນແທນ ສັນຍາຢ່າງໜຶ່ງເກີດເພາະການສຶກສາສັນຍາອີກຢ່າງໜຶ່ງດັບ ເພາະການສຶກສາແນວນີ້ ນີ້ຈັດເປັນການສຶກສາຢ່າງໜຶ່ງ

ຍັງມີອີກໂປດຕະຖະປາທະ ພິກຂຸບັນລຸອາກາສານັນຈາຍະຕະນະຊານ ໂດຍກຳນົດວ່າອາກາດຫາບ່ອນສິ້ນສຸດບໍ່ໄດ້ ເພາະຂ້າມພົ້ນຮູບສັນຍາດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາໂດຍປະການທັງປວງ ຮູບສັນຍາທີ່ມີຢູ່ກ່ອນຈະດັບໄປສັດຈະສັນຍາອັນລະອຽດປະກອບດ້ວຍອາກາສານັນຈາຍະຕະນະຊານ ຈະເກີດຂຶ້ນແທນພິກຂຸນັ້ນ ມີສັດຈະສັນຍາອັນລະອຽດປະກອບດ້ວຍອາກາສານັນຈາຍະຕະນະຊານ ໃນເວລານັ້ນ ສັນຍາຢ່າງໜຶ່ງເກີດເພາະການສຶກສາສັນຍາອີກຢ່າງໜຶ່ງດັບ ເພາະການສຶກສາແນວນີ້ ນີ້ຈັດເປັນການສຶກສາຢ່າງໜຶ່ງ

ຍັງມີອີກໂປດຕະຖະປາທະ ພິກຂຸລ່ວງອາກາສານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸວິນຍານັນຈາຍະຕະນະຊານໂດຍກຳນົດວ່າ ວິນຍານຫາບ່ອນສິ້ນສຸດບໍ່ໄດ້ ສັດຈະສັນຍາອັນລະອຽດປະກອບດ້ວຍອາກາສານັນຈາຍະຕະນະຊານ ທີ່ມີຢູ່ກ່ອນຈະດັບໄປ ສັດຈະສັນຍາອັນລະອຽດປະກອບດ້ວຍວິນຍານັນຈາຍະຕະນະຊານຈະເກີດຂຶ້ນແທນ ພິກຂຸນັ້ນ ມີສັດຈະສັນຍາອັນລະອຽດປະກອບດ້ວຍວິນຍານັນຈາຍະຕະນະຊານ ໃນເວລານັ້ນ ສັນຍາຢ່າງໜຶ່ງເກີດເພາະການສຶກສາສັນຍາອີກຢ່າງໜຶ່ງດັບເພາະການສຶກສາແນວນີ້ ນີ້ຈັດເປັນການສຶກສາຢ່າງໜຶ່ງ

ຍັງມີອີກໂປດຕະຖະປາທະ ພິກຂຸລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸອາກິນຈັນຍາຍະຕະນະຊານໂດຍກຳນົດວ່າ ບໍ່ມີອັນໃດເລີຍ ສັດຈະສັນຍາອັນລະອຽດປະກອບດ້ວຍວິນຍານັນຈາຍະຕະນະຊານທີ່ມີຢູ່ກ່ອນຈະດັບໄປ ສັດຈະສັນຍາອັນລະອຽດປະກອບ

ດ້ວຍອາກິນຈັນຍາຍະຕະນະຊານຈະເກີດຂຶ້ນແທນ ພິກຂຸນັ້ນ ມີສັດຈະສັນຍາອັນລະອຽດປະກອບດ້ວຍອາກິນຈັນຍາຍະຕະນະຊານ ໃນເວລານັ້ນ ສັນຍາຢ່າງໜຶ່ງເກີດເພາະການສຶກສາ ສັນຍາອີກຢ່າງໜຶ່ງດັບເພາະການສຶກສາແບບນີ້ ນີ້ຈັດເປັນການສຶກສາຢ່າງໜຶ່ງ

[໔໑໔] ໂປດຕະຖະປາທະ ພິກຂຸໃນທຳວິໄນນີ້ ທີ່ຍັງມີສະກະສັນຍາ ພິກຂຸອອກຈາກປະຖົມມະຊານ ເຂົ້າທຸຕິຍະຊານ ອອກຈາກທຸຕິຍະຊານ ເຂົ້າຕະຕິຍະຊານຈົນເຖິງອາກິນຈັນຍາຍະຕະນະຊານອັນເປັນທີ່ສຸດແຫ່ງສັນຍາໂດຍລຳດັບ ເມື່ອທ່ານຢູ່ໃນອາກິນຈັນຍາຍະຕະນະຊານອັນເປັນທີ່ສຸດແຫ່ງສັນຍາເກີດຄວາມຄິດຂຶ້ນມາແບບນີ້ວ່າ "ເມື່ອເຮົາຍັງຄິດຢູ່ບໍ່ດີເລີຍ ບໍ່ຄິດເສຍຈະດີກວ່າ ຖ້າເຮົາຍັງຄິດ ຍັງລະລຶກສັນຍາເຫຼົ່ານີ້ທີ່ເຮົາໄດ້ມາແລ້ວ ຈະດັບສັນຍາອື່ນທີ່ຫຍາບຈະເກີດຂຶ້ນແທນ ທາງທີ່ດີເຮົາບໍ່ຄວນຄິດ ແລະ ບໍ່ຄວນລະລຶກເຖິງສິ່ງໃດເລີຍ" ພິກຂຸນັ້ນ ຈຶ່ງບໍ່ຄິດບໍ່ລະລຶກຕໍ່ສິ່ງໃດເລຍ ເມື່ອທ່ານບໍ່ຄິດ ບໍ່ລະລຶກສັນຍານັ້ນ ຈຶ່ງດັບໄປ ສັນຍາອື່ນທີ່ຫຍາບກໍບໍ່ເກີດຂຶ້ນ ທ່ານຈຶ່ງບັນລຸນິໂຣທະ ໂປດຕະຖະປາທະການເຂົ້າເຖິງຄວາມດັບສັນຍາຂອງພິກຂຸຜູ້ມີຄວາມຮູ້ໂຕໂດຍລຳດັບ ຍ່ອມມີໄດ້ດ້ວຍອາການແບບນີ້

ໂປດຕະຖະປາທະ ທ່ານເຂົ້າໃຈເລື້ອງນັ້ນວ່າແບບໃດ ການເຂົ້າເຖິງຄວາມດັບສັນຍາຂອງພິກຂຸຜູ້ມີຄວາມຮູ້ສຶກໂຕໂດຍລຳດັບແບບນັ້ນ ທ່ານເຄີຍໄດ້ຍິນມາກ່ອນແດ່ຫຼືບໍ່?"

ໂປດຕະຖະປາທະຂາບທູນວ່າ "ບໍ່ເຄີຍໄດ້ຍິນມາກ່ອນເລີຍ ຂ້າແຕ່ ພຣະອົງຜູ້ຈະເລີນຂ້າພຣະອົງຫາກໍຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າ ຊົງສະແດງແລ້ວດ່ຽວນີ້ເອງວ່າ ພິກຂຸໃນພຣະທຳວິໄນນີ້ທີ່ຍັງມີສະກະສັນຍາ ທ່ານອອກຈາກປະຖົມມະຊານ ເຂົ້າທຸຕິຍະຊານ ອອກຈາກທຸຕິຍະຊານເຂົ້າຕະຕິຍະຊານ ຈົນເຖິງອາກິນຈັນຍາຍະຕະນະຊານ ອັນເປັນທີ່ສຸດແຫ່ງສັນຍາໂດຍລຳດັບ ເມື່ອທ່ານຢູ່ໃນອາກິນຈັນຍາຍະຕະນະຊານ ອັນເປັນທີ່ສຸດແຫ່ງສັນຍາເກີດຄວາມຄິດຂຶ້ນມາແບບນີ້ວ່າ "ເມື່ອເຮົາຍັງຄິດຢູ່ບໍ່ດີເລີຍ ບໍ່ຄິດເສຍຈະດີກວ່າ ຖ້າເຮົາຍັງຄິດ ຍັງລະລຶກສັນຍາເຫຼົ່ານີ້ ທີ່ເຮົາໄດ້ມາແລ້ວຈະດັບໄປ ສັນຍາອື່ນທີ່ຫຍາບຈະເກີດຂຶ້ນແທນ ທາງທີ່ດີເຮົາບໍ່ຄວນຄິດ ແລະ ບໍ່ຄວນລະລຶກ" ທ່ານຈຶ່ງບໍ່ຄິດບໍ່ລະລຶກ ເມື່ອທ່ານບໍ່ຄິດບໍ່ລະລຶກສັນຍານັ້ນຈຶ່ງດັບໄປສັນຍາອື່ນທີ່ຫຍາບກໍບໍ່ເກີດຂຶ້ນ ທ່ານຈຶ່ງບັນລຸນິໂຣທະການເຂົ້າເຖິງຄວາມດັບສັນຍາຂອງພິກຂຸຜູ້ມີຄວາມຮູ້ສຶກໂຕໂດຍລຳດັບ ຍ່ອມມີໄດ້ດ້ວຍອາການແບບນີ້

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ເປັນແບບນັ້ນແລ ໂປດຕະຖະປາທະ"

[໔໑໕] ໂປດຕະຖະປາທະຂາບທູນວ່າ "ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດອາກິນຈັນຍາຍະຕະນະຊານ ອັນເປັນທີ່ສຸດແຫ່ງສັນຍາໄວ້ຢ່າງດຽວ ຫຼື ບັນຍັດໄວ້ຫຼາຍຢ່າງນໍ? ຂ້າແຕ່ພຣະອົງຜູ້ຈະເລີນ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ໂປດຕະຖະປາທະ ເຮົາບັນຍັດອາກິນຈັນຍາຍະຕະນະຊານ ອັນເປັນທີ່ສຸດແຫ່ງສັນຍາໄວ້ຢ່າງດຽວກໍມີ ຫຼາຍຢ່າງກໍມີ"

ເຂົາທູນຖາມວ່າ "ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດອາກິນຈັນຍາຍະຕະນະຊານອັນເປັນທີ່ສຸດແຫ່ງສັນຍາໄວ້ຢ່າງດຽວກໍມີ ຫຼາຍຢ່າງກໍມີ ໂດຍວິທີໃດແດ່ນໍ? ຂ້າແດ່ ພຣະອົງຜູ້ຈະເລີນ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ໂປດຕະຖະປາທະ ເຮົາບັນຍັດອາກິນຈັນຍາຍະຕະນະຊານອັນເປັນທີ່ສຸດແຫ່ງສັນຍາໄວ້ ໂດຍວິທີທີ່ພຣະໂຍຄາວະຈອນຈະບັນລຸນິໂຣທະໄດ້ດັ່ງນັ້ນ ເຮົາຈຶ່ງບັນຍັດອາກິນຈັນຍາຍະຕະນະຊານ ອັນເປັນທີ່ສຸດແຫ່ງສັນຍາຢ່າງດຽວກໍມີຫຼາຍຢ່າງກໍມີ"

[໔໑໖] ເຂົາທູນຖາມວ່າ "ສັນຍາເກີດຂຶ້ນກ່ອນຍານ ຫຼືວ່າຍານເກີດຂຶ້ນກ່ອນສັນຍາ ຫຼືວ່າທັງສັນຍາ ແລະຍານເກີດຂຶ້ນພ້ອມກັນ ຂ້າແດ່ພຣະອົງໂດຍຜູ້ຈະເລີນ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ໂປດຕະຖະປາທະ ສັນຍາເກີດຂຶ້ນກ່ອນຍານເພາະມີສັນຍາເກີດຂຶ້ນ ຈຶ່ງມີຍານເກີດຂຶ້ນ ພິກຂຸຍ່ອມຮູ້ແນວນີ້ວ່າ "ເພາະສັນຍາເປັນປັດໄຈ ຍານຈຶ່ງເກີດຂຶ້ນແກ່ເຮົາ" ໂປດຕະຖະປາທະ ທ່ານເພິ່ງຮູ້ໂດຍປະຣິຍາຍນີ້ວ່າ ສັນຍາເກີດຂຶ້ນກ່ອນຍານ ເພາະມີສັນຍາເກີດຂຶ້ນຈຶ່ງມີຍານເກີດຂຶ້ນ

## ວ່າດ້ວຍສັນຍາກັບອັດຕາ

[໔໑໗] ໂປດຕະຖະປາທະ ປະຣິພາຊົກທູນຖາມວ່າ "ສັນຍາເປັນອັດຕາຂອງຄົນ ຫຼື ວ່າສັນຍາກັບອັດຕາເປັນຄົນລະຢ່າງກັນ ຂ້າແດ່ ພຣະອົງໂດຍຜູ້ຈະເລີນ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ໂປດຕະຖະປາທະ ທ່ານໝາຍເຖິງອັດຕາແນວໃດນໍ?"

ເຂົາຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງໝາຍເຖິງອັດຕາຫຍາບ ເຊິ່ງມີຮູບທີ່ປະກອບດ້ວຍມະຫາພູຕະຮູບ ໔ ບໍລິໂພກອາຫານເປັນຄຳເຂົ້າ ໂດຍຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ໂປດຕະຖະປາທະ ອັດຕາທີ່ທ່ານເວົ້າເຖິງນັ້ນ ເປັນອັດຕາຫຍາບ ເຊິ່ງມີຮູບທີ່ປະກອບດ້ວຍມະຫາພູຕະຮູບ ໔ ບໍລິໂພກອາຫານເປັນຄຳເຂົ້າ ເມື່ອເປັນແນວນີ້ ສັນຍາກັບອັດຕາກໍເປັນຄົນລະຢ່າງກັນ ຕາມຂໍ້ນີ້ ທ່ານເພິ່ງຮູ້ໂດຍປະຣິຍາຍວ່າ ສັນຍາກັບອັດຕາເປັນຄົນລະຢ່າງກັນ ອັດຕາຫຍາບ ເຊິ່ງມີຮູບທີ່ປະກອບດ້ວຍມະຫາພູຕະຮູບ ໔ ບໍລິໂພກອາຫານເປັນຄຳເຂົ້າ ນີ້ຈົງຍົກໄວ້ກ່ອນ ຖ້າສັນຍາຂອງຄົນທີ່ເວົ້າເຖິງນີ້ຢ່າງໜຶ່ງເກີດ ແລະ ອີກຢ່າງໜຶ່ງດັບ ທ່ານກໍເພິ່ງຮູ້ໂດຍປະຣິຍາຍນີ້ວ່າ ສັນຍາກັບອັດຕາເປັນຄົນລະຢ່າງກັນ"

[໔໑໗] ເຂົາຂາບທູນວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ຂ້າພຣະອົງໝາຍເຖິງອັດຕາທີ່ສຳເລັດດ້ວຍໃຈມີອະໄວຍະວະຄົບຖ້ວນ ມີອິນຊີບໍ່ບົກພ່ອງ ໂດຍຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໂປດຕະຖະປາທະ ອັດຕາທີ່ທ່ານເວົ້າເຖິງນັ້ນເປັນອັດຕາທີ່ສຳເລັດດ້ວຍໃຈ ມີອະໄວຍະວະຄົບຖ້ວນ ມີອິນຊີບໍ່ບົກພ່ອງ ເມື່ອເປັນແນວນີ້ ສັນຍາກັບອັດຕາກໍເປັນຄົນລະຢ່າງກັນ ຕາມຂໍ້ນີ້ ທ່ານກໍເພິ່ງຮູ້ໂດຍປະຣິຍາຍນີ້ວ່າ ສັນຍາກັບອັດຕາເປັນຄົນລະຢ່າງກັນ ອັດຕາທີ່ສຳເລັດດ້ວຍໃຈມີອະໄວຍະວະຄົບຖ້ວນ ມີອິນຊີບໍ່ບົກພ່ອງ ຈົ່ງຍົກໄວ້ກ່ອນ ຖ້າສັນຍາຂອງຄົນທີ່ເວົ້າເຖິງນີ້ຢ່າງໜຶ່ງເກີດ ແລະ ອີກຢ່າງໜຶ່ງດັບ ທ່ານກໍເພິ່ງຮູ້ໂດຍປະຣິຍາຍນີ້ວ່າ ສັນຍາກັບອັດຕາເປັນຄົນລະຢ່າງກັນ

[໔໑໘] ເຂົາຂາບທູນວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ຂ້າພຣະອົງໝາຍເຖິງອັດຕາທີ່ບໍ່ມີຮູບສຳເລັດດ້ວຍສັນຍາ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໂປດຕະຖະປາທະ ອັດຕາທີ່ທ່ານເວົ້າເຖິງນັ້ນເປັນອັດຕາທີ່ບໍ່ມີຮູບສຳເລັດດ້ວຍສັນຍາ ເມື່ອເປັນແນວນີ້ ສັນຍາກັບອັດຕາກໍເປັນຄົນລະຢ່າງກັນຕາມຂໍ້ນີ້ ທ່ານກໍເພິ່ງຮູ້ໂດຍປະຣິຍາຍນີ້ວ່າ ສັນຍາກັບອັດຕາເປັນຄົນລະຢ່າງກັນ ອັດຕາທີ່ບໍ່ມີຮູບສຳເລັດດ້ວຍສັນຍາຈົ່ງຍົກໄວ້ກ່ອນ ຖ້າສັນຍາຂອງຄົນທີ່ເວົ້າເຖິງນີ້ຢ່າງໜຶ່ງເກີດ ແລະ ອີກຢ່າງໜຶ່ງດັບ ທ່ານກໍເພິ່ງຮູ້ໂດຍປະຣິຍາຍນີ້ວ່າ ສັນຍາກັບອັດຕາເປັນຄົນລະຢ່າງກັນ"

[໔໒໐] ເຂົາທູນຖາມວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ຂ້າພຣະອົງອາດຮູ້ໄດ້ບໍ່ວ່າ ສັນຍາເປັນອັດຕາຂອງຄົນ ຫຼືວ່າ ສັນຍາກັບອັດຕາເປັນຄົນລະຢ່າງກັນ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ໂປດຕະຖະປາທະ ທ່ານມີທິດຖິແຕກຕ່າງກັນມີຄວາມຖືກໃຈແຕກຕ່າງກັນ ມີຄວາມພໍໃຈແຕກຕ່າງກັນ ມີຄວາມມຸ້ງໝາຍແຕກຕ່າງກັນ ມີອາຈານແຕກຕ່າງກັນ ຈຶ່ງເຂົ້າໃຈໄດ້ຍາກວ່າ ສັນຍາເປັນອັດຕາຂອງຄົນ ຫຼື ວ່າ ສັນຍາກັບອັດຕາເປັນຄົນລະຢ່າງກັນ"

ເຂົາທູນຖາມວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ຖ້າຂ້າພຣະອົງມີທິດຖິແຕກຕ່າງກັນ ມີຄວາມຖືກໃຈແຕກຕ່າງກັນ ມີຄວາມພໍໃຈແຕກຕ່າງກັນ ມີຄວາມມຸ້ງໝາຍແຕກຕ່າງກັນ ມີອາຈານແຕກຕ່າງກັນ ຈຶ່ງເຂົ້າໃຈໄດ້ຍາກວ່າ ສັນຍາເປັນອັດຕາຂອງຄົນ ຫຼື ວ່າສັນຍາກັບອັດຕາເປັນຄົນລະຢ່າງກັນ ຂ້າແຕ່ພຣະອົງຜູ້ຈະເລີນ ກໍໂລກທ່ຽງນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ ຈັ່ງຊັ້ນແມ່ນບໍ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ເລື້ອງນີ້ເຮົາບໍ່ຕອບ"

ເຂົາທູນຖາມອີກວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ໂລກບໍ່ທ່ຽງນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະຈັ່ງຊັ້ນແມ່ນບໍ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ເລື້ອງນີ້ເຮົາບໍ່ຕອບ"

ເຂົາທູນຖາມວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ໂລກມີທີ່ສຸດ ຯລຯ ໂລກບໍ່ມີທີ່ສຸດ ຊີວະກັບສະຣີຣະເປັນຢ່າງດຽວກັນ ຊີວະກັບສະຣີຣະເປັນຄົນລະຢ່າງກັນ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ແລະ ບໍ່ເກີດອີກ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ເທົ່ານັ້ນຈິງຢ່າງອື່ນເປັນໂມຄະຈັ່ງຊັ້ນແມ່ນບໍ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ເລື້ອງນີ້ເຮົາບໍ່ຕອບ"

ເຂົາທູນຖາມວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ເພາະເຫດໃດພຣະອົງຈຶ່ງບໍ່ຊົງຕອບ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ເພາະເລື້ອງນັ້ນ ບໍ່ມີປະໂຫຍດ ບໍ່ມີສາຣະ ບໍ່ແມ່ນຈຸດເລີ່ມຕົ້ນຂອງພົມມະຈັນ ບໍ່ເປັນໄປເພື່ອຄວາມເບື່ອໜ່າຍ ບໍ່ເປັນໄປເພື່ອຄາຍກຳໜັດຍິນດີ ບໍ່ເປັນໄປເພື່ອດັບ ບໍ່ເປັນໄປເພື່ອສະຫງົບລະງັບ ບໍ່ເປັນໄປເພື່ອຮູ້ຍິ່ງ ບໍ່ເປັນໄປເພື່ອຕັດສະຣູ້ ບໍ່ເປັນໄປເພື່ອນິບພານ ສະນັ້ນ ເຮົາຈຶ່ງບໍ່ຕອບ"

ເຂົາທູນຖາມວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ແລ້ວພຣະອົງປະສົງຈະຕອບເລື້ອງໃດ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ເຮົາຕອບເລື້ອງທຸກ ເລື້ອງທຸກຂະສະມຸທັຍ (ເຫດເກີດທຸກ) ເລື້ອງທຸກຂະນິໂຣທະ (ຄວາມດັບທຸກ) ເລື້ອງທຸກຂະນິໂຣທະຄາມິນີປະຕິປະທາ (ຂໍ້ປະຕິບັດເປັນທາງດຳເນີນໄປສູ່ຄວາມດັບທຸກ)

ເຂົາທູນຖາມວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ເພາະເຫດໃດພຣະອົງ ຈຶ່ງຊົງຕອບເລື້ອງນັ້ນ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ເພາະເລື້ອງນັ້ນ ມີປະໂຫຍດ ມີສາຣະເປັນຈຸດເລີ່ມຕົ້ນຂອງພົມມະຈັນ ເປັນໄປເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດຍິນດີ ເພື່ອດັບເພື່ອສະຫງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຣູ້ ເພື່ອນິບພານ ສະນັ້ນ ເຮົາຈຶ່ງຕອບ"

ເຂົາຂາບທູນວ່າ "ຂ້າແຕ່ ພຣະຜູ້ມີພຣະພາກເຈົ້າ ຂໍ້ນີ້ເປັນແນວນັ້ນເອງ ຂ້າແຕ່ ພຣະສຸຄົດເຈົ້າ ຂໍ້ນີ້ພຣະອົງຊົງປະສົງແນວນັ້ນ ຖ້າຈັ່ງຊັ້ນ ຂໍພຣະຜູ້ມີພຣະພາກເຈົ້າ ຈົ່ງຊົງກຳນົດເວລາທີ່ສົມຄວນໃນບັດນີ້ເຖີ້ນ ພຣະອົງຜູ້ຈະເລີນ"

ໃນທີ່ນັ້ນເອງ ພຣະຜູ້ມີພຣະພາກ ຊົງລຸກຂຶ້ນຈາກອາສະນະ ສະເດັດຈາກໄປແລ້ວ

[໔໘໑] ບໍ່ດົນຫຼາຍ ພວກປະຣິພາຊົກໄດ້ພາກັນຕັດຕໍ່ວ່າ ຕໍ່ຂານໂປດຕະຖະປາທະປະຣິພາຊົກດ້ວຍຄຳຫຍາບສຽບແທງດ້ວຍຄຳເວົ້າວ່າ "ທ່ານໂປດຕະຖະປາທະເປັນຄົນແນວນີ້ນີ່ເອງ ທ່ານໂປດຕະຖະປາທະພໍໃຈ ຍິນດີ ຊື່ນຊົມຄຳເວົ້າຂອງພຣະສະມະນະໂຄດົມທຸກ ໆ ຄຳ ວ່າ "ຂ້າແຕ່ ພຣະຜູ້ມີພຣະພາກເຈົ້າ ຂໍ້ນີ້ເປັນແນວນັ້ນ ຂ້າແຕ່ ພຣະສຸຄົດເຈົ້າ ຂໍ້ນີ້ເປັນແນວນັ້ນ" ແຕ່ພວກເຮົາກັບບໍ່ເຂົ້າໃຈຄວາມໝາຍ ທີ່ພຣະສະມະນະໂຄດົມຕັດ ແມ່ນແຕ່ໜ້ອຍໜຶ່ງເລີຍວ່າ ໂລກທ່ຽງ ຫຼື ໂລກບໍ່ທ່ຽງ ໂລກມີທີ່ສຸດ ຫຼື ໂລກບໍ່ມີທີ່ສຸດ ຊີວະກັບສະຣີຣະເປັນຢ່າງດຽວກັນ ຫຼື ຊີວະກັບສະຣີຣະເປັນຄົນລະຢ່າງກັນ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ຫຼື ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ແລະ ບໍ່ເກີດອີກ ຫຼື ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

ເມື່ອພວກປະຣິພາຊົກເວົ້າແນວນີ້ແລ້ວ ໂປດຕະຖະປາທະປະຣິພາຊົກ ໄດ້ບອກພວກເຂົາວ່າ "ທ່ານທັງຫຼາຍ ຂ້າພະເຈົ້າເອງກໍບໍ່ເຂົ້າໃຈ ຄວາມໝາຍທີ່ພຣະສະມະນະໂຄດົມຕັດໄວ້ແມ່ນແຕ່ໜ້ອຍໜຶ່ງເລຍ ວ່າ "ໂລກທ່ຽງ ຫຼື ໂລກບໍ່ທ່ຽງ ຯລຯ ຫຼື ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ" ແຕ່ວ່າພຣະສະມະນະໂຄດົມ ຊົງບັນຍັດແຕ່ຂໍ້ປະຕິບັດທີ່ເປັນປະໂຫຍດ ເປັນສັດຈະທຳ ເປັນທຳຖິຕິ ເປັນທຳນິຍາມໄວ້ເທົ່ານັ້ນ ແລ້ວເປັນຫຍັງ ວິນຍູຊົນຢ່າງພວກຂ້າພະເຈົ້າຈະບໍ່ພໍໃຈ ຍິນດີ ຊື່ນຊົມໃນສຸພາສິດຂອງພຣະສະມະນະໂຄດົມໂດຍເປັນຄຳສຸພາສິດນໍ"

## ເລື່ອງຈິດຕະຫັດຖີສາຣີບຸດແລະໂປດຕະຖະປາທະປະຣິພາຊົກ

[໔໘໔] ເມື່ອຜ່ານໄປ ໔-໕ ວັນ ຈິດຕະຫັດຖີສາຣີບຸດ ໑ ກັບໂປດຕະຖະປາທະ ປະຣິພາຊົກພາກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກ ຈິດຕະຫັດຖີສາຣີບຸດໄດ້ຂາບພຣະຜູ້ມີພຣະພາກເຈົ້າແລ້ວນັ່ງລົງໃນທີ່ສົມຄວນ ສ່ວນຝ່າຍໂປດຕະຖະປາທະປະຣິພາຊົກທັກທວາຍ ປາໄສກັບພຣະຜູ້ມີພຣະພາກເຈົ້າພໍຄຸ້ນເຄີຍກັນແລ້ວນັ່ງລົງໃນທີ່ສົມຄວນ ຂາບທູນວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນເມື່ອພຣະຜູ້ມີພຣະພາກເຈົ້າສະເດັດຈາກໄປບໍ່ໂດນ ພວກປະຣິພາຊົກໄດ້ຕໍ່ວ່າຕໍ່ຂານວ່າ ຂ້າພຣະອົງດ້ວຍຄຳເວົ້າສຽບແທງຜູ້ຂ້າວ່າ "ທ່ານໂປດຕະຖະປາທະເປັນຄົນແນວນີ້ນີ້ເອງ ທ່ານໂປດຕະຖະປາທະຍິນດີໃນຄຳເວົ້າຂອງພຣະສະມະນະໂຄດົມທຸກຄຳວ່າ ຂ້າແຕ່ ພຣະຜູ້ມີພຣະພາກເຈົ້າຂໍ້ນີ້ເປັນແນວນັ້ນ ຂ້າແຕ່ ພຣະສຸຄົດເຈົ້າຂໍ້ນີ້ເປັນແນວນັ້ນ ແຕ່ພວກເຮົາກັບບໍ່ເຂົ້າໃຈຄວາມໝາຍທີ່ພຣະສະມະນະໂຄດົມຕັດ ແມ່ນແຕ່ໜ້ອຍໜຶ່ງວ່າໂລກທ່ຽງ ຫຼື ໂລກບໍ່ທ່ຽງ ຯລຯ ຫຼື ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ" ເມື່ອພວກປະຣິພາຊົກກ່າວແນວນີ້ ຂ້າພຣະອົງໄດ້ບອກພວກເຂົາວ່າ "ທ່ານທັງຫຼາຍ ຂ້າພະເຈົ້າເອງກໍບໍ່ເຂົ້າໃຈຄວາມ

ໝາຍທີ່ພຣະສະມະນະໂຄດົມຕັດ ແມ່ນແຕ່ໜ້ອຍໜຶ່ງວ່າໂລກທ່ຽງ ຫຼື ໂລກບໍ່ທ່ຽງ ຯລຯ ຫຼື ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ" ແຕ່ວ່າ ພຣະສະມະນະໂຄດົມ ຊົງບັນຍັດຂໍ້ປະຕິບັດອັນເປັນປະໂຫຍດ ເປັນສັດຈະທຳ ເປັນທຳຖິຕິ ເປັນທຳນິຍາມໄວ້ ກໍເມື່ອຊົງບັນຍັດໄວ້ແບບນີ້ ເປັນຫຍັງ ວິນຍູຊົນຢ່າງຂ້າພະເຈົ້າຈະບໍ່ຍິນດີຊື່ນຊົມໃນສຸພາສິດຂອງພຣະສະມະນະໂຄດົມ ໂດຍເປັນຄຳສຸພາສິດອັນມີປະໂຫຍດແບບນັ້ນບໍ"

[໔໘໓] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໂປດຕະຖະປາທະປະຣິພາຊົກທັງໝົດເຫຼົ່ານັ້ນເປັນຄົນຕາບອດບໍ່ມີຈັກຂຸ ທ່າມກາງຊຸມນຸມຊົນນັ້ນມີແຕ່ທ່ານເທົ່ານັ້ນທີ່ມີຈັກຂຸທຳ ທີ່ເປັນເອກັງສິກະທຳ ເຮົາໄດ້ສະແດງ ແລະ ບັນຍັດໄວ້ແລ້ວ ທຳທີ່ເປັນອະເນກັງສິກະທຳ ເຮົາກໍໄດ້ສະແດງ ແລະ ບັນຍັດໄວ້ແລ້ວ ໂປດຕະຖະປາທະ ເຮົາສະແດງ ແລະ ບັນຍັດທຳເຫຼົ່າໃດໄວ້ວ່າ ເປັນອະເນກັງສິກະທຳ ຄື ທຳທີ່ວ່າໂລກທ່ຽງ ຫຼື ໂລກບໍ່ທ່ຽງ ໂລກມີທີ່ສຸດ ຫຼື ໂລກບໍ່ມີທີ່ສຸດ ຊີວະກັບສະຣີຣະເປັນຢ່າງດຽວກັນ ຫຼື ຊີວະກັບສະຣີຣະເປັນຄົນລະຢ່າງກັນ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ຫຼື ຫຼັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ແລະ ບໍ່ເກີດອີກ ຫຼື ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ເຮົາສະແດງ ແລະ ບັນຍັດທຳເຫຼົ່ານີ້ວ່າເປັນອະເນກັງສິກະທຳ ໂປດຕະຖະປາທະ ເພາະເຫດໃດ? ເຮົາຈຶ່ງສະແດງ ແລະ ບັນຍັດທຳເຫຼົ່ານີ້ວ່າ ເປັນອະເນກັງສິກະທຳ ຍ້ອນວ່າທຳເຫຼົ່ານີ້ບໍ່ມີປະໂຫຍດ ບໍ່ມີສາຣະ ບໍ່ແມ່ນຈຸດເລີ່ມຕົ້ນແຫ່ງພົມມະຈັນ ບໍ່ເປັນໄປເພື່ອຄວາມເບື່ອໜ່າຍ ບໍ່ເປັນໄປເພື່ອຄາຍກຳໜັດຍິນດີ ບໍ່ເປັນໄປເພື່ອດັບ ບໍ່ເປັນໄປເພື່ອສະຫງົບລະງັບ ບໍ່ເປັນໄປເພື່ອຮູ້ຍິ່ງ ບໍ່ເປັນໄປເພື່ອຕັດສະຣູ້ ບໍ່ເປັນໄປເພື່ອນິບພານ ສະນັ້ນ ເຮົາຈຶ່ງສະແດງ ແລະ ບັນຍັດທຳເຫຼົ່ານີ້ວ່າ ເປັນອະເນກັງສິກະທຳ"

[໔໘໔] ໂປດຕະຖະປາທະເຮົາສະແດງ ແລະ ບັນຍັດທຳເຫຼົ່າໃດວ່າ ເປັນເອກັງສິກະທຳ ຄື ຫົວຂໍ້ທຳວ່າດ້ວຍ ນີ້ທຸກ ນີ້ທຸກຂະສະມຸທັຍ (ເຫດເກີດທຸກ) ນີ້ທຸກຂະນິໂຣທະ (ຄວາມດັບທຸກ) ນີ້ທຸກຂະນິໂຣທະຄາມີນີປະຕິປະທາ (ຂໍ້ປະຕິບັດເຄື່ອງດຳເນີນໄປສູ່ຄວາມດັບທຸກ) ນີ້ແລ ເຮົາສະແດງແລະບັນຍັດທຳເຫຼົ່ານີ້ວ່າ ເປັນເອກັງສິກະທຳ

ໂປດຕະຖະປາທະ ເພາະເຫດໃດ? ເຮົາຈຶ່ງສະແດງ ແລະ ບັນຍັດທຳເຫຼົ່ານີ້ວ່າ ເປັນເອກັງສິກະທຳບໍ? ຍ້ອນວ່າ ທຳເຫຼົ່ານີ້ມີປະໂຫຍດ ມີສາຣະ ເປັນຈຸດເລີ່ມຕົ້ນແຫ່ງພົມມະຈັນ ເປັນໄປເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດຍິນດີ ເພື່ອດັບ ເພື່ອສະຫງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຣູ້ ເພື່ອນິບພານ ສະນັ້ນ ເຮົາຈຶ່ງສະແດງ ແລະ ບັນຍັດທຳເຫຼົ່ານີ້ວ່າ ເປັນເອກັງສິກະທຳ

[໔໘໕] ໂປດຕະຖະປາທະ ມີສະມະນະພາມຜູ້ມີວາທະ ມີທິດຖິແນວນີ້ວ່າ "ຫຼັງຈາກຕາຍ ແລ້ວອັດຕາມີສຸກຢ່າງດຽວປອດໄພ" ເຮົາເຂົ້າໄປຫາສະມະນະພາມເຫຼົ່ານັ້ນ ແລ້ວຖາມວ່າ "ທ່ານ ມີວາທະ ມີທິດຖິແນວນີ້ວ່າ ຫຼັງຈາກຕາຍແລ້ວ ອັດຕາມີສຸກຢ່າງດຽວ ປອດໄພແມ່ນແທ້ບໍ?"

ຖ້າສະມະນະພາມເຫຼົ່ານັ້ນ ຖືກຖາມແນວນີ້ ຍັງຢືນຢັນວ່າ "ຈິງ" ເຮົາຈະຖາມວ່າ "ກໍ ທ່ານຮູ້ທ່ານເຫັນໂລກທີ່ມີສຸກຢ່າງດຽວບໍ?" ເມື່ອຖືກຖາມແນວນີ້ພວກເຂົາຈະຕອບວ່າ "ບໍ່ຮູ້ບໍ່ເຫັນ"

ເຮົາຈະຖາມອີກວ່າ "ທ່ານຮູ້ອັດຕາທີ່ມີສຸກຢ່າງດຽວຕະຫຼອດ ໑ ວັນ ຕະຫຼອດ ໑ ຄືນ ຫຼື ຕະຫຼອດເຄິ່ງວັນ ຕະຫຼອດເຄິ່ງຄືນບໍ?" ເມື່ອຖືກຖາມແນວນີ້ ພວກເຂົາຈະຕອບວ່າ "ບໍ່ຮູ້"

ເຮົາຈະຖາມຕໍ່ໄປອີກວ່າ "ກໍທ່ານຮູ້ວ່າ ນີ້ເປັນທາງ ນີ້ເປັນຂໍ້ປະຕິບັດເພື່ອບັນລຸໂລກທີ່ມີ ແຕ່ສຸກຢ່າງດຽວຫຼື" ເມື່ອຖືກຖາມແນວນີ້ພວກເຂົາຈະຕອບວ່າ "ບໍ່ຮູ້"

ເຮົາຈະຖາມອີກວ່າ "ກໍທ່ານໄດ້ຍິນສຽງພວກເທວະດາ ຜູ້ເກີດໃນໂລກທີ່ມີສຸກຢ່າງດຽວ ເຊິ່ງເວົ້າຢູ່ວ່າ ທ່ານຜູ້ນິຣະທຸກ ທ່ານປະຕິບັດດີ ປະຕິບັດຖືກ ເພື່ອບັນລຸໂລກທີ່ມີສຸກຢ່າງດຽວ ເຖິງຂ້າພະເຈົ້າ ກໍປະຕິບັດແນວນີ້ ຈຶ່ງບັງເກີດໃນໂລກທີ່ມີສຸກຢ່າງດຽວບໍ?" ເມື່ອຖືກຖາມແນວນີ້ ພວກເຂົາຈະຕອບວ່າ "ບໍ່ໄດ້ຍິນ"

ໂປດຕະຖະປາທະ ທ່ານເຂົ້າໃຈເລື່ອງນັ້ນວ່າແນວໃດ? ເມື່ອເປັນແນວນີ້ ພາສິດຂອງສະ ມະນະພາມເຫຼົ່ານັ້ນ ຖືວ່າ ເລື່ອນລອຍບໍ່ແມ່ນບໍ?"

ໂປດຕະຖະປາທະຂາບທູນວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ເມື່ອເປັນແນວນີ້ ພາສິດຂອງ ສະມະນະພາມເຫຼົ່ານັ້ນ ຖືວ່າ ເລື່ອນລອຍແມ່ນແລ້ວ"

## ປຽບດ້ວຍຊາຍຫຼົງຮັກແມ່ຍິງງາມໃນຊົນນະບົດ

[໔໘໖] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໂປດຕະຖະປາທະ ປຽບຄື ຊາຍຄົນໜຶ່ງປາຣົບ ເຖິງຍິງສາວແນວນີ້ວ່າ "ເຮົາປາດຖະໜາ ຕ້ອງການຢາກໄດ້ແມ່ຍິງງາມໃນຊົນນະບົດຜູ້ນັ້ນ" ແລ້ວມີຄົນຖາມເຂົາວ່າ "ທ່ານ ເອີຍ ທ່ານຮູ້ຈັກແມ່ຍິງຄົນນັ້ນແລ້ວຫຼືບໍ່ວ່າ ມີຖານະເປັນແນວໃດ ແດ່ ເປັນນາງກະສັດ ນາງພາມມະນີ ນາງແພດ ຫຼື ນາງສູດ" ເມື່ອຖືກຖາມແນວນີ້ ເຂົາຕອບວ່າ "ບໍ່ຮູ້ຈັກເລີຍ" ແລ້ວຖືກຖາມຕໍ່ໄປອີກວ່າ "ທ່ານຮູ້ຈັກແມ່ຍິງຄົນນັ້ນແລ້ວຫຼືບໍ່ວ່າ ມີຊື່ ຕະກູນ ສູງ ຕ່ຳ ຜິວພັນ ສັນທັດດຳແຫຼ ຫຼື ຜິວເຫຼືອງ ຢູ່ໃນໝູ່ບ້ານນິຄົມ ຫຼື ເມືອງໃດ?" ເມື່ອຖືກຖາມແນວ ນີ້ກໍຕອບວ່າ "ຍັງບໍ່ຮູ້ຈັກ" ຖືກຖາມຕໍ່ໄປອີກວ່າ "ທ່ານປາດຖະໜາຕ້ອງການແມ່ຍິງທີ່ຍັງບໍ່ເຄີຍ ຮູ້ຈັກກັນ ບໍ່ເຄີຍເຫັນໜ້າກັນແນວນັ້ນບໍ?" ເມື່ອຖືກຖາມແນວນີ້ກໍຕອບຮັບວ່າ "ແມ່ນແລ້ວ"

ໂປດຕະຖະປາທະ ທ່ານເຂົ້າໃຈໃນເລື້ອງນີ້ວ່າແນວໃດ? ເມື່ອເປັນແນວນີ້ ຄຳເວົ້າຂອງຊາຍຜູ້ນັ້ນຖືວ່າເລື່ອນລອຍບໍ່ແມ່ນບໍ?"

ໂປດຕະຖະປາທະຂາບທູນວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ເມື່ອເປັນແນວນີ້ ຄຳເວົ້າຂອງຊາຍຜູ້ນັ້ນຖືວ່າ ເລື່ອນລອຍຢ່າງແນ່ນອນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໂປດຕະຖະປາທະ ແມ່ນສະມະນະພາມຜູ້ມີວາທະ ມີທິດຖິແນວນີ້ວ່າ "ຫຼັງຈາກຕາຍແລ້ວ ອັດຕາມີສຸກຢ່າງດຽວ ມີຄວາມປອດໄພ" ກໍເຊັ່ນກັນ ເຮົາເຂົ້າໄປຫາສະມະນະພາມເຫຼົ່ານັ້ນແລ້ວຖາມວ່າ "ທ່ານມີວາທະມີທິດຖິແນວນີ້ວ່າ ຫຼັງຈາກຕາຍແລ້ວ ອັດຕາມີສຸກຢ່າງດຽວ ມີຄວາມປອດໄພແມ່ນແທ້ບໍ?"

ຖ້າສະມະນະພາມເຫຼົ່ານັ້ນ ຖືກຖາມແນວນີ້ ຍັງຢືນຢັນວ່າ "ເປັນຈິງແນວນັ້ນ" ເຮົາຈະຖາມໄປວ່າ "ກໍທ່ານຮູ້ທ່ານເຫັນໂລກທີ່ມີສຸກຢ່າງດຽວແລ້ວບໍ?" ເມື່ອຖືກຖາມແນວນີ້ພວກເຂົາຈະຕອບວ່າ "ບໍ່ທັນຮູ້ບໍ່ທັນເຫັນຫຍັງເລີຍ"

ເຮົາຈະຖາມໄປອີກວ່າ "ທ່ານຮູ້ອັດຕາທີ່ເປັນສຸກຢ່າງດຽວຕະຫຼອດ ໑ ວັນຕະຫຼອດ ໑ ຄືນ ຫຼື ຕະຫຼອດເຄິ່ງວັນ ຕະຫຼອດເຄິ່ງຄືນແລ້ວບໍ?" ເມື່ອຖືກຖາມແນວນີ້ພວກເຂົາຈະຕອບວ່າ "ບໍ່ຮູ້ເລີຍ" ເຮົາຈະຖາມອີກວ່າ "ກໍແລ້ວທ່ານຮູ້ວ່ານີ້ເປັນທາງ ນີ້ເປັນຂໍ້ປະຕິບັດ ເພື່ອບັນລຸໂລກທີ່ມີສຸກຢ່າງດຽວແລ້ວບໍ?" ເມື່ອຖືກຖາມແນວນີ້ພວກເຂົາຈະຕອບວ່າ "ບໍ່ຮູ້"

ເຮົາຈະຖາມໄປອີກວ່າ "ກໍແລ້ວ ພວກທ່ານໄດ້ຍິນສຽງພວກເທວະດາ ຜູ້ເກີດໃນໂລກທີ່ມີແຕ່ສຸກຢ່າງດຽວ ເຊິ່ງກ່າວໄດ້ວ່າ ທ່ານຜູ້ນິຣະທຸກ ທ່ານປະຕິບັດດີ ປະຕິບັດຖືກ ເພື່ອການບັນລຸໂລກທີ່ມີແຕ່ສຸກຢ່າງດຽວ ເຖິງຂ້າພະເຈົ້າກໍປະຕິບັດແນວນີ້ ຈຶ່ງໄດ້ເກີດໃນໂລກທີ່ມີແຕ່ສຸກຢ່າງດຽວແລ້ວບໍ?" ເມື່ອຖືກຖາມຢູ່ແນວນີ້ ພວກເຂົາຈະຕອບວ່າ "ບໍ່ໄດ້ຍິນ"

ໂປດຕະຖະປາທະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ? ເມື່ອເປັນແນວນີ້ ພາສິດຂອງສະມະນະພາມເຫຼົ່ານັ້ນ ຖືວ່າເລື່ອນລອຍບໍ່ແມ່ນບໍ?

ໂປດຕະຖະປາທະຂາບທູນວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ເມື່ອເປັນແນວນີ້ ພາສິດຂອງສະມະນະພາມເຫຼົ່ານັ້ນ ຖືວ່າ ເລື່ອນລອຍຢ່າງແນ່ນອນ"

## ປຽບດ້ວຍຄົນສ້າງຂັ້ນໄດ

[໔໘໗] ພຣະຜູ້ມີພຣະພາກເຈົ້າ ຕັດວ່າ "ໂປດຕະຖະປາທະ ປຽບຄື ບຸຣຸດສ້າງຂັ້ນໄດໃນຫົນທາງໃຫຍ່ສີ່ແຍກເພື່ອຂຶ້ນຜາສາດອັນສູງ ເມື່ອມີຄົນມາຖາມເຂົາວ່າ "ທ່ານຈະສ້າງຂັ້ນໄດຂຶ້ນ

ຜາສາດນີ້ ທ່ານຮູ້ຈັກຜາສາດນີ້ແລ້ວບໍ?ບໍ່ວ່າ ຕັ້ງຢູ່ທາງທິດໃດ ທິດຕາເວັນອອກ ທິດໃຕ້ ທິດຕາເວັນຕົກ ຫຼື ທິດເໜືອ ມີຂະໜາດຄວາມກ້ວາງ ສູງ ຕ່ຳ ຫຼື ປານກາງຄັກແດ່ແລ້ວບໍ?"

ເມື່ອຖືກຖາມແນວນີ້ ເຂົາຈະຕອບວ່າ "ຍັງບໍ່ຮູ້" ຈະຖືກຖາມຕໍ່ໄປວ່າ "ທ່ານຈະສ້າງບັນໄດຂຶ້ນຜາສາດທີ່ຍັງບໍ່ຮູ້ຈັກ ບໍ່ເຄີຍເຫັນແນວນັ້ນແມ່ນບໍ?" ເມື່ອຖືກຖາມແນວນີ້ ເຂົາຈະຕອບວ່າ "ແມ່ນແລ້ວ" ໂປດຕະຖະປາທະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ? ເມື່ອເປັນແນວນີ້ ຄຳເວົ້າຂອງບຸຣຸດນັ້ນຖືວ່າເລື່ອນລອຍບໍ່ແມ່ນບໍ?"

ໂປດຕະຖະປາທະຂາບທູນວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ເມື່ອເປັນແນວນີ້ ຄຳເວົ້າຂອງບຸຣຸດນັ້ນຖືວ່າ ເລື່ອນລອຍຢ່າງແນ່ນອນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໂປດຕະຖະປາທະ ແມ່ນສະມະນະພາມຜູ້ມີວາທະ ມີທິດຖິແນວນີ້ວ່າ "ຫຼັງຈາກຕາຍແລ້ວ ອັດຕາມີສຸກຢ່າງດຽວປອດໄພ" ກໍເຊັ່ນກັນ ເຮົາເຂົ້າໄປຫາສະມະນະພາມເຫຼົ່ານັ້ນແລ້ວຖາມວ່າ "ທ່ານມີວາທະ ມີທິດຖິແນວນີ້ວ່າ ຫຼັງຈາກຕາຍແລ້ວອັດຕາມີສຸກຢ່າງດຽວປອດໄພແມ່ນແທ້ບໍ" ຖ້າສະມະນະພາມເຫຼົ່ານັ້ນ ຖືກຖາມແນວນີ້ ຍັງຢືນຢັນວ່າ "ແມ່ນແທ້ຢ່າງນັ້ນ" ເຮົາຈະຖາມວ່າ "ກໍທ່ານຮູ້ ທ່ານເຫັນໂລກທີ່ມີສຸກຢ່າງດຽວນັ້ນແລ້ວບໍ?" ເມື່ອຖືກຖາມແນວນີ້ພວກເຂົາຈະຕອບວ່າ "ບໍ່ທັນຮູ້ບໍ່ທັນເຫັນເລີຍ"

ເຮົາຈະຖາມໄປອີກວ່າ "ທ່ານຮູ້ອັດຕາທີ່ມີແຕ່ສຸກຢ່າງດຽວ ຕະຫຼອດເວລາ ໑ ວັນຕະຫຼອດເວລາ ໑ ຄືນ ຫຼື ຕະຫຼອດເຄິ່ງວັນ ຕະຫຼອດເຄິ່ງຄືນແລ້ວບໍ?" ເມື່ອຖືກຖາມແນວນີ້ ພວກເຂົາຈະຕອບວ່າ "ບໍ່ຮູ້ເລີຍ" ເຮົາຈະຖາມວ່າ "ກໍທ່ານຮູ້ວ່າ ນີ້ເປັນທາງ ນີ້ເປັນຂໍ້ປະຕິບັດ ເພື່ອບັນລຸໂລກທີ່ມີແຕ່ສຸກຢ່າງດຽວແມ່ນບໍ?" ເມື່ອຖືກຖາມແນວນີ້ ພວກເຂົາຈະຕອບວ່າ "ບໍ່ຮູ້ຫຍັງເລີຍ" ເຮົາຈະຖາມໄປອີກວ່າ "ກໍພວກທ່ານເປັນຜູ້ໄດ້ຍິນສຽງພວກເທວະດາ ຜູ້ເກີດໃນໂລກທີ່ມີແຕ່ສຸກຢ່າງດຽວ ສາມາດກ່າວໄດ້ວ່າທ່ານຜູ້ນິຣະທຸກ ທ່ານປະຕິບັດດີ ປະຕິບັດຖືກ ເພື່ອບັນລຸໂລກທີ່ມີແຕ່ສຸກຢ່າງດຽວ ເຖິງຂ້າພະເຈົ້າກໍປະຕິບັດແນວນີ້ ຈຶ່ງໄດ້ເກີດໃນໂລກທີ່ມີແຕ່ສຸກຢ່າງດຽວແນວນັ້ນແມ່ນບໍ?" ເມື່ອຖືກຖາມແນວນີ້ພວກເຂົາຈະຕອບວ່າ "ບໍ່ໄດ້ຍິນ"

ໂປດຕະຖະປາທະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ? ເມື່ອເປັນແນວນີ້ ພາສິດຂອງສະມະນະພາມເຫຼົ່ານັ້ນ ຖືວ່າເລື່ອນລອຍບໍ່ແມ່ນບໍ?"

ໂປດຕະຖະປາທະຂາບທູນວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ເມື່ອເປັນແນວນີ້ພາສິດຂອງສະມະ ນະພາມເຫຼົ່ານັ້ນ ຖືວ່າ ເລື່ອນລອຍຢ່າງແນ່ນອນ"

## ການໄດ້ອັດຕະພາບ ໓ ຢ່າງ

[໔໘໗] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໂປດຕະຖະປາທະ ການໄດ້ອັດຕະພາບມີ ໓ ຢ່າງຄືການໄດ້ອັດຕະພາບທີ່ຫຍາບ ການໄດ້ອັດຕະພາບທີ່ສໍາເລັດດ້ວຍໃຈ ແລະ ການໄດ້ອັດຕະພາບທີ່ບໍ່ມີຮູບ ໂປດຕະຖະປາທະ ການໄດ້ອັດຕະພາບທີ່ຫຍາບເປັນແນວໃດ? ຄື ອັດຕະພາບທີ່ມີຮູບປະກອບດ້ວຍມະຫາພູຕະຮູບ ໔ ບໍລິໂພກອາຫານເປັນຄໍາເຂົ້າ ເປັນກ້ອນ ໆ ນີ້ຈັດເປັນການໄດ້ອັດຕະພາບທີ່ຫຍາບ ການໄດ້ອັດຕະພາບທີ່ສໍາເລັດດ້ວຍໃຈເປັນແນວໃດ? ຄື ອັດຕະພາບທີ່ມີຮູບສໍາເລັດດ້ວຍໃຈ ມີອະໄວຍະວະຄົບຖ້ວນ ມີອິນຊີບໍ່ບົກພ່ອງ ນີ້ຈັດເປັນການໄດ້ອັດຕະພາບທີ່ສໍາເລັດດ້ວຍໃຈ ການໄດ້ອັດຕະພາບທີ່ບໍ່ມີຮູບເປັນແນວໃດ ຄື ອັດຕະພາບທີ່ບໍ່ມີຮູບສໍາເລັດດ້ວຍສັນຍາ ນີ້ຈັດເປັນການໄດ້ອັດຕະພາບທີ່ບໍ່ມີຮູບ"

[໔໘໙] ໂປດຕະຖະປາທະ ເຮົາສະແດງທໍາ ເພື່ອລະການໄດ້ອັດຕະພາບທີ່ຫຍາບວ່າ "ພວກທ່ານປະຕິບັດຕາມນີ້ແລ້ວ ກໍຈະລະສັງກິເລສິກະທໍາໄດ້ ແລະ ໂວທານິຍະທໍາ ຈະເພີ່ມພູນຍິ່ງຂຶ້ນ ຈະເຮັດໃຫ້ແຈ້ງຄວາມບໍລິບູນ ຄວາມໄພບູນແຫ່ງປັນຍາ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປະຈຸບັນ" ບາງເທື່ອທ່ານມີຄວາມເຫັນແນວນີ້ວ່າ "ເຮົາພໍຈະລະສັງກິເລສິກະທໍາໄດ້ ແລະ ໂວທານິຍະທໍາຈະເພີ່ມພູນຍິ່ງຂຶ້ນ ບຸກຄົນຈະເຮັດໃຫ້ແຈ້ງບໍລິບູນ ຄວາມໄພບູນແຫ່ງປັນຍາດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປະຈຸບັນ ແຕ່ວ່າ ຈະມີຄວາມເປັນຢູ່ລໍາບາກ" ກໍເລື້ອງນີ້ທ່ານບໍ່ເພິ່ງເຫັນແນວນັ້ນ ແທ້ຈິງ ທ່ານຈະລະສັງກິເລສິກະທໍາໄດ້ ແລະ ໂວທານິຍະທໍາຈະເພີ່ມພູນຍິ່ງຂຶ້ນ ບຸກຄົນຈະເຮັດໃຫ້ແຈ້ງຄວາມບໍລິບູນ ຄວາມໄພບູນແຫ່ງປັນຍາດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປະຈຸບັນ ທັງຈະມີຄວາມປາໂມດ ປີຕິ ປັດສັດທິ ສະຕິ ສໍາປະຊັນຍາ ແລະ ຢູ່ເປັນສຸກ"

[໔໙໐] ໂປດຕະຖະປາທະ ເຮົາສະແດງທໍາເພື່ອລະການໄດ້ອັດຕະພາບທີ່ສໍາເລັດດ້ວຍໃຈວ່າ "ພວກທ່ານປະຕິບັດຕາມນີ້ແລ້ວ ກໍຈະລະສັງກິເລສິກະທໍາໄດ້ ແລະ ໂວທານິຍະທໍາຈະເພີ່ມພູນຍິ່ງຂຶ້ນ ຈະເຮັດໃຫ້ແຈ້ງຄວາມບໍລິບູນ ຄວາມໄພບູນແຫ່ງປັນຍາ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປະຈຸບັນ" ບາງຄາວທ່ານມີຄວາມເຫັນແນວນີ້ວ່າ "ເຮົາພໍຈະລະສັງກິເລສິກະທໍາໄດ້ ແລະ ໂວທານິຍະທໍາຈະເພີ່ມພູນຍິ່ງຂຶ້ນ ບຸກຄົນຈະເຮັດໃຫ້ແຈ້ງຄວາມບໍລິບູນຄວາມໄພບູນແຫ່ງປັນຍາດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປະຈຸບັນ ແຕ່ວ່າ ຈະມີຄວາມເປັນຢູ່ລໍາບາກ" ກໍເລື້ອງນີ້ ທ່ານບໍ່ເພິ່ງເຫັນແນວນັ້ນ ແທ້ຈິງທ່ານຈະລະສັງກິເລສິກະທໍາໄດ້ ແລະ ໂວທານິຍະທໍາຈະເພີ່ມພູນຍິ່ງຂຶ້ນ ບຸກຄົນຈະເຮັດໃຫ້ແຈ້ງຄວາມບໍລິບູນ ຄວາມໄພບູນແຫ່ງປັນຍາ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປະຈຸບັນ ທັງຈະມີຄວາມປາໂມດ ປີຕິ ປັດສັດທິ ສະຕິ ສໍາປະຊັນຍະ ແລະ ຢູ່ເປັນສຸກ"

[໔໓໑] ໂປດຕະຖະປາທະ ເຮົາສະແດງທຳເພື່ອລະການໄດ້ອັດຕະພາບທີ່ບໍ່ມີຮູບວ່າ "ພວກທ່ານປະຕິບັດຕາມນີ້ແລ້ວ ກໍຈະລະສັງກິເລສິກະທຳໄດ້ ແລະ ໂວທານິຍະທຳຈະເພີ່ມພູນຍິ່ງຂື້ນຈະເຮັດໃຫ້ແຈ້ງຄວາມບໍລິບູນ ຄວາມໄພບູນແຫ່ງປັນຍາ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປະຈຸບັນ" ฯลฯ ແລະຈະມີຄວາມປາໂມດ ປີຕິ ປັດສັດ ທິສະຕິສຳປະຊັນຍະ ແລະຢູ່ເປັນສຸກ"

[໔໓໒] ໂປດຕະຖະປາທະ ຫາກຄົນເຫຼົ່າອື່ນ ຈະຖາມເຮົາແນວນີ້ວ່າ "ຜູ້ມີອາຍຸ ອັນໃດ? ຄືການໄດ້ອັດຕະພາບທີ່ຫຍາບ ເຊິ່ງທ່ານສະແດງທຳເພື່ອໃຫ້ລະເສຍວ່າ ພວກທ່ານປະຕິບັດຕາມນັ້ນແລ້ວ ກໍຈະລະສັງກິເລສິກະທຳໄດ້ ແລະ ໂວທານິຍະທຳຈະເພີ່ມພູນຍິ່ງຂື້ນ ຈະເຮັດໃຫ້ແຈ້ງຄວາມບໍລິບູນ ຄວາມໄພບູນແຫ່ງປັນຍາ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປະຈຸບັນ" ເມື່ອຖືກຖາມແນວນີ້ເຮົາຈະຕອບວ່າ "ຜູ້ມີອາຍຸ ນີ້ແລ ຈັດເປັນການໄດ້ອັດຕະພາບທີ່ຫຍາບ ເຊິ່ງເຮົາສະແດງທຳເພື່ອໃຫ້ລະເສຍວ່າ ພວກທ່ານປະຕິບັດຕາມນັ້ນແລ້ວ ກໍຈະລະສັງກິເລສິກະທຳໄດ້ ແລະ ໂວທານິຍະທຳຈະເພີ່ມພູນຍິ່ງຂື້ນ ຈະເຮັດໃຫ້ແຈ້ງຄວາມບໍລິບູນຄວາມໄພບູນແຫ່ງປັນຍາ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປະຈຸບັນ"

[໔໓໓] ໂປດຕະຖະປາທະ ຫາກຄົນເຫຼົ່າອື່ນ ຈະຖາມເຮົາແນວນີ້ວ່າ "ຜູ້ມີອາຍຸ ອັນໃດ? ຄືການໄດ້ອັດຕະພາບທີ່ສຳເລັດດ້ວຍໃຈ ເຊິ່ງທ່ານສະແດງທຳເພື່ອໃຫ້ລະເສຍວ່າ ພວກທ່ານປະຕິບັດຕາມນັ້ນແລ້ວ ກໍຈະລະສັງກິເລສິກະທຳໄດ້ ແລະ ໂວທານິຍະທຳຈະເພີ່ມພູນຍິ່ງຂື້ນ ຈະເຮັດໃຫ້ແຈ້ງຄວາມບໍລິບູນ ຄວາມໄພບູນແຫ່ງປັນຍາດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປະຈຸບັນ" ເມື່ອຖືກຖາມແນວນີ້ເຮົາຈະຕອບວ່າ "ຜູ້ມີອາຍຸ ນີ້ແລ ຈັດເປັນການໄດ້ອັດຕະພາບທີ່ສຳເລັດດ້ວຍໃຈ ເຊິ່ງເຮົາສະແດງທຳເພື່ອໃຫ້ລະເສຍວ່າ ฯลฯ ເຂົ້າເຖິງຢູ່ໃນປະຈຸບັນ"

[໔໓໔] ໂປດຕະຖະປາທະ ຫາກຄົນເຫຼົ່າອື່ນ ຈະຖາມເຮົາແນວນີ້ວ່າ "ຜູ້ມີອາຍຸ ອັນໃດ? ຄືການໄດ້ອັດຕະພາບທີ່ບໍ່ມີຮູບ ເຊິ່ງທ່ານສະແດງທຳເພື່ອໃຫ້ລະເສຍວ່າ ພວກທ່ານປະຕິບັດຕາມນັ້ນແລ້ວ ກໍຈະລະສັງກິເລສິກະທຳໄດ້ ແລະ ໂວທານິຍະທຳຈະເພີ່ມພູນຍິ່ງຂື້ນ ຈະເຮັດໃຫ້ແຈ້ງຄວາມບໍລິບູນ ຄວາມໄພບູນແຫ່ງປັນຍາ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປະຈຸບັນ" ເມື່ອຖືກຖາມແນວນີ້ເຮົາຈະຕອບວ່າ "ຜູ້ມີອາຍຸ ນີ້ແລ ຈັດເປັນການໄດ້ອັດຕະພາບທີ່ບໍ່ມີຮູບ ເຊິ່ງເຮົາສະແດງທຳເພື່ອໃຫ້ລະເສຍວ່າ ฯลฯ ເຂົ້າເຖິງຢູ່ໃນປະຈຸບັນ"

ໂປດຕະຖະປາທະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ? ເມື່ອເປັນແນວນີ້ ຄຳເວົ້ານັ້ນຖືວ່າບໍ່ເລື່ອນລອຍບໍ່ແມ່ນບໍ?"

ໂປດຕະຖະປາທະຂາບທູນວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ເມື່ອເປັນແນວນີ້ຄຳເວົ້ານັ້ນຖືວ່າບໍ່ເລື່ອນລອຍຢ່າງແນ່ນອນ"

# ປຽບດ້ວຍຄົນສ້າງຂັ້ນໄດ

[໔໓໕] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໂປດຕະຖະປາທະປຽບ ຄື ບຸຣຸດຈະສ້າງຂັ້ນໄດ ເພື່ອໃຊ້ຍ່າງຂຶ້ນຜາສາດໃຕ້ຜາສາດນັ້ນ ເມື່ອມີຄົນມາຖາມເຂົາຜູ້ສ້າງວ່າ "ທ່ານຈະສ້າງຂັ້ນໄດໃຊ້ຍ່າງຂຶ້ນຜາສາດນີ້ ທ່ານຮູ້ຈັກຜາສາດນີ້ແລ້ວບໍ? ວ່າ ຕັ້ງຢູ່ທາງທິດໃດ ທິດຕາເວັນອອກ ທິດໃຕ້ ທິດຕາເວັນຕົກ ຫຼື ທິດເໜືອ ມີຂະນາດສູງຕ່ຳ ຫຼື ປານກາງແລ້ວຫຼືບໍ່?" ຖ້າເຂົາຕອບວ່າ "ນີ້ແລຄືຜາສາດທີ່ເຮົາກຳລັງສ້າງຂັ້ນໄດ ໃຊ້ເພື່ອຍ່າງຂຶ້ນປະສາດນີ້ເອງ ແມ່ນແລ້ວ ເຮົາຮູ້ຈັກປະສາດນີ້ດີ"

ໂປດຕະຖະປາທະ ທ່ານເຂົ້າໃຈໃນເລື້ອງນີ້ວ່າແນວໃດ? ເມື່ອເປັນແນວນີ້ ຄຳເວົ້າຂອງບຸຣຸດຜູ້ນັ້ນຖືວ່າ ບໍ່ເລື່ອນລອຍບໍ່ແມ່ນບໍ?"

ໂປດຕະຖະປາທະຂາບທູນວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ເມື່ອເປັນແນວນີ້ ຄຳເວົ້າຂອງບຸຣຸດນັ້ນຖືວ່າ ບໍ່ເລື່ອນລອຍຢ່າງແນ່ນອນ"

[໔໓໖] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ເຊັ່ນດຽວກັນ ໂປດຕະຖະປາທະ ຫາກຄົນເຫຼົ່າອື່ນຈະຖາມເຮົາແນວນີ້ວ່າ "ຜູ້ມີອາຍຸ ອັນໃດ? ຄືການໄດ້ອັດຕະພາບທີ່ຫຍາບ ໆລໆ ອັນໃດຄືການໄດ້ອັດຕະ ພາບທີ່ສຳເລັດດ້ວຍໃຈ ໆລໆ ອັນໃດ? ຄືການໄດ້ອັດຕະພາບທີ່ບໍ່ມີຮູບ ເຊິ່ງທ່ານສະແດງທຳເພື່ອໃຫ້ລະເສຍວ່າ ພວກທ່ານປະຕິບັດຕາມນັ້ນແລ້ວ ກໍຈະລະສັງກິເລສິກະທຳໄດ້ ແລະ ໂວທານິຍະທຳຈະເພີ່ມພູນຍິ່ງຂຶ້ນ ຈະເຮັດໃຫ້ແຈ້ງຄວາມບໍລິບູນ ຄວາມໄພບູນແຫ່ງປັນຍາ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປະຈຸບັນ" ເມື່ອຖືກຖາມແນວນີ້ ເຮົາຈະຕອບວ່າ" ໆລໆ ຜູ້ມີອາຍຸນີ້ແລ ຈັດເປັນການໄດ້ອັດຕະພາບທີ່ບໍ່ມີຮູບ ເຊິ່ງເຮົາສະແດງທຳເພື່ອໃຫ້ລະເສຍວ່າ ພວກທ່ານປະຕິບັດຕາມນັ້ນແລ້ວ ກໍຈະລະສັງກິເລສິກະທຳໄດ້ ແລະ ໂວທານິຍະທຳຈະເພີ່ມພູນຍິ່ງຂຶ້ນ ຈະເຮັດໃຫ້ແຈ້ງຄວາມບໍລິບູນ ຄວາມໄພບູນແຫ່ງປັນຍາ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປະຈຸບັນ"

ໂປດຕະຖະປາທະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ ເມື່ອເປັນແນວນີ້ ຄຳເວົ້ານັ້ນຖືວ່າບໍ່ເລື່ອນລອຍບໍ່ແມ່ນບໍ?"

ໂປດຕະຖະປາທະ ຂາບທູນວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ເມື່ອເປັນແນວນີ້ຄຳເວົ້ານັ້ນຖືວ່າບໍ່ເລື່ອນລອຍຢ່າງແນ່ນອນ"

[໔໓໗] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ ຈິດຕະຫັດຖິສາຣີບຸດໄດ້ຂາບທູນວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ໃນເວລາທີ່ມີການໄດ້ອັດຕະພາບທີ່ຫຍາບ ການໄດ້ອັດຕະພາບທີ່ສຳເລັດດ້ວຍໃຈ ແລະ ການໄດ້ອັດຕະພາບທີ່ບໍ່ມີຮູບກໍວ່າງປ່າວໄປ (ເປັນໂມຄະ) ມີແຕ່ການໄດ້ອັດຕະ

ພາບທີ່ຫຍາບເປັນເລື້ອງຈິງຈັ່ງຊັ້ນບໍ? ໃນເວລາທີ່ມີການໄດ້ອັດຕະພາບທີ່ສຳເລັດດ້ວຍໃຈ ການໄດ້ອັດຕະພາບທີ່ຫຍາບ ແລະ ການໄດ້ອັດຕະພາບທີ່ບໍ່ມີຮູບກໍຫາຍໄປ ມີແຕ່ການໄດ້ອັດຕະພາບທີ່ສຳເລັດດ້ວຍໃຈເປັນເລື້ອງຈິງຈັ່ງຊັ້ນບໍ? ໃນເວລາທີ່ມີການໄດ້ອັດຕະພາບທີ່ບໍ່ມີຮູບ ການໄດ້ອັດຕະພາບທີ່ຫຍາບ ແລະການໄດ້ອັດຕະພາບທີ່ສຳເລັດດ້ວຍໃຈກໍວ່າງປ່າວໄປ ມີແຕ່ການໄດ້ອັດຕະພາບທີ່ບໍ່ມີຮູບເປັນເລື້ອງຈິງຈັ່ງຊັ້ນບໍ?"

ພຣະຜູ້ມີພຣະພາກເຈົ້າ ຕັດວ່າ "ຈິດຕະ ໃນເວລາທີ່ມີການໄດ້ອັດຕະພາບທີ່ຫຍາບກໍບໍ່ນັບວ່າມີ ການໄດ້ອັດຕະພາບທີ່ສຳເລັດດ້ວຍໃຈ ແລະ ການໄດ້ອັດຕະພາບທີ່ບໍ່ມີຮູບ ມີພຽງການໄດ້ອັດຕະພາບທີ່ຫຍາບເທົ່ານັ້ນ ໃນເວລາທີ່ມີການໄດ້ອັດຕະພາບທີ່ສຳເລັດດ້ວຍໃຈ ກໍບໍ່ນັບວ່າມີການໄດ້ອັດຕະພາບທີ່ຫຍາບ ແລະ ການໄດ້ອັດຕະພາບທີ່ບໍ່ມີຮູບ ມີພຽງການໄດ້ອັດຕະພາບທີ່ສຳເລັດດ້ວຍໃຈເທົ່ານັ້ນ ໃນເວລາທີ່ມີການໄດ້ອັດຕະພາບທີ່ບໍ່ມີຮູບ ກໍບໍ່ນັບວ່າມີການໄດ້ອັດຕະພາບທີ່ຫຍາບ ແລະການອັດຕະພາບທີ່ສຳເລັດດ້ວຍໃຈ ມີພຽງການໄດ້ອັດຕະພາບທີ່ບໍ່ມີຮູບເທົ່ານັ້ນ"

[໔໖໗] ຈິດຕະ ຖ້າຄົນ ຈະຖາມທ່ານວ່າ "ໃນອະດີດຕະການ ທ່ານໄດ້ມີແລ້ວບໍ່ແມ່ນວ່າບໍ່ມີໃນອະນະຄົດຕະການທ່ານຈະມີບໍ່ແມ່ນວ່າບໍ່ມີ ເວລານີ້ທ່ານມີຢູ່ບໍ່ແມ່ນວ່າບໍ່ມີຢູ່ ຈັ່ງຊັ້ນບໍ?" ເມື່ອຖືກຖາມແນວນີ້ທ່ານຈະຕອບວ່າແນວໃດ?"

ຈິດຕະຫັດຖີສາຣີບຸດຂາບທູນວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ຖ້າຄົນຈະຖາມຂ້າພຣະອົງວ່າ "ໃນອະດີດຕະການ ฯລฯ ຈັ່ງຊັ້ນບໍ?" ເມື່ອຖືກຖາມແນວນີ້ ຂ້າພຣະອົງກໍຈະຕອບວ່າ "ໃນອະດີດຕະການ ເຮົາໄດ້ມີແລ້ວບໍ່ແມ່ນວ່າບໍ່ມີ ໃນອະນະຄົດຕະການເຮົາຈັກມີ ບໍ່ແມ່ນວ່າຈັກບໍ່ມີ ເວລານີ້ເຮົາມີຢູ່ບໍ່ແມ່ນວ່າບໍ່ມີຢູ່" ເມື່ອຖືກຖາມແນວນີ້ ຂ້າພຣະອົງກໍຈະຕອບແນວນີ້ແລ ໂດຍຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ຈິດຕະ ຖ້າຄົນຈະຖາມທ່ານວ່າ "ທ່ານມີການໄດ້ອັດຕະພາບທີ່ເປັນອະດີດການ ໄດ້ອັດຕະພາບແນວນັ້ນເປັນເລື້ອງຈິງ ການໄດ້ອັດຕະພາບທີ່ເປັນອະນາຄົດ ແລະ ການໄດ້ອັດຕະພາບທີ່ເປັນປະຈຸບັນກໍຫາຍໄປ ທ່ານຈັກມີການໄດ້ອັດຕະພາບທີ່ເປັນອະນາຄົດ ການໄດ້ອັດຕະພາບແນວນັ້ນເປັນເລື້ອງຈິງ ການໄດ້ອັດຕະພາບທີ່ເປັນອະດີດ ແລະ ການໄດ້ອັດຕະພາບທີ່ເປັນປະຈຸບັນກໍຫາຍໄປ ທ່ານກຳລັງໄດ້ອັດຕະພາບທີ່ເປັນປະຈຸບັນ ການໄດ້ອັດຕະພາບແນວນັ້ນເປັນເລື້ອງຈິງ ການໄດ້ອັດຕະພາບທີ່ເປັນອະດີດ ແລະການໄດ້ອັດຕະພາບທີ່ເປັນອະນາຄົດກໍວ່າງປ່າວໄປຈັ່ງຊັ້ນບໍ?" ເມື່ອຖືກຖາມແນວນີ້ ທ່ານຈະຕອບວ່າແນວໃດ?"

ຈິດຕະຫັດຖີສາຣີບຸດ ຂາບທູນວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ຖ້າຄົນຈະຖາມຂ້າພຣະອົງວ່າ "ທ່ານມີການໄດ້ອັດຕະພາບທີ່ເປັນອະດີດ ຯລຯ ຈັ່ງຊັ້ນບໍ?" ເມື່ອຖືກຖາມແບບນີ້ ຂ້າພຣະອົງກໍຈະຕອບວ່າ "ເຮົາມີການໄດ້ອັດຕະພາບທີ່ເປັນອະດີດ ການໄດ້ອັດຕະພາບແນວນັ້ນເປັນເລື້ອງຈິງ ໃນສະໄໝນັ້ນ ການໄດ້ອັດຕະພາບທີ່ເປັນອະນາຄົດ ແລະ ການໄດ້ອັດຕະພາບທີ່ເປັນປະຈຸບັນກໍວ່າງປ່າວໄປ ເຮົາຈັກມີການໄດ້ອັດຕະພາບທີ່ເປັນອະນາຄົດຕະການໄດ້ອັດຕະພາບແນວນັ້ນເປັນເລື້ອງຈິງ ໃນສະໄໝນັ້ນການໄດ້ອັດຕະພາບທີ່ເປັນອະດີດ ແລະການໄດ້ອັດຕະພາບທີ່ເປັນປະຈຸບັນກໍວ່າງຫາຍໄປ ເຮົາກຳລັງໄດ້ອັດຕະພາບທີ່ເປັນປະຈຸບັນ ໃນເວລານີ້ການໄດ້ອັດຕະພາບແນວນັ້ນເປັນເລື້ອງຈິງ ການໄດ້ອັດຕະພາບທີ່ເປັນອະດີດ ແລະການໄດ້ອັດຕະພາບທີ່ເປັນອະນາຄົດກໍວ່າງປ່າວໄປ" ເມື່ອຖືກຖາມແນວນີ້ຂ້າພຣະອົງກໍຈະຕອບແນວນີ້ແລ ໂດຍຂ້ານ້ອຍ"

[໔໙] ພຣະຜູ້ມີພຣະພາກ ຕັດວ່າ "ເປັນແນວນັ້ນແລ ຈິດຕະໃນເວລາທີ່ມີການໄດ້ອັດຕະພາບທີ່ຫຍາບກໍບໍ່ນັບວ່າມີ ການໄດ້ອັດຕະພາບທີ່ສຳເລັດດ້ວຍໃຈ ແລະ ການໄດ້ອັດຕະພາບທີ່ບໍ່ມີຮູບມີພຽງການໄດ້ອັດຕະພາບທີ່ຫຍາບເທົ່ານັ້ນ ໃນເວລາທີ່ມີການໄດ້ອັດຕະພາບທີ່ສຳເລັດດ້ວຍໃຈ ຯລຯ ໃນເວລາທີ່ມີການໄດ້ອັດຕະພາບທີ່ບໍ່ມີຮູບກໍບໍ່ນັບວ່າມີ ການໄດ້ອັດຕະພາບທີ່ຫຍາບ ແລະ ການໄດ້ອັດຕະພາບທີ່ສຳເລັດດ້ວຍໃຈ ມີພຽງການໄດ້ອັດຕະພາບທີ່ບໍ່ມີຮູບເທົ່ານັ້ນ"

[໔໐] ຈິດຕະ ປຽບຄື ນົມສົດມາຈາກແມ່ງົວ ນົມສົ້ມມາຈາກນົມສົດ ເນີຍຂົ້ນມາຈາກນົມສົ້ມ ເນີຍໃສມາຈາກເນີຍຂົ້ນ ຫົວເນີຍໃສມາຈາກເນີຍໃສ ໃນເວລາທີ່ຍັງເປັນນົມສົດກໍບໍ່ນັບວ່າເປັນນົມສົ້ມ ບໍ່ນັບວ່າເປັນເນີຍຂົ້ນ ບໍ່ນັບວ່າເປັນເນີຍໃສ ບໍ່ນັບວ່າເປັນຫົວເນີຍໃສ ຍັງເປັນນົມສົດເທົ່ານັ້ນ ໃນເວລາທີ່ເປັນນົມສົ້ມ ຯລຯ ໃນເວລາທີ່ເປັນເນີຍຂົ້ນ ຯລຯ ໃນເວລາທີ່ເປັນເນີຍໃສ ຯລຯ ໃນເວລາທີ່ເປັນຫົວເນີຍໃສ ບໍ່ນັບວ່າເປັນນົມສົດ ບໍ່ນັບວ່າເປັນນົມສົ້ມ ບໍ່ນັບວ່າເປັນເນີຍຂົ້ນ ບໍ່ນັບວ່າເປັນເນີຍໃສ ຍັງເປັນຫົວເນີຍໃສເທົ່ານັ້ນ ສັນໃດ ຈິດຕະ ເລື້ອງນີ້ກໍສັນນັ້ນ ໃນເວລາທີ່ມີການໄດ້ອັດຕະພາບທີ່ຫຍາບກໍບໍ່ນັບວ່າມີ ການໄດ້ອັດຕະພາບທີ່ສຳເລັດດ້ວຍໃຈ ແລະການໄດ້ອັດຕະພາບທີ່ມີຮູບ ມີພຽງການໄດ້ອັດຕະພາບຫຍາບເທົ່ານັ້ນ ໃນເວລາທີ່ມີການໄດ້ອັດຕະພາບທີ່ສຳເລັດດ້ວຍໃຈ ຯລຯ ໃນເວລາທີ່ມີການໄດ້ອັດຕະພາບທີ່ບໍ່ມີຮູບກໍບໍ່ນັບວ່າມີການໄດ້ອັດຕະພາບຫຍາບ ແລະ ການໄດ້ອັດຕະພາບທີ່ສຳເລັດດ້ວຍໃຈ ມີພຽງການໄດ້ອັດຕະພາບທີ່ບໍ່ມີຮູບເທົ່ານັ້ນ

ຈິດຕະ ເຫຼົ່ານີ້ແລ ເປັນໂລກະສະມັນຍາ (ຊື່ທີ່ຊາວໂລກໃຊ້ຮຽກ) ເປັນໂລກະນິຣຸດຕິ (ພາສາຂອງຊາວໂລກ) ເປັນໂລກະໂວຫານ (ໂວຫານຂອງຊາວໂລກ) ເປັນໂລກບັນຍັດ (ບັນຍັດຂອງຊາວໂລກ) ເຊິ່ງຕະຖາຄົດກໍໃຊ້ຢູ່ແຕ່ບໍ່ຍຶດຖື

[໔໔໑] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ ໂປດຕະຖະປາທະ ປະຣິພາຊົກໄດ້ຂາບທູນວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ພາສິດຂອງພຣະຜູ້ມີພຣະພາກເຈົ້າຊັດແຈ້ງມ່ວນຫຼາຍ ຂ້າແຕ່ ພຣະອົງຜູ້ຈະເລີນ ພາສິດຂອງພຣະຜູ້ມີພຣະພາກເຈົ້າຊັດແຈ້ງມ່ວນຫຼາຍ ພຣະຜູ້ມີພຣະພາກເຈົ້າ ຊົງປະກາດທຳຊັດແຈ້ງໂດຍປະການຕ່າງ ໆ ປຽບຄື ບຸກຄົນຫງາຍຂອງທີ່ງ້ວມຢູ່ ເປີດຂອງທີ່ປິດ ບອກທາງແກ່ຜູ້ຫຼົງທາງ ຫຼື ເຍືອງໄຟໃນທີ່ມືດໂດຍຕັ້ງໃຈວ່າ ຄົນມີຕາດີຈັກແນມເຫັນທາງໄດ້ ຂ້າພຣະອົງນີ້ ຂໍເຖິງພຣະຜູ້ມີພຣະພາກເຈົ້າ ພ້ອມທັງພຣະທຳ ແລະ ພຣະສົງເປັນສະຣະນະ ຂໍພຣະຜູ້ມີພຣະພາກຈົ່ງຊົງຈື່ ຂ້າພຣະອົງວ່າ ເປັນອຸປາສົກ ຜູ້ຖືສະຣະນະນັບຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ"

## ຈິດຕະຫັດຖີສາຣີບຸດທູນຂໍອຸປະສົມບົດ

[໔໔໘] ຝ່າຍຈິດຕະຫັດຖີສາຣີບຸດຂາບທູນວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ພາສິດຂອງພຣະຜູ້ມີພຣະພາກເຈົ້າ ຊັດແຈ້ງມ່ວນຫຼາຍ ຂ້າແຕ່ ພຣະອົງຜູ້ຈະເລີນ ພາສິດຂອງພຣະຜູ້ມີພຣະພາກເຈົ້າຊັດແຈ້ງມ່ວນຫຼາຍ ພຣະຜູ້ມີພຣະພາກເຈົ້າ ຊົງປະກາດທຳຊັດແຈ້ງໂດຍປະການຕ່າງ ໆ ປຽບຄື ບຸກຄົນຫງາຍຂອງທີ່ງ້ວມຢູ່ ເປີດຂອງທີ່ປິດ ບອກທາງແກ່ຜູ້ຫຼົງທາງ ຫຼື ເຍືອງໄຟໃນທີ່ມືດໂດຍຕັ້ງໃຈວ່າ ຄົນມີຕາດີຈັກແນມເຫັນຮູບໄດ້ ຂ້າພຣະອົງນີ້ ຂໍເຖິງພຣະຜູ້ມີພຣະພາກເຈົ້າພ້ອມທັງພຣະທຳ ແລະ ພຣະສົງເປັນສະຣະນະ ຂ້າແຕ່ ພຣະອົງຜູ້ຈະເລີນ ຂ້າພຣະອົງເພິ່ງໄດ້ບັນພະຊາ ເພິ່ງໄດ້ອຸປະສົມບົດໃນສຳນັກຂອງພຣະຜູ້ມີພຣະພາກນີ້ດ້ວຍເຖີ້ນ"

[໔໔໙] ຈິດຕະຫັດຖີ ສາຣີບຸດໄດ້ບັນພະຊາອຸປະສົມບົດ ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າແລ້ວແລ ເມື່ອທ່ານຫັດຖີສາຣີບຸດໄດ້ບັນພະຊາອຸປະສົມບົດແລ້ວ ບໍ່ດົນໄດ້ຫຼີກໄປຢູ່ຜູ້ດຽວບໍ່ປະໝາດ ມີຄວາມພຽນ ມຸ້ງຕໍ່ພຣະນິບພານຢູ່ບໍ່ດົນ ກໍເຮັດໃຫ້ແຈ້ງທີ່ສຸດແຫ່ງພົມມະຈັນອັນຍອດຢ້ຽມ ທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນໄປບວດເປັນບັນພະຊິດໂດຍຊອບ ຕ້ອງການດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປະຈຸບັນ ມີປັນຍາຮູ້ຊັດແຈ້ງດ້ວຍຕົນເອງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ"

ຈຶ່ງເປັນອັນວ່າ ທ່ານພຣະຫັດຖີສາຣີບຸດໄດ້ເປັນພຣະອະຣະຫັນອົງໜຶ່ງ ໃນບັນດາພຣະອະຣະຫັນທັງຫຼາຍ ດ້ວຍອາການຢ່າງນີ້ແລ

**ໂປດຕະຖະປາທະສູດທີ ໙ ຈົບ**

# ໑໐. ສຸພະສູດ

## ວ່າດ້ວຍສຸພະມານົບ

## ເລື້ອງມານົບຊື່ສຸພະ

[໔໔໔] ຂ້າພະເຈົ້າໄດ້ສະດັບມາແບບນີ້

ສະໄໝໜຶ່ງ ເມື່ອພຣະຜູ້ມີພຣະພາກເຈົ້າ ສະເດັດດັບຂັນທະປະຣີນິບພານໄປໄດ້ບໍ່ດົນ ທ່ານພຣະອານົນທີ່ພຳນັກຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດເມືອງສາວັດຖີ ສຸພະມານົບໂຕເທຍຍະບຸດ ມີວຽກຈຳເປັນຕ້ອງໄດ້ພຳນັກຢູ່ໃນເມືອງສາວັດຖີໃນເວລານັ້ນ

[໔໔໕] ຄັ້ງນັ້ນ ສຸພະມານົບ ໂຕເທຍຍະບຸດຮຽກມານົບຄົນໜຶ່ງມາສັ່ງວ່າ "ມານີ້ກ່ອນ ດູຮາ ຊາຍໜຸ່ມ ທ່ານຈົ່ງເຂົ້າໄປຫາພຣະສະມະນະຊື່ອານົນ ແລ້ວຮຽນຖາມພຣະສະມະນະຜູ້ຊື່ອານົນເຖິງສຸກຂະພາບ ຄວາມມີໂຣຄາພະຍາດໜ້ອຍ ຄວາມສະບາຍດີ ມີພະລານາໄມສົມບູນ ຢູ່ສຳລານຕາມຄຳຂອງເຮົາວ່າ ສຸພະມານົບໂຕເທຍຍະບຸດ ຖາມຮອດທ່ານພຣະອານົນ ເຖິງສຸກຂະພາບ ຄວາມມີໂຣຄາພະຍາດໜ້ອຍ ຄວາມສະບາຍດີ ມີພະລານາໄມສົມບູນ ຢູ່ສຳລານ ແລະ ທ່ານຈົ່ງຮຽນວ່າ ຂໍທ່ານພຣະອານົນ ໂຜດອະນຸເຄາະສະລະເວລາເຂົ້າໄປຢ້ຽມຢາມສຸພະມານົບໂຕເທຍຍະບຸດແດ່"

[໔໔໖] ມານົບນັ້ນຮັບຄຳຂອງສຸພະມານົບໂຕເທຍຍະບຸດແລ້ວ ເຂົ້າໄປຫາທ່ານພຣະອານົນສົນທະນາກັນພໍຄຸ້ນເຄີຍດີແລ້ວ ຈຶ່ງນັ່ງລົງໃນທີ່ສົມຄວນແລ້ວກ່າວວ່າ "ສຸພະມານົບໂຕເທຍຍະບຸດຖາມຮອດທ່ານພຣະອານົນ ເຖິງສຸກຂະພາບ ຄວາມມີໂຣຄາພາດໜ້ອຍ ຄວາມສະບາຍມີພະລານາໄມສົມບູນ ຢູ່ສຳລານ ແລະ ສັ່ງມາວ່າ ຂໍທ່ານພຣະອານົນ ໂຜດອະນຸເຄາະສະລະເວລາເຂົ້າໄປຢ້ຽມຢາມສຸພະມານົບໂຕເທຍຍະບຸດແດ່"

[໔໔໗] ເມື່ອມານົບຜູ້ນັ້ນເວົ້າແບບນີ້ ຕໍ່ທ່ານພຣະອານົນ ໆ ຕອບວ່າ "ເວລານີ້ບໍ່ເໝາະສົມ ມື້ນີ້ອາດຕະມາດື່ມຢາຖ່າຍເຂົ້າໄປແລ້ວ ເອົາໄວ້ມື້ອື່ນ ເມື່ອມີເວລາອາດຕະມາຈະເຂົ້າໄປຢ້ຽມຢາມທ່ານສຸພະມານົບໂຕເທຍຍະບຸດ"

ມານົບຜູ້ນັ້ນ ຮັບຄຳຂອງທ່ານພຣະອານົນ ແລ້ວລຸກຈາກບ່ອນນັ່ງກັບໄປຫາສຸພະມານົບໂຕເທຍຍະບຸດກ່າວຮຽນວ່າ "ຂ້າພະເຈົ້າໄດ້ບອກທ່ານພຣະອານົນ ຕາມຄຳຂອງທ່ານແລ້ວວ່າ

"ສຸພະມານົບ ໆລໆ ໄປຢ້ຽມສຸພະມານົບໂຕເທຍຍະບຸດແດ່" ເມື່ອຂ້າພະເຈົ້າເວົ້າແນວນີ້ ທ່ານພຣະອານົນຕອບວ່າ "ວັນນີ້ບໍ່ເໝາະສົມ ໆລໆ ເມື່ອມີເວລາອາດຕະມາຈະເຂົ້າໄປຢ້ຽມຢາມ" ຂ້າພະເຈົ້າໄດ້ດຳເນີນກຽມການທີ່ທ່ານພຣະອານົນຈະສະລະເວລາມາສົນໃນມື້ອື່ນນີ້ ດ້ວຍເຫດດັ່ງວ່າມານີ້ແລ ທ່ານ"

[໔໔໗] ເມື່ອລ່ວງຣາຕີນັ້ນໄປເຊົ້າແຈ້ງມາຮອດ ທ່ານພຣະອານົນຄອງອັນຕະຣະວາສົກຖືບາດ ແລະຈີວອນ ມີພຣະເຈຕະກະເປັນປັດສາສະມະນະ ຜູ້ນຳພາເຂົ້າໄປສູ່ນິເວດຂອງສຸພະມານົບໂຕເທຍຍະບຸດແລ້ວນັ່ງລົງເທິງອາສະນະທີ່ເຂົາປູໄວ້ໃຫ້

ສຸພະມານົບໂຕເທຍຍະບຸດເຂົ້າໄປຫາທ່ານພຣະອານົນ ທັກທວາຍກັນພໍຄຸ້ນເຄີຍດີແລ້ວນັ່ງລົງໃນທີ່ສົມຄວນຂອງຕົນແລ້ວຖາມວ່າ "ທ່ານອານົນ ເປັນພຣະອຸປັດຖາກຢູ່ເຝົ້າໃກ້ຊິດເບື້ອງພຣະຍຸຄົນລະບາດຂອງທ່ານພຣະໂຄດົມມາດົນແລ້ວ ທ່ານອານົນຄົງຈະຮູ້ຈັກທຳທີ່ທ່ານພຣະໂຄດົມຕັດສັນລະເສີນ ແລະຊົງໃຫ້ປະຊາຊົນສະມາທານປະພຶດ ຕັ້ງຢູ່ໃນທຳນັ້ນ ທ່ານອານົນທຳເຫຼົ່າໃດນໍ? ທີ່ທ່ານພຣະໂຄດົມຕັດສັນລະເສີນ ແລະ ຊົງແນະນຳໃຫ້ປະຊາຊົນສະມາທານປະພຶດຕັ້ງຢູ່"

[໔໔໘] ທ່ານພຣະອານົນຕອບວ່າ "ມານົບ ພຣະຜູ້ມີພຣະພາກເຈົ້າຕັດສັນລະເສີນ ແລະຊົງໃຫ້ປະຊາຊົນສະມາທານ ປະພຶດຢູ່ໃນຂັນ ໓ ນີ້ ຂັນ ໓ ນັ້ນມີອັນໃດແດ່ຄື ອະຣິຍະສີນຂັນ ອະຣິຍະສະມາທິຂັນ ແລະ ອະຣິຍະປັນຍາຂັນ ພຣະຜູ້ມີພຣະພາກເຈົ້າຕັດສັນລະເສີນ ແລະ ຊົງແນະນຳໃຫ້ປະຊາຊົນສະມາທານປະພຶດຢູ່ໃນຂັນ ໓ ນີ້ແລ

## ສີນຂັນ

[໔໕໐] ສຸພະມານົບຖາມວ່າ "ອະຣິຍະສີນຂັນ ທີ່ທ່ານພຣະໂຄດົມຕັດສັນລະເສີນ ແລະຊົງໃຫ້ປະຊາຊົນສະມາທານປະພຶດຢູ່ ເປັນແນວໃດທ່ານອານົນ?"

ທ່ານພຣະອານົນຕອບວ່າ "ມານົບ ພຣະຕະຖາຄົດສະເດັດອຸບັດຂຶ້ນມາໃນໂລກນີ້ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຊອບ ພຽບພ້ອມດ້ວຍວິຊຊາ ແລະ ຈະຣະນະ ໆລໆ ພຣະອົງຊົງຮູ້ແຈ້ງໂລກນີ້ ພ້ອມທັງເທວະໂລກ ມານໂລກ ໆລໆ ຊົງປະກາດພົມມະຈັນພ້ອມທັງອັດຖະ ແລະພະຍັນຊະນະ ບໍລິສຸດບໍລິບູນຄົບຖ້ວນ ຄະຫະບໍດີ ບຸດຄະຫະບໍດີ ຫຼືອະນຸຊົນລຸ້ນຫຼັງ (ຄົນຜູ້ເກີດພາຍຫຼັງ) ໃນຕະກູນໃດຕະກູນໜຶ່ງ ເມື່ອໄດ້ສະດັບທຳນັ້ນແລ້ວ ເກີດສັດທາໃນພຣະຕະຖາຄົດ ເມື່ອມີສັດທາຍ່ອມຄິດວ່າ "ການຢູ່ຄອງເຮືອນເປັນເລື້ອງໜ້າອຶດອັດຄັບແຄບ ເປັນທີ່ມາແຫ່ງທຸລີຄວາມເສົ້າໝອງ ການບວດເປັນທາງໂລ້ງປອດໂປ່ງ ການທີ່ຜູ້ຢູ່ຄອງເຮືອນຈະປະພຶດພົມມະຈັນ ເຮັດໃຫ້ບໍລິສຸດບໍລິບູນຄືກັບສັງທີ່ເຂົາເຈົ້າຂັດໃຫ້ຂາວດີແລ້ວນັ້ນ ເຮັດ

ບໍ່ໄດ້ງ່າຍ ທາງທີ່ດີ ເຮົາຄວນແຖຜົມ ແລະໜວດນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນໄປບວດເປັນບັນພະຊິດຈັກດີກວ່າ" ຕໍ່ມາເຂົາປະລະຖິ້ມກອງໂພຄະສົມບັດນ້ອຍໃຫຍ່ ແລະ ວົງຍາດມິດທັງຫຼາຍ ແຖຜົມ ແລະ ໜວດ ນຸ່ງຫົ່ມຜ້າກາສາວະພັດອອກຈາກເຮືອນໄປບວດເປັນບັນພະຊິດ ເມື່ອບວດແລ້ວແບບນີ້ ເປັນຜູ້ສັງລວມດ້ວຍການສັງວອນໃນພຣະປາຕິໂມກ ພຽບພ້ອມດ້ວຍມາລະຍາດ ແລະ ໂຄຈອນ (ການທ່ຽວໄປມາ) ເຫັນໄພໃນໂທດແມ່ນພຽງແຕ່ເລັກໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດ ປະກອບດ້ວຍກາຍະກຳ ແລະ ວະຈີກຳອັນເປັນກຸສົນ ມີອາຊີວະບໍລິສຸດສົມບູນດ້ວຍສິນ ຄຸ້ມຄອງທະວານໃນອິນຊີທັງຫຼາຍ ສົມບູນດ້ວຍສະຕິສຳປະຊັນຍະ ແລະເປັນຜູ້ສັນໂດດຢູ່

[໔໕໑] ພິກຂຸຊື່ວ່າສົມບູນດ້ວຍສິນເປັນແນວໃດ? ຄື ພິກຂຸໃນພຣະທຳວິໄນນີ້ ລະເວັ້ນຈາກການຂ້າສັດ ວາງທັນດາວຸດ ແລະ ສາດຕາວຸດ ມີຄວາມລະອາຍ ມີຄວາມອີດູ ມຸ້ງປະໂຫຍດເກື້ອກູນຕໍ່ສັບພະສັດຢູ່ ຂໍ້ນີ້ ຈັດເປັນສິນຂອງພິກຂຸຢ່າງໜຶ່ງ (ຕໍ່ຈາກນີ້ເພິ່ງຂະຫຍາຍສິນທຸກຂໍ້ໃຫ້ພິດສະດານ) ພິກຂຸເວັ້ນຂາດຈາກການລ້ຽງຊີບຜິດທາງ ດ້ວຍເດຣັດສານວິຊາ ຄື ທີ່ສະມະນະພາມຜູ້ຈະເລີນລາງພວກ ສັນໂພຊະນາອາຫານທີ່ເຂົາໃຫ້ດ້ວຍສັດທາແລ້ວ ຍັງລ້ຽງຊີບຜິດທາງດ້ວຍເດຣັດສານວິຊາມີແນວນີ້ ຄື ເຮັດພິທີບະ ພິທີແກ້ບະ ເປົ່າມົນຂັບຜີ ຕັ້ງຫໍເທວະດາເຮັດກະເທືອຍໃຫ້ເປັນຊາຍ ເຮັດຊາຍໃຫ້ເປັນກະເທືອຍ ເຮັດພິທີປຸກເຮືອນ ເຮັດພິທີບວງສວງເຈົ້າທີ່ ເຈົ້າຖານ ເປົ່ານ້ຳມົນ ທົດນ້ຳມົນ ພິທີບູຊາໄຟ ແຕ່ງຢາໃຫ້ຮາກອອກ ແຕ່ງຢາໃຫ້ຖ່າຍແຕ່ງຢາແກ້ໂຣກລົມຕີຂຶ້ນທາງເທິງ ແຕ່ງຢາແກ້ໂຣກລົມຕີຕິລົງເບື້ອງບຸ້ມ ແຕ່ງຢາແກ້ເຈັບຫົວແຕ່ງນ້ຳມັນຢອດຫູ ແຕ່ງນ້ຳມັນຢອດຕາ ແຕ່ງຢານັດ ແຕ່ງຢາຢອດຕາ ແຕ່ງຢາທາຕາ ເປັນໝໍປົວຕາ ໝໍຜ່າຕັດ ໝໍຖືຮັກສາເດັກນ້ອຍ (ກຸມາຣະເວດ) ການທ້າຢາພື້ນເມືອງ ແລະ ໃສ່ຢາລ້າງບາດແຜ ຂໍ້ນີ້ຈັດເປັນສິນຂອງພິກຂຸຢ່າງໜຶ່ງ

[໔໕໔] ພິກຂຸຜູ້ສົມບູນດ້ວຍສິນແນວນີ້ ຍ່ອມບໍ່ປະສົບໄພອັນຕະລາຍ ຈາກການສັງລວມໃນສິນເລີຍ ປຽບຄື ກະສັດຜູ້ໄດ້ຮັບມູນທາພິເສກ ເປັນພຣະຣາຊາ ກຳຈັດຂ້າເສິກໄດ້ເດັດຂາດແລ້ວ ຍ່ອມບໍ່ປະສົບໄພອັນຕະລາຍຈາກຂ້າເສິກອີກເລີຍ ພິກຂຸຜູ້ສົມບູນດ້ວຍອະຣິຍະສິນຂັນແນວນີ້ ຍ່ອມສະເຫວີຍສຸກອັນບໍ່ມີໂທດໃນພາຍໃນ ມານົບ ພິກຂຸຊື່ວ່າ ສົມບູນດ້ວຍສິນເປັນແນວນີ້ແລ

[໔໕໘] ມານົບອະຣິຍະສິນຂັນທີ່ພຣະຜູ້ມີພຣະພາກເຈົ້າຕັດສັນລະເສີນ ແລະ ຊົງໃຫ້ປະຊາຊົນສະມາທານຕັ້ງໝັ້ນຢູ່ເປັນແນວນີ້ ແຕ່ໃນພຣະທຳວິໄນນີ້ ຍັງມີກໍຣະນີຍະກິດທີ່ຕ້ອງປະຕິບັດຍິ່ງຂຶ້ນໄປກວ່າຂັ້ນອະຣິຍະສິນຂັນນີ້ອີກ

ສຸພະມານົບກ່າວວ່າ "ໜ້າອັດສະຈັນຈິງແທ້ ບໍ່ເຄີຍມີ ບໍ່ເຄີຍປາກົດມາກ່ອນວ່າ ອະຣິຍະສີນຂັນຈະສະແດງໄດ້ສົມບູນບໍລິບູນໄດ້ຄືແນວນີ້ ຂ້າພະເຈົ້າ ບໍ່ເຄີຍເຫັນອະຣິຍະສີນຂັນທີ່ບໍລິບູນສົມບູນແນວນີ້ໃນສະມະນະພາມເຫຼົ່າອື່ນ ນອກພຣະສາດສະໜານີ້ເລີຍ ສະມະນະພາມເຫຼົ່າອື່ນນອກພຣະສາດສະໜານີ້ ເມື່ອເຫັນອະຣິຍະສີນຂັນທີ່ບໍລິບູນແນວນີ້ໃນຕົນກໍຈະພໍໃຈວ່າ "ປະພຶດໄດ້ພຽງແຄ່ນີ້ກໍພໍແລ້ວ ພຽງແຄ່ນີ້ກໍສໍາເລັດແລ້ວ ເຮົາໄດ້ບັນລຸສາມັນຍະຄຸນແລ້ວ ບໍ່ມີກິດອື່ນທີ່ຕ້ອງປະຕິບັດໃຫ້ຍິ່ງຂຶ້ນໄປກວ່າຂັ້ນນີ້ອີກແລ້ວ" ແຕ່ທ່ານບອກວ່າ "ໃນພຣະທໍາວິໄນນີ້ ຍັງມີກໍຣະນີຍະກິດທີ່ຕ້ອງປະຕິບັດໃຫ້ຍິ່ງຂຶ້ນໄປກວ່າຂັ້ນອະຣິຍະສີນຂັນນີ້ອີກ"

## ສະມາທິຂັນ

[໔໕໔] ອະຣິຍະສະມາທິຂັນ ທີ່ທ່ານພຣະໂຄດົມຕັດສັນລະເສີນ ແລະ ຊົງໃຫ້ປະຊາຊົນສະມາທານປະພຶດຢູ່ເປັນແນວໃດ? ທ່ານພຣະອານົນ

ທ່ານພຣະອານົນຕອບວ່າ "ມານົບ ພິກຂຸຊື່ວ່າ ຄຸ້ມຄອງທະວານໃນອິນຊີທັງຫຼາຍເປັນແນວໃດ? ຄື ພິກຂຸໃນພຣະທໍາວິໄນນີ້ ເຫັນຮູບດ້ວຍຕາແລ້ວບໍ່ໂຮມຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອສັງລວມໃນຈັກຂຸນຊີ ເຊິ່ງເມື່ອບໍ່ສັງລວມແລ້ວ ກໍຈະເປັນເຫດໃຫ້ຖືກບາບອະກຸສົນທໍາຄືອະພິຊາ ແລະໂທມະນັດຄອບງໍາໄດ້ ຈຶ່ງຖືຮັກສາຈັກຂຸນຊີ ເຖິງຄວາມສັງລວມໃນຈັກຂຸນຊີ ຟັງສຽງດ້ວຍຫູ ฯລฯ ດົມກິ່ນດ້ວຍດັງ ແລະ ฯລฯ ຊີມຣົດດ້ວຍລີ້ນ ฯລฯ ສໍາຜັດຖືກໂຜດຖັບພະດ້ວຍກາຍ ฯລฯ ຮູ້ທໍາມາຣົມດ້ວຍໃຈແລ້ວ ບໍ່ໂຮມຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອສັງລວມໃນມະນິນຊີ ເຊິ່ງເມື່ອບໍ່ສັງລວມແລ້ວກໍຈະເປັນເຫດໃຫ້ຖືກບາບອະກຸສົນທໍາ ຄື ອະພິຊາ ແລະໂທມະນັດຄອບງໍາໄດ້ ຈຶ່ງຖືຮັກສາມະນິນຊີ ເຖິງຄວາມສັງລວມໃນມະນິນຊີ ພິກຂຸຜູ້ປະກອບດ້ວຍຄວາມສັງລວມອິນຊີອັນເປັນອະຣິຍະນີ້ ຍ່ອມສະເຫວີຍສຸກທີ່ບໍ່ປະປົນກັບກິເລດໃນພາຍໃນມານົບ ພິກຂຸຊື່ວ່າ ຄຸ້ມຄອງທະວານໃນອິນຊີທັງຫຼາຍເປັນແນວນີ້ແລ

[໔໕໕] ມານົບ ພິກຂຸຊື່ວ່າ ປະກອບດ້ວຍສະຕິສໍາປະຊັນຍະເປັນແນວໃດ ຄື ພິກຂຸໃນພຣະທໍາວິໄນນີ້ ທໍາຄວາມຮູ້ສຶກໂຕໃນການກ້າວໄປ ການຖອຍກັບ ການແນມເບິ່ງ ການຫຼຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດ ແລະ ຈີວອນ ການສັນ ການດື່ມ ການຫຍໍ້າ ການຊີມຣົດ ການຖ່າຍອຸດຈາຣະ ປັດສາວະ ການຍ່າງ ການຢືນ ການນັ່ງ ການນອນ ການຕື່ນ ການເວົ້າ ການນິ່ງໃນທຸກອະລິຍາບົດເຊັ່ນນີ້ ມານົບ ພິກຂຸນັ້ນຊື່ວ່າ ເປັນຜູ້ປະກອບດ້ວຍສະຕິສໍາປະຊັນຍະເປັນແນວນີ້ແລ

[໔໕໖] ມານົບພິກຂຸຊື່ວ່າຜູ້ສັນໂດດເປັນແນວໃດ ຄື ພິກຂຸໃນພຣະທໍາວິໄນນີ້ ສັນໂດດດ້ວຍຈີວອນ ມີພໍຄຸມກາຍ ແລະ ບິນທະບາດພໍອີ່ມທ້ອງ ຈະໄປໃນທີ່ໃດ ໆ ກໍໄປໄດ້ທັນທີ ຄືນົກ

ມີອິດສະລະຈະບິນໄປໃນທີ່ໃດ ໆ ກໍໄດ້ ມີແຕ່ປີກເປັນພາຣະທີ່ຈະຕ້ອງຖືເທົ່ານັ້ນ ມານົບພິກຂຸນັ້ນຊື່ວ່າຜູ້ສັນໂດດເປັນແນວນີ້ແລ

[໔໕໗] ພິກຂຸນັ້ນ ປະກອບດ້ວຍອະຣິຍະສີນຂັນ ອະຣິຍະອິນຊີສັງວອນ ອະຣິຍະສະຕິສຳປະຊັນຍະ ແລະ ອະຣິຍະສັນໂດດແນວນີ້ແລ້ວ ພັກຢູ່ໃນເສນາສະນະອັນງຽບສະຫງັດໃນປ່າເຫງົ້າໄມ້ ພູ ເງື້ອມຜາ ຖ້ຳ ປ່າຊ້າ ປ່າຕຶບ ບ່ອນແຈ້ງ ກອງເຟືອງ ເມື່ອທ່ານກັບມາຈາກບິນທະບາດພາຍຫຼັງສັນອາຫານເສັດແລ້ວ ນັ່ງຂັດສະມາທິ ຕັ້ງກາຍກົງດຳຣົງສະຕິໄວ້ສະເພາະໜ້າຕັ້ງໄວ້ໃຫ້ໝັ້ນຄົງ

[໔໕໘] ພິກຂຸນັ້ນ ພຽນພະຍະຍາມລະອະພິຊາ (ຄວາມເພ່ງເລັງຢາກໄດ້ຂອງເຂົາ) ໃນໂລກມີໃຈປາສະຈາກອະພິຊາຢູ່ ຊຳຣະຈິດໃຫ້ບໍລິສຸດຈາກອະພິຊາ ລະຄວາມມຸ້ງຮ້າຍຄືພະຍາບາດມີຈິດບໍ່ພະຍາບາດ ມຸ້ງປະໂຫຍດເກື້ອກູນຕໍ່ສັບພະສັດຢູ່ ຊຳຣະຈິດໃຫ້ບໍລິສຸດຈາກຄວາມມຸ້ງຮ້າຍ ຄືພະຍາບາດ ລະຖີນະມິດທະ (ຄວາມຫົດຫູ່ແລະເຊື່ອງຊຶມ) ປາສະຈາກຖີນະມິດທະກຳນົດແສງສະຫວ່າງຢູ່ ຊຳຣະຈິດໃຫ້ບໍລິສຸດຈາກຖີນະມິດທະ ລະອຸດທັດຈະກຸກກຸດຈະ (ຄວາມຟຸ້ງຊ່ານແລະລຳຄານໃຈ) ເປັນຜູ້ບໍ່ຟຸ້ງຊ່ານ ມີຈິດສະຫງົບຢູ່ພາຍໃນ ຊຳຣະຈິດໃຫ້ບໍລິສຸດຈາກອຸດທັດຈະກຸກກຸດຈະ ລະວິຈິກິດສາ (ຄວາມລັງເລສົງສັຍ) ຂ້າມວິຈິກິດສາໄດ້ແລ້ວ ບໍ່ມີວິຈິກິດສາໃນກຸສົນທຳທັງຫຼາຍ ຊຳຣະຈິດໃຫ້ບໍລິສຸດຈາກວິຈິກິດສາ

## ອຸບປະມານິວອນ ៥

[໔໕໙] ປຽບຄື ຄົນກູ້ໜີ້ມາລົງທຶນຈົນປະສົບຜົນສຳເລັດ ແລ້ວໃຊ້ໜີ້ເກົ່າທີ່ເປັນຕົ້ນທຶນໄດ້ຈົນໝົດ ແລະຍັງເກັບກຳສ່ວນທີ່ເຫຼືອໄວ້ເປັນຄ່າລ້ຽງດູບຸດພັນລະຍາ ເຂົາຈຶ່ງຮູ້ສຶກພູມໃຈໃນໂຕເອງວ່າ "ແຕ່ກ່ອນເຮົາກູ້ໜີ້ມາລົງທຶນ ວຽກງານສຳເລັດຜົນດີ ໄດ້ໃຊ້ໜີ້ເກົ່າທີ່ຢືມມາລົງທຶນໝົດແລ້ວ ກໍຍັງມີເຫຼືອໄວ້ເປັນຄ່າລ້ຽງດູບຸດພັນລະຍາ" ເພາະຄວາມບໍ່ມີໜີ້ສິນເປັນເຫດ ເຂົາຈຶ່ງໄດ້ຮັບຄວາມເບີກບານໃຈແລະຄວາມສຸກໃຈ"

[໔໖໐] ປຽບຄື ຄົນເຈັບໄຂ້ອາການໜັກ ບໍລິໂພກອາຫານບໍ່ໄດ້ ບໍ່ມີກຳລັງຕໍ່ມາຫາຍດີບໍລິໂພກອາຫານໄດ້ກັບມາມີກຳລັງຄືເກົ່າ ເຂົາຈຶ່ງຄິດວ່າ "ແຕ່ກ່ອນ ເຮົາເຈັບໄຂ້ອາການໜັກບໍລິໂພກອາຫານບໍ່ໄດ້ບໍ່ມີກຳລັງ ເວລານີ້ຫາຍດີແລ້ວ ບໍລິໂພກອາຫານໄດ້ ມີກຳລັງເປັນປົກກະຕິຢູ່ເປັນສຸກ" ເພາະການຫາຍຈາກພະຍາດເປັນເຫດ ເຂົາຈຶ່ງໄດ້ຮັບຄວາມເບີກບານໃຈ ແລະຄວາມສຸກໃຈ

[໔໖໑] ປຽບຄື ຄົນຖືກໃສ່ໂທດຖືກຈັບຄຸມຂັງໃນຄຸກ ຕໍ່ມາພົ້ນໂທດອອກຈາກຄຸກໂດຍສະວັດດີພາບບໍ່ຕ້ອງເສຍຄ່າໃຊ້ຈ່າຍໃດ ໆ ເຂົາຈຶ່ງຄິດວ່າ "ແຕ່ກ່ອນເຮົາຖືກໃສ່ໂທດ ຖືກຄຸມຂັງໃນ

ຄຸກ ແຕ່ໃນເວລານີ້ພົ້ນໂທດອອກຈາກຄຸກໂດຍສະວັດດີພາບ ບໍ່ຕ້ອງເສຍຄ່າໃຊ້ຈ່າຍໃດ ໆ” ເພາະການພົ້ນຈາກຄຸກເປັນເຫດ ເຂົາຈຶ່ງໄດ້ຮັບຄວາມເບີກບານໃຈ ແລະ ຄວາມສຸກໃຈ

[໔໖໔] ປຽບຄື ຄົນທີ່ຕົກເປັນຂ້າທາດ ເພິ່ງໂຕເອງບໍ່ໄດ້ຕ້ອງເພິ່ງຜູ້ອື່ນ ຈະໄປໃສຕາມໃຈມັກກໍບໍ່ໄດ້ ຕໍ່ມາພົ້ນຈາກຄວາມເປັນຂ້າທາດເພິ່ງໂຕເອງໄດ້ ບໍ່ຕ້ອງເພິ່ງຜູ້ອື່ນ ມີອິດສະຣະພາບແກ່ໂຕເອງຈະໄປໃສກໍໄດ້ຕາມໃຈຕ້ອງການ ເຂົາຈຶ່ງຄິດວ່າ “ແຕ່ກ່ອນ ເຮົາເປັນຂ້າທາດ ເພິ່ງໂຕເອງບໍ່ໄດ້ ຕ້ອງເພິ່ງຜູ້ອື່ນຈະໄປໃສຕາມໃຈມັກກໍບໍ່ໄດ້ ເວລານີ້ເຮົາໄດ້ພົ້ນຈາກຄວາມເປັນຂ້າທາດເພິ່ງໂຕເອງໄດ້ ບໍ່ຕ້ອງເພິ່ງຜູ້ອື່ນເປັນອິດສະຣະພາບແກ່ໂຕເອງ ຈະໄປໃສກໍໄດ້ຕາມໃຈຕ້ອງການ” ເພາະຄວາມເປັນອິດສະຣະພາບແກ່ໂຕເອງເປັນເຫດ ເຂົາຈຶ່ງໄດ້ຮັບຄວາມເບີກບານໃຈ ແລະ ຄວາມສຸກໃຈ

[໔໖໕] ປຽບຄື ຄົນມີຊັບສົມບັດເດີນທາງໄກກັນດານ ຫາອາຫານໄດ້ຍາກມີໄພສະເພາະໜ້າ ຕໍ່ມາຂ້າມພົ້ນທາງກັນດານນັ້ນໄປໄດ້ ມາເຖິງໝູ່ບ້ານອັນສະຫງົບຮົ່ມເຢັນປອດໄພໂດຍສະວັດດີພາບ ເຂົາຈຶ່ງຄິດວ່າ “ແຕ່ກ່ອນ ເຮົາມີຊັບສົມບັດເດີນທາງໄກກັນດານຫາອາຫານໄດ້ຍາກມີໄພສະເພາະໜ້າ ເວລານີ້ ສາມາດຂ້າມພົ້ນທາງກັນດານນັ້ນໄປໄດ້ ມາເຖິງໝູ່ບ້ານອັນສະຫງົບຮົ່ມເຢັນປອດໄພໂດຍສະວັດດີພາບ” ເພາະການພົບພູມສະຖານອັນຮົ່ມເຢັນເປັນເຫດ ເຂົາຈຶ່ງໄດ້ຮັບຄວາມເບີກບານໃຈແລະຄວາມສຸກໃຈ

[໔໖໔] ມານົບ ພິກຂຸພິຈາລະນາເຫັນນິວອນ ໕ ທີ່ຕົນຍັງລະບໍ່ໄດ້ຄື ການເປັນໜີ້ ການເຈັບໄຂ້ ການຖືກຄຸມຂັງ ຄວາມເປັນຂ້າທາດ ແລະ ທາງໄກກັນດານດັ່ງນັ້ນ

[໔໖໕] ມານົບ ພິກຂຸພິຈາລະນາເຫັນນິວອນ ໕ ທີ່ຕົນລະໄດ້ແລ້ວຄືກັນກັບຄວາມບໍ່ມີໜີ້ ຄວາມບໍ່ມີພະຍາດ ການພົ້ນໂທດຈາກຄຸກ ຄວາມເປັນອິດສະຣະພາບແກ່ໂຕເອງ ແລະ ພູມສະຖານອັນສະຫງົບຮົ່ມເຢັນ

[໔໖໖] ເມື່ອພິກຂຸນັ້ນ ພິຈາລະນາເຫັນນິວອນ ໕ ທີ່ຕົນລະໄດ້ແລ້ວ ຍ່ອມເກີດຄວາມເບີກບານໃຈ ເມື່ອເບີກບານໃຈ ກໍຍ່ອມເກີດປິຕິ ເມື່ອໃຈມີປິຕິ ກາຍຍ່ອມສະຫງົບ ທ່ານມີກາຍສະຫງົບ ຍ່ອມໄດ້ຮັບຄວາມສຸກ ເມື່ອມີຄວາມສຸກຈິດຍ່ອມຕັ້ງໝັ້ນ

## ປະຖົມມະຊານ

[໔໖໗] ພິກຂຸນັ້ນ ສະຫງັດຈາກກາມ ແລະ ອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມມະຊານທີ່ມີວິຕົກວິຈານປິຕິ ແລະ ສຸກອັນເກີດຈາກວິເວກຢູ່ ທ່ານເຮັດກາຍນີ້ໃຫ້ຊຸ່ມຊື່ນເອີບອີ່ມດ້ວຍ

ປີຕິ ແລະ ສຸກອັນເກີດຈາກວິເວກ ຮູ້ສຶກຊາບຊ່ານຢູ່ບໍ່ມີສ່ວນໃດຂອງຮ່າງກາຍທີ່ປີຕິ ແລະ ສຸກ ອັນເກີດຈາກວິເວກຈະບໍ່ສຳຜັດຖືກ

ປຽບຄື ພະນັກງານອາບນໍ້າ ຫຼື ລູກມືພະນັກງານອາບນໍ້າ ຜູ້ຊຳນານຖອກຜົງຫຼຸກໂຕລົງ ໃນພາຊະນະສຳລິດແລ້ວເອົານໍ້າພົມໃຫ້ຕິດເປັນກ້ອນ ພໍຮອດຍາມແລງກ້ອນຫຼຸກໂຕທີ່ມີຢາງໄຫລ ຊຶມໄປຈັບຕິດກັນ ບໍ່ກະຈາຍອອກສັນໃດ ພິກຂຸເຮັດກາຍນີ້ໃຫ້ຊຸ່ມຊື່ນເອີບອິ່ມດ້ວຍປີຕິ ແລະ ສຸກ ອັນເກີດຈາກວິເວກ ຮູ້ສຶກຊາບຊ່ານຢູ່ບໍ່ມີສ່ວນໃດຂອງຮ່າງກາຍເລີຍທີ່ປີຕິ ແລະ ສຸກອັນເກີດ ຈາກວິເວກຈະບໍ່ສຳຜັດຖືກສັນນັ້ນ ຂໍ້ນີ້ຈັດເປັນສະມາທິຢ່າງໜຶ່ງຂອງພິກຂຸ

## ທຸຕິຍະຊານ

[໔໙໗] ຍັງມີອີກນານີບ ເພາະວິຕົກວິຈານສະຫງົບລະງັບໄປ ພິກຂຸບັນລຸທຸຕິຍະຊານມີ ຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິ ແລະ ສຸກອັນເກີດຈາກສະມາທິຢູ່ ທ່ານເຮັດກາຍນີ້ໃຫ້ຊຸ່ມຊື່ນເອີບອິ່ມດ້ວຍປີຕິ ແລະ ສຸກອັນເກີດຈາກ ສະມາທິ ຮູ້ສຶກຊາບຊ່ານຢູ່ບໍ່ມີສ່ວນໃດຂອງຮ່າງກາຍທີ່ປີຕິ ແລະ ສຸກອັນເກີດຈາກສະມາທິຈະບໍ່ ສຳຜັດຖືກ

ປຽບຄື ວັງນໍ້າເລິກ ເປັນວັງວົນ ບໍ່ມີທາງທີ່ກະແສນໍ້າຈະໄຫລເຂົ້າໄດ້ ບໍ່ວ່າທາງຕາເວັນ ອອກ ທາງໃຕ້ ທາງຕາເວັນຕົກ ແລະ ທາງເໜືອ ຝົນກໍບໍ່ຕົກໃສ່ ແຕ່ມີກະແສນໍ້າເຢັນພຸດຂຶ້ນໃນ ຫ້ວງນໍ້ານັ້ນ ແລ້ວເຮັດໃຫ້ຫ້ວງນໍ້ານັ້ນໃຫ້ຊຸ່ມຊື່ນເອີບອາບເນືອງນອງໄປດ້ວຍນໍ້າເຢັນ ບໍ່ມີສ່ວນ ໃດຂອງຫ້ວງນໍ້ານັ້ນທີ່ນໍ້າເຢັນຈະບໍ່ໄຫລໄປຮອດ ສັນໃດ ພິກຂຸເຮັດກາຍນີ້ໃຫ້ຊຸ່ມຊື່ນເອີບອິ່ມ ດ້ວຍປີຕິ ແລະ ສຸກ ອັນເກີດຈາກສະມາທິ ຮູ້ສຶກຊາບຊ່ານຢູ່ບໍ່ມີສ່ວນໃດຂອງຮ່າງກາຍທີ່ປີຕິ ແລະ ສຸກອັນເກີດຈາກສະມາທິຈະບໍ່ສຳຜັດຖືກສັນນັ້ນ ຂໍ້ນີ້ຈັດເປັນສະມາທິຢ່າງໜຶ່ງຂອງພິກຂຸ

## ຕະຕິຍະຊານ

[໔໙໘] ຍັງມີອີກນານີບ ເພາະປີຕິຈາງຄາຍໄປ ພິກຂຸມີອຸເປກຂາ ມີສະຕິສຳປະຊັນຍະສະ ເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍສັນລະເສີນວ່າ ຜູ້ມີອຸເປກ ຂາມີສະຕິຢູ່ເປັນສຸກ ທ່ານເຮັດກາຍນີ້ໃຫ້ຊຸ່ມຊື່ນເອີບອິ່ມດ້ວຍສຸກອັນບໍ່ມີປີຕິ ຮູ້ສຶກຊາບຊ່ານຢູ່ບໍ່ມີ ສ່ວນໃດຂອງຮ່າງກາຍທີ່ສຸກອັນບໍ່ມີປີຕິຈະບໍ່ສຳຜັດຖືກ

ປຽບຄື ໃນກໍບົວຂຽວ (ອຸບົນ) ກໍບົວຫຼວງ (ປະທຸມ) ຫຼື ກໍບົວຂາວ (ບຸນທະຣິກ) ດອກ ບົວຂຽວ ດອກບົວຫຼວງ ຫຼື ດອກບົວຂາວບາງເຫຼົ່າທີ່ເກີດຈະເລີນເຕີບໂຕໃນນໍ້າ ຍັງບໍ່ພົ້ນຂຶ້ນມາເ ໜືອນໍ້າ ຈົມຢູ່ໃຕ້ນໍ້າ ມີນໍ້າຫຼໍ່ລ້ຽງໄວ້ ດອກບົວເຫຼົ່ານັ້ນຊຸ່ມຊື່ນ ເອີບອາບ ຊາບຊຶມດ້ວຍນໍ້າເຢັນ

ຕັ້ງແຕ່ຍອດເຖິງເທົ້າ ບໍ່ມີສ່ວນໃດທີ່ນ້ຳເຢັນຈະບໍ່ສຳຜັດຖືກ ສັນໃດ ພິກຂຸເຮັດກາຍນີ້ໃຫ້ຊຸ່ມຊື່ນເອີບອີ່ມ ດ້ວຍສຸກອັນບໍ່ມີປີຕິ ຮູ້ສຶກຊາບຊ່ານຢູ່ ບໍ່ມີສ່ວນໃດຂອງຮ່າງກາຍທີ່ສຸກອັນບໍ່ມີປີຕິ ຈະບໍ່ສຳຜັດຖືກສັນນັ້ນ ຂໍ້ນີ້ຈັດເປັນສະມາທິຢ່າງໜຶ່ງຂອງພິກຂຸ

## ຈະຕຸດຖະຊານ

[໔໗໐] ຍັງມີອີກມານົບ ເພາະລະສຸກ ແລະ ທຸກໄດ້ ເພາະໂສມະນັດ ແລະ ໂທມະນັດດັບໄປກ່ອນ ພິກຂຸບັນລຸຈະຕຸດຖະຊານທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດ ເພາະອຸເປກຂາຢູ່ ທ່ານມີໃຈອັນບໍລິສຸດຜຸດຜ່ອງແຜ່ໄປທົ່ວກາຍນີ້ ບໍ່ມີສ່ວນໃດຂອງຮ່າງກາຍ ທີ່ໃຈອັນບໍລິສຸດຜຸດຜ່ອງຈະບໍ່ສຳຜັດຖືກເລີຍ

ປຽບຄື ຄົນນັ່ງຢູ່ໃຊ້ຜ້າຂາວຄຸມປົກທົ່ວຮ່າງກາຍ ແລະ ຫົວ ບໍ່ມີສ່ວນໃດຂອງຮ່າງກາຍທີ່ຜ້າຂາວຈະບໍ່ກວມໄວ້ສັນໃດ ພິກຂຸມີໃຈອັນບໍລິສຸດຜຸດຜ່ອງ ແຜ່ໄປທົ່ວກາຍ ບໍ່ມີສ່ວນໃດຂອງຮ່າງກາຍທີ່ໃຈອັນບໍລິສຸດຜຸດຜ່ອງ ຈະບໍ່ສຳຜັດຖືກສັນນັ້ນ ຂໍ້ນີ້ຈັດເປັນສະມາທິຢ່າງໜຶ່ງຂອງພິກຂຸ

[໔໗໑] ມານົບ ສະມາທິຂັນທີ່ພຣະຜູ້ມີພຣະພາກເຈົ້າຕັດສັນລະເສີນ ແລະ ຊົງໃຫ້ປະຊາຊົນສະມາທານຕັ້ງໝັ້ນຢູ່ເປັນແບບນີ້ ແຕ່ໃນພຣະທຳວິໄນນີ້ ຍັງມີກໍຣະນີຍະກິດທີ່ຕ້ອງປະຕິບັດຍິ່ງຂຶ້ນໄປກວ່າຂັ້ນອະຣິຍະສະມາທິນີ້ອີກ

ສຸພະມານົບກ່າວວ່າ “ໜ້າອັດສະຈັນຈິງແທ້ ບໍ່ເຄີຍປາກົດ ອະຣິຍະສະມາທິຂັນທີ່ບໍລິບູນລະອຽດຄືແບບນີ້ມາກ່ອນ ຂ້າພະເຈົ້າບໍ່ເຄີຍໄດ້ຍິນອະຣິຍະສະມາທິຂັນທີ່ບໍລິບູນແບບນີ້ ໃນສະມະນະພາມເຫຼົ່າອື່ນນອກພຣະສາດສະໜານີ້ເລີຍ ສະມະນະພາມເຫຼົ່າອື່ນນອກພຣະສາດສະໜານີ້ເມື່ອປະຕິບັດໄດ້ເຖິງຂັ້ນອະຣິຍະສະມາທິຂັນທີ່ບໍລິບູນແບບນີ້ໃນຕົນກໍຈະພໍໃຈວ່າ “ພຽງເທົ່ານີ້ກໍພໍແລ້ວ ພຽງເທົ່ານີ້ກໍສຳເລັດແລ້ວ ເຮົາໄດ້ບັນລຸສາມັນຍະຄຸນແລ້ວ ບໍ່ມີກິດອື່ນທີ່ຕ້ອງປະຕິບັດໃຫ້ຍິ່ງຂຶ້ນໄປກວ່າຂັ້ນນີ້ອີກ” ແຕ່ທ່ານຍັງບອກວ່າ “ໃນພຣະທຳວິໄນນີ້ ຍັງມີກິດທີ່ຕ້ອງປະຕິບັດຍິ່ງຂຶ້ນໄປກວ່າຂັ້ນອະຣິຍະສະມາທິຂັນນີ້ອີກ”

## ປັນຍາຂັນ

[໔໗໘] ອະຣິຍະປັນຍາຂັນທີ່ທ່ານພຣະໂຄດົມຕັດສະແດງ ແລະ ສັນລະເສີນ ຊົງແນະນຳສົ່ງເສີມໃຫ້ພຸດທະບໍຣິສັດສະມາທານປະພຶດປະຕິບັດຢູ່ເປັນແບບໃດ? ທ່ານພຣະອານົນ”

## ວິດຊາ ໗ ປະການ

## ໑. ວິປັດສະນາຍານ

ທ່ານພຣະອານົນ ຕອບວ່າ "ເມື່ອຈິດເປັນສະມາທິບໍລິສຸດຜຸດຜ່ອງ ບໍ່ມີກິເລດຍົວະຍວນ ປາສະຈາກຄວາມເສົ້າໝອງ ອ່ອນໂຍນນຸ້ມນວນ ເໝາະແກ່ການໃຊ້ງານໝັ້ນຄົງຢູ່ບໍ່ຫວັ່ນໄຫວ ແນວນີ້ ພິກຂຸນັ້ນ ນ້ອມຈິດໄປເພື່ອຍານະທັດສະນະເພື່ອຮູ້ຊັດແຈ້ງແນວນີ້ວ່າ "ກາຍຂອງເຮົານີ້ທີ່ໂຮມກັນເປັນຮູບຮ່າງປະກອບຂຶ້ນຈາກມະຫາພູຕະຮູບ ໔ ເກີດຈາກບິດາມານດາ ໃຫຍ່ຂຶ້ນໄດ້ຍ້ອນເຂົ້າສຸກ ແລະເຂົ້າໜົມສົດ ບໍ່ທ່ຽງແທ້ ຕ້ອງໄດ້ມີການຮັກສາ ຈະຕ້ອງມີອັນແຕກສະຫຼາຍກະຈັດກະຈາຍໄປເປັນທຳມະດາ ວິນຍານຂອງເຮົາອາໄສ ແລະ ຕິດພັນຢູ່ໃນກາຍນີ້"

ປຽບຄື ແກ້ວໄພທູນອັນງົດງາມຕາມທຳມະຊາດມີແປດຫຼ່ຽມ ທີ່ເຈຍຣະໄນດີແລ້ວເຫຼື້ອມສ່ອງແສງເປັນປະກາຍໄດ້ສັດສ່ວນ ມີດ້າຍສີຂຽວ ເຫຼືອງ ແດງ ຂາວ ຫຼື ສີນວນຮ້ອຍຢູ່ທາງໃນ ຄົນຕາເຖິງຈັບແກ້ວໄພທູນນັ້ນວາງໄວ້ໃນມືແລ້ວພິຈາລະນາເບິ່ງກໍຮູ້ວ່າ "ແກ້ວໄພທູນອັນງົດງາມຕາມທຳມະຊາດມີແປດຫຼ່ຽມທີ່ເຈຍຣະໄນດີແລ້ວ ເຫຼື້ອມສ່ອງແສງເປັນປະກາຍໄດ້ສັດສ່ວນມີດ້າຍສີຂຽວ ເຫຼືອງ ແດງຂາວ ຫຼື ສີນວນ ຮ້ອຍຢູ່ທາງໃນ" ສັນໃດ ເມື່ອຈິດເປັນສະມາທິບໍລິສຸດຜຸດຜ່ອງ ບໍ່ມີກິເລດຍົວະຍວນ ປາສະຈາກຄວາມເສົ້າໝອງ ອ່ອນນຸ້ມເໝາະແກ່ການໃຊ້ງານຕັ້ງໝັ້ນຢູ່ບໍ່ຫວັ່ນໄຫວແນວນີ້ ພິກຂຸນ້ອມຈິດໄປເພື່ອຍານະທັດສະນະກໍຮູ້ຊັດແຈ້ງແນວນີ້ວ່າ "ກາຍຂອງເຮົານີ້ທີ່ໂຮມກັນເປັນຮູບຮ່າງຂຶ້ນມາ ປະກອບຂຶ້ນຈາກມະຫາພູຕະຮູບ ໔ ເກີດຈາກບິດາມານດາ ໃຫຍ່ຂຶ້ນໄດ້ຍ້ອນເຂົ້າສຸກ ແລະ ເຂົ້າໜົມສົດ ບໍ່ທ່ຽງແທ້ ຕ້ອງໄດ້ຮັກສາ ມີອັນຈະຕ້ອງແຕກສະຫຼາຍກະຈັດກະຈາຍໄປເປັນທຳມະດາ ວິນຍານຂອງເຮົາອາໄສ ແລະ ຕິດພັນຢູ່ໃນກາຍນີ້" ສັນນັ້ນ ຂໍ້ນີ້ຈັດເປັນປັນຍາຢ່າງໜຶ່ງຂອງພິກຂຸນັ້ນ

## ໒. ມະໂນມະຍິທິຍານ

[໔໗໖] ເມື່ອຈິດເປັນສະມາທິບໍລິສຸດຜຸດຜ່ອງ ບໍ່ມີກິເລດຍົວະຍວນ ປາສະຈາກຄວາມເສົ້າໝອງ ອ່ອນນຸ້ມເໝາະແກ່ການໃຊ້ງານ ຕັ້ງໝັ້ນຢູ່ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນ ນ້ອມຈິດໄປເພື່ອເນຣະມິດກາຍທີ່ເກີດແຕ່ໃຈ ຄື ເນຣະມິດກາຍອື່ນຈາກກາຍນີ້ ມີຮູບທີ່ເກີດແຕ່ໃຈ ມີອະໄວຍະວະຄົບຖ້ວນ ມີອິນຊີບໍ່ບົກພ່ອງ ປຽບຄື ຄົນດຶງໄສ້ອອກຈາກຫຍ້າປ້ອງ ເຂົາເຫັນວ່າ "ນີ້ຄືຫຍ້າປ້ອງ ນີ້ຄືໄສ້ຫຍ້າປ້ອງເປັນຢ່າງໜຶ່ງ ໄສ້ກໍເປັນອີກຢ່າງໜຶ່ງ ແຕ່ໄສ້ຖືກດຶງອອກມາຈາກຫຍ້າປ້ອງນັ້ນເອງ" ປຽບຄື ຄົນດຶງດາບອອກຈາກຝັກ ເຂົາຈະເຫັນວ່າ "ນີ້ຄືດາບ ນີ້ຄືຝັກ ດາບເປັນຢ່າງໜຶ່ງ ຝັກກໍເປັນອີກຢ່າງໜຶ່ງ ແຕ່ດາບຖືກດຶງອອກມາຈາກຝັກນັ້ນເອງ" ຫຼື ປຽບຄື ຄົນດຶງງູອອກຈາກໜັງ ເຂົາຈະເຫັນວ່າ "ນີ້ຄືງູນີ້ຄືໜັງຂອງງູ ງູເປັນຢ່າງໜຶ່ງໜັງກໍເປັນອີກຢ່າງໜຶ່ງ ແຕ່ງູຖືກດຶງ

ອອກຈາກໜັງນັ້ນເອງ" ສັນໃດ ເມື່ອຈິດເປັນສະມາທິບໍລິສຸດຜຸດຜ່ອງ ບໍ່ມີກິເລດຍົວະຍວນ ປາສະຈາກຄວາມເສົ້າໝອງ ອ່ອນໂຍນ ນຸ້ມນວນເໝາະແກ່ການໃຊ້ງານ ຕັ້ງໝັ້ນບໍ່ຫວັ່ນໄຫວ ແນວນີ້ ພິກຂຸນັ້ນ ນ້ອມຈິດໄປເພື່ອເນຣະມິດກາຍທີ່ເກີດແຕ່ໃຈ ຄື ເນຣະມິດກາຍອື່ນຈາກກາຍນີ້ ມີຮູບທີ່ເກີດແຕ່ໃຈ ມີອະໄວຍະວະຄົບຖ້ວນ ມີອິນຊີບໍ່ບົກພ່ອງສັນນັ້ນ ຂໍ້ນີ້ຈັດເປັນປັນຍາຢ່າງໜຶ່ງຂອງພິກຂຸ

## ໖. ອິດທິວິທະຍານ

[໔໗໔] ເມື່ອຈິດເປັນສະມາທິບໍລິສຸດຜຸດຜ່ອງ ບໍ່ມີກິເລດຍົວະຍວນ ປາສະຈາກຄວາມເສົ້າໝອງອ່ອນໂຍນນຸ້ມນວນເໝາະແກ່ການໃຊ້ງານຕັ້ງໝັ້ນຢູ່ ບໍ່ຫວັ່ນໄຫວຕັ້ງໝັ້ນຢູ່ແນວນີ້ ພິກຂຸນັ້ນນ້ອມຈິດໄປເພື່ອອິດທິວິທະຍານ ສາມາດສະແດງລິດໄດ້ຫຼາຍຢ່າງ ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ສະແດງໃຫ້ປາກົດ ຫຼື ໃຫ້ຫາຍໄປກໍໄດ້ ຊອດຝາກຳແພງແລະພູໄປໄດ້ໂດຍບໍ່ຕິດຂັດ ຄື ໄປໃນທີ່ວ່າງກໍໄດ້ ຜຸດຂຶ້ນ ຫຼື ດຳລົງໃນແຜ່ນດິນຄືໄປໃນນ້ຳກໍໄດ້ ຍ່າງເທິງນ້ຳໂດຍທີ່ນ້ຳບໍ່ແຍກ ຄື ຍ່າງເທິງແຜ່ນດິນກໍໄດ້ ນັ່ງຂັດສະມາທິເຫາະໄປໃນອາກາດຄືນົກບິນໄປກໍໄດ້ ໃຊ້ຝ່າມືລູບຄຳດວງຈັນດວງອາທິດອັນມີລິດຫຼາຍມີອານຸພາບຫຼາຍກໍໄດ້ ໃຊ້ອຳນາດທາງກາຍຫາຍໂຕໄປຈົນເຖິງພົມມະໂລກກໍໄດ້ ປຽບຄື ຊ່າງປັ້ນໝໍ້ ຫຼື ລູກມືຊ່າງປັ້ນໝໍ້ຜູ້ຊຳນານການ ເມື່ອນວດດິນໜຽວດີແລ້ວກໍປັ້ນເປັນພາຊະນະທີ່ຕ້ອງການໃຫ້ສຳເລັດໄດ້ທຸກຮູບແບບ ປຽບຄື ຊ່າງງາ ຫຼື ລູກມືຊ່າງງາຜູ້ຊຳນານການ ເມື່ອແຕ່ງງາດີແລ້ວ ກໍສາມາດແກະສະຫຼັກໃຫ້ເປັນເຄື່ອງງາຊະນິດທີ່ຕ້ອງການໄດ້ທຸກຮູບແບບໃຫ້ສຳເລັດໄດ້ ປຽບຄື ຊ່າງຄຳ ຫຼື ລູກມືຊ່າງຄຳ ຜູ້ຊຳນານການ ເມື່ອຫຼອມຄຳດີແລ້ວກໍສາມາດເຮັດເປັນຄຳຮູບປະພັນຊະນິດທີ່ຕ້ອງການໄດ້ທຸກຮູບແບບໃຫ້ສຳເລັດໄດ້ສັນໃດ ເມື່ອຈິດເປັນສະມາທິບໍລິສຸດຜຸດຜ່ອງ ບໍ່ມີກິເລດຍົວະຍວນປາສະຈາກຄວາມເສົ້າໝອງອ່ອນໂຍນນຸ້ມນວນເໝາະແກ່ການໃຊ້ງານຕັ້ງໝັ້ນບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນນ້ອມຈິດໄປເພື່ອອິດທິວິທະຍານສະແດງລິດໄດ້ຫຼາຍຢ່າງຄືຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ສະແດງໃຫ້ປາກົດ ຫຼື ໃຫ້ຫາຍໄປກໍໄດ້ ຍ່າງຊອດຝາກຳແພງ ແລະ ພູໄປໄດ້ບໍ່ຕິດຂັດ ຄື ຍ່າງໄປໃນທີ່ວ່າງກໍໄດ້ ຜຸດຂຶ້ນ ຫຼື ດຳລົງໃນແຜ່ນດິນ ຄືດຳຢູ່ໃນນ້ຳກໍໄດ້ ຍ່າງເທິງນ້ຳໂດຍທີ່ນ້ຳບໍ່ແຍກອອກຈາກັນ ຄື ຍ່າງເທິງແຜ່ນດິນກໍໄດ້ ນັ່ງຂັດສະມາທິເຫາະໄປໃນອາກາດ ຄື ນົກບິນໄປກໍໄດ້ ໃຊ້ຝ່າມືລູບຄຳດວງຈັນດວງອາທິດອັນມີລິດຫຼາຍມີອານຸພາບຫຼາຍກໍໄດ້ ໃຊ້ອຳນາດທາງກາຍຫາຍໂຕໄປຈົນເຖິງພົມມະໂລກກໍໄດ້ສັນນັ້ນ ຂໍ້ນີ້ຈັດເປັນປັນຍາຢ່າງໜຶ່ງຂອງພິກຂຸ

## ໔. ທິບພະໂສຕະທາດຍານ

[໔໗໕] ເມື່ອຈິດເປັນສະມາທິບໍລິສຸດຜຸດຜ່ອງ ບໍ່ມີກິເລດຍົວະຍວນ ປາສະຈາກຄວາມເສົ້າໝອງ ອ່ອນໂຍນນຸ້ມນວນເໝາະແກ່ການໃຊ້ງານ ຕັ້ງໝັ້ນຢູ່ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນນ້ອມຈິດໄປເພື່ອທິບພະໂສຕະທາດຍານໄດ້ຍິນສຽງ ໒ ຊະນິດ ຄື ສຽງທິບ ແລະ ສຽງມະນຸດທັງບ່ອນຢູ່ໄກ ແລະ ໃກ້ດ້ວຍຫູທິບອັນບໍລິສຸດເໜືອມນຸດ

ປຽບຄື ຄົນເດີນທາງມາແຕ່ໄກມີປະສົບການໃນການໄດ້ຍິນມາຫຼາຍ ເມື່ອໄດ້ຍິນສຽງກອງ ສຽງຕະໂພນ ສຽງສັງ ສຽງບັນເດາະ ສຽງກອງຫາງຍາວ ກໍເຂົ້າໃຈຮູ້ໄດ້ວ່ານັ້ນແມ່ນສຽງກອງ ສຽງຕະໂພນ ສຽງສັງ ສຽງບັນເດາະ ສຽງກອງຫາງຍາວ ສັນໃດ ເມື່ອຈິດເປັນສະມາທິບໍລິສຸດຜຸດຜ່ອງບໍ່ມີກິເລດຍົວະຍວນ ປາສະຈາກຄວາມເສົ້າໝອງອ່ອນໂຍນນຸ້ມນວນເໝາະແກ່ການໃຊ້ງານ ຕັ້ງໝັ້ນຢູ່ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນນ້ອມຈິດໄປເພື່ອທິບພະໂສຕະທາດຍານໄດ້ຍິນສຽງ ໒ ຊະນິດ ຄື ສຽງທິບ ແລະ ສຽງມະນຸດທັງບ່ອນຢູ່ໄກ ແລະ ໃກ້ ດ້ວຍຫູທິບອັນບໍລິສຸດເໜືອມະນຸດສັນນັ້ນ ຂໍ້ນີ້ຈັດເປັນປັນຍາຢ່າງໜຶ່ງຂອງພິກຂຸ

## ໕. ເຈໂຕປະຣິຍະຍານ

[໔໗໖] ເມື່ອຈິດເປັນສະມາທິບໍລິສຸດຜຸດຜ່ອງບໍ່ມີກິເລດຍົວະຍວນ ປາສະຈາກຄວາມເສົ້າໝອງອ່ອນໂຍນນຸ້ມນວນ ເໝາະແກ່ການໃຊ້ງານຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ພິກຂຸນ້ອມຈິດໄປເພື່ອເຈໂຕປະຣິຍະຍານ ກໍານົດຮູ້ຈິດຂອງສັດ ແລະ ຄົນອື່ນດ້ວຍຈິດຂອງຕົນ ຄື ຈິດມີຣາຄະກໍຮູ້ວ່າມີຣາຄະ ຫຼືປາສະຈາກຣາຄະກໍຮູ້ວ່າປາສະຈາກຣາຄະ ຈິດມີໂທສະກໍຮູ້ວ່າມີໂທສະ ຫຼື ປາສະຈາກໂທສະກໍຮູ້ວ່າປາສະຈາກໂທສະ ຈິດມີໂມຫະກໍຮູ້ວ່າມີໂມຫະ ຫຼື ປາສະຈາກໂມຫະກໍຮູ້ວ່າປາສະຈາກໂມຫະ ຈິດຫົດຫູ່ກໍຮູ້ວ່າຫົດຫູ່ ຫຼື ຟຸ້ງຊ່ານກໍຮູ້ວ່າຟຸ້ງຊ່ານ ຈິດເປັນມະຫັກຄະຕະກໍຮູ້ວ່າເປັນມະຫັກຄະຕະ ຫຼື ບໍ່ເປັນມະຫັກຄະຕະກໍຮູ້ວ່າບໍ່ເປັນມະຫັກຄະຕະຈິດ ມີຈິດອື່ນຍິ່ງກວ່າກໍຮູ້ວ່າມີຈິດອື່ນຍິ່ງກວ່າ ຫຼື ບໍ່ມີຈິດອື່ນຍິ່ງກວ່າກໍຮູ້ວ່າບໍ່ມີຈິດອື່ນຍິ່ງກວ່າ ຈິດເປັນສະມາທິກໍຮູ້ວ່າເປັນສະມາທິ ຫຼື ບໍ່ເປັນສະມາທິກໍຮູ້ວ່າບໍ່ເປັນສະມາທິຈິດຫຼຸດພົ້ນກໍຮູ້ວ່າຫຼຸດພົ້ນ ຫຼື ບໍ່ຫຼຸດພົ້ນກໍຮູ້ວ່າບໍ່ຫຼຸດພົ້ນ

ປຽບຄື ຊາຍໜຸ່ມຍິງສາວທີ່ມັກການແຕ່ງໂຕ ເມື່ອແຍງເບິ່ງເງົາໜ້າຂອງຕົນໃນແວ່ນໃສສະອາດ ຫຼື ໃນພາຊະນະນໍ້າໃສ ເມື່ອໜ້າມີໄຝ ຝ້າ ສິວ ກໍຮູ້ວ່າມີໄຝ ຝ້າ ສິລ ຫຼື ບໍ່ມີໄຝ ຝ້າ ສິວ ກໍຮູ້ວ່າບໍ່ມີໄຝ ຝ້າ ສິວ ສັນໃດ ເມື່ອຈິດເປັນສະມາທິບໍລິສຸດຜຸດຜ່ອງບໍ່ມີກິເລດຍົວະຍວນ ປາສະຈາກຄວາມເສົ້າໝອງ ອ່ອນໂຍນນຸ້ມນວນເໝາະແກ່ການໃຊ້ງານ ຕັ້ງໝັ້ນບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນ ນ້ອມຈິດໄປເພື່ອເຈໂຕປະຣິຍະຍານ ກໍານົດຮູ້ຈິດຂອງສັດ ແລະ ຄົນອື່ນດ້ວຍຈິດ

ຂອງຕົນຄື ຈິດມີຣາຄະກໍຮູ້ວ່າມີຣາຄະ ຫຼື ປາສະຈາກຣາຄະກໍຮູ້ວ່າປາສະຈາກຣາຄະ ຈິດມີໂທສະກໍຮູ້ວ່າມີໂທສະ ຫຼື ປາສະຈາກໂທສະກໍຮູ້ວ່າປາສະຈາກໂທສະ ຈິດມີໂມຫະກໍຮູ້ວ່າມີໂມຫະ ຫຼື ປາສະຈາກໂມຫະກໍຮູ້ວ່າປາສະຈາກໂມຫະ ຈິດຫົດຫູ່ກໍຮູ້ວ່າຫົດຫູ່ ຫຼື ຟຸ້ງຊ່ານກໍຮູ້ວ່າຟຸ້ງຊ່ານ ຈິດເປັນມະຫັກຄະຕະກໍຮູ້ວ່າເປັນມະຫັກຄະຕະ ຫຼື ບໍ່ເປັນມະຫັກຄະຕະກໍຮູ້ວ່າບໍ່ເປັນມະຫັກຄະຕະ ຈິດມີຈິດອື່ນຍິ່ງກວ່າກໍຮູ້ວ່າມີຈິດອື່ນຍິ່ງກວ່າ ຫຼືບໍ່ມີຈິດອື່ນຍິ່ງກວ່າກໍຮູ້ວ່າບໍ່ມີຈິດອື່ນຍິ່ງກວ່າ ຈິດເປັນສະມາທິກໍຮູ້ວ່າເປັນສະມາທິ ຫຼື ບໍ່ເປັນສະມາທິກໍຮູ້ວ່າບໍ່ເປັນສະມາທິ ຈິດຫຼຸດພົ້ນກໍຮູ້ວ່າຫຼຸດພົ້ນ ຫຼື ບໍ່ຫຼຸດພົ້ນກໍຮູ້ວ່າບໍ່ຫຼຸດພົ້ນສັນນັ້ນ ຂໍ້ນີ້ຈັດເປັນປັນຍາຢ່າງໜຶ່ງຂອງພິກຂຸ

## ຜ. ປຸບເພນິວາສານຸດສະຕິຍານ

[໔໗໗] ເມື່ອຈິດເປັນສະມາທິບໍລິສຸດຜຸດຜ່ອງບໍ່ມີກິເລດຍົວະຍວນ ປາສະຈາກຄວາມເສົ້າໝອງອ່ອນໂຍນນຸ້ມນວນເໝາະແກ່ການໃຊ້ງານ ຕັ້ງໝັ້ນຢູ່ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນນ້ອມຈິດໄປເພື່ອປຸບເພນິວາສານຸດສະຕິຍານ ລະລຶກຊາດກ່ອນໄດ້ຫຼາຍຊາດຄື ໑ ຊາດແດ່ ກໍມີ ໒ ຊາດແດ່ ກໍມີ ໓ ຊາດແດ່ ກໍມີ ໔ ຊາດແດ່ ກໍມີ ໕ ຊາດແດ່ ກໍມີ ໑໐ ຊາດແດ່ ກໍມີ ໒໐ ຊາດແດ່ ກໍມີ ໓໐ ຊາດແດ່ ກໍມີ ໔໐ ຊາດແດ່ ກໍມີ ໕໐ ຊາດແດ່ ກໍມີ ໑໐໐ ຊາດແດ່ ກໍມີ ໑,໐໐໐ ຊາດແດ່ ກໍມີ ໑໐໐,໐໐໐ ຊາດແດ່ ກໍມີຕະຫຼອດສັງວັດຕະກັບເປັນຈຳນວນຫຼາຍແດ່ ຕະຫຼອດວິວັດຕະກັບເປັນຈຳນວນຫຼາຍແດ່ ຕະຫຼອດສັງວັດຕະກັບ ແລະ ວິວັດຕະກັບເປັນຈຳນວນຫຼາຍແດ່ວ່າ "ໃນພົບຊາດນັ້ນ ໆ ເຮົາໄດ້ມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະ ມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນແລ້ວກໍໄປເກີດໃນພົບນັ້ນ ແມ່ນໃນພົບນັ້ນເຮົາກໍມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກແລະມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນແລ້ວຈຶ່ງມາເກີດໃນພົບນີ້" ພິກຂຸນັ້ນ ລະລຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປ ແລະຊີວະປະຫວັດແນວນີ້

ປຽບຄື ຄົນຍ່າງຈາກບ້ານຂອງຕົນໄປສູ່ບ້ານອື່ນ ແລ້ວຈາກບ້ານນັ້ນໄປຫາບ້ານອື່ນອີກ ຍ່າງຈາກບ້ານນັ້ນກັບມາຫາບ້ານເກົ່າຂອງຕົນ ລະລຶກໄດ້ແນວນີ້ວ່າ "ເຮົາໄດ້ຍ່າງຈາກບ້ານຂອງຕົນໄປຫາບ້ານນັ້ນ ໃນບ້ານນັ້ນເຮົາໄດ້ຢືນ ນັ່ງ ເວົ້າ ນິ່ງເສີຍ ດ້ວຍອາການແນວນັ້ນ ໆ ເຮົາໄດ້ຈາກບ້ານນັ້ນໄປຫາບ້ານນັ້ນ ແມ່ນໃນບ້ານນັ້ນເຮົາກໍໄດ້ຢືນ ນັ່ງ ເວົ້ານິ່ງເສີຍດ້ວຍອາການແນວນັ້ນ ໆ ແລ້ວກັບຈາກບ້ານນັ້ນມາຍັງບ້ານເກົ່າຂອງຕົນ" ສັນໃດ ເມື່ອຈິດເປັນສະມາທິບໍລິສຸດຜຸດຜ່ອງ ບໍ່ມີກິເລດຍົວະຍວນ ປາສະຈາກຄວາມເສົ້າໝອງ ອ່ອນໂຍນນຸ້ມນວນເໝາະແກ່ການໃຊ້ງານຕັ້ງໝັ້ນຢູ່ ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນ ນ້ອມຈິດໄປເພື່ອປຸບເພນິວາສານຸດສະຕິຍານ ລະລຶກຊາດກ່ອນໄດ້ຫຼາຍຊາດຄື ໑ ຊາດແດ່ ກໍມີ ໒ ຊາດແດ່ ກໍມີ ໆລໆ ຕະຫຼອດສັງວັດຕະກັບ ແລະ ວິວັດຕະກັບເປັນຈຳນວນຫຼາຍແດ່ວ່າ "ໃນພົບນັ້ນເຮົາມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະ ມີອາຍຸເທົ່ານັ້ນ ຈຸຕິຈາກພົບນັ້ນແລ້ວ ກໍໄປເກີດໃນພົບນັ້ນ

ແມ່ນໃນພົບນັ້ນເຮົາກໍມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະ ມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນແລ້ວ ຈຶ່ງມາເກີດໃນພົບນີ້" ພິກຂຸນັ້ນ ລະລຶກຊາດກ່ອນໄດ້ຫຼາຍຊາດ ພ້ອມລັກສະນະທົ່ວໄປ ແລະ ຊີວະປະຫວັດແນວນີ້ ສັນນັ້ນຂໍ້ ນີ້ຈັດເປັນປັນຍາຢ່າງໜຶ່ງຂອງພິກຂຸ

## ໆ. ທິບພະຈັກຂຸຍານ

[໕໗໘] ເມື່ອຈິດເປັນສະມາທິບໍລິສຸດຜຸດຜ່ອງບໍ່ມີກິເລດຍົວະຍວນ ປາສະຈາກຄວາມເສົ້າໝອງອ່ອນໂຍນນຸ້ມນວນ ເໝາະແກ່ການໃຊ້ງານຕັ້ງໝັ້ນຢູ່ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນນ້ອມຈິດໄປເພື່ອຈຸຕູປະປາຕະຍານ ເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດທັງຊັ້ນຕ່ຳແລະຊັ້ນສູງ ຈົບງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳວ່າ "ໝູ່ສັດທີ່ປະກອບດ້ວຍກາຍທຸຈະຣິດ ວະຈີທຸຈະຣິດ ແລະ ມະໂນທຸຈະຣິດ ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຜິດ ແລະ ຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຜິດນັ້ນພວກເຂົາຫຼັງຈາກຕາຍແລ້ວຈະໄປບັງເກີດໃນອະບາຍທຸຄະຕິວິນິບາດນະຣົກ ແຕ່ໝູ່ສັດທີ່ປະກອບກາຍສຸດຈະຣິດ ວະຈີສຸດຈະຣິດ ແລະມະໂນສຸດຈະຣິດບໍ່ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຖືກ ແລະ ຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຖືກນັ້ນ ພວກເຂົາຫຼັງຈາກຕາຍໄປແລ້ວ ຈະໄປບັງເກີດໃນສຸກຄະຕິໂລກສະຫວັນ" ທ່ານເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດທັງຊັ້ນຕ່ຳ ແລະຊັ້ນສູງ ຈົບງາມແລະບໍ່ງາມ ເກີດດີແລະເກີດບໍ່ດີດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳແນວນີ້ແລ

ປຽບຄື ຜາສາດຕັ້ງຢູ່ທາງສາມແພ່ງກາງເມືອງຫຼວງ ຄົນຕາດີຢືນເທິງຜາສາດນັ້ນເຫັນໝູ່ຊົນກຳລັງເຂົ້າໄປສູ່ເຮືອນແດ່ ອອກຈາກເຮືອນແດ່ ສັນຈອນຢູ່ຕາມຖະໜົນແດ່ ນັ່ງຢູ່ ແຄມທາງສາມແພ່ງກາງເມືອງຫຼວງແດ່ ກໍຮູ້ໄດ້ວ່າ "ຄົນເຫຼົ່ານີ້ ເຂົ້າໄປສູ່ເຮືອນ ຄົນເຫຼົ່ານີ້ອອກຈາກເຮືອນ ຄົນເຫຼົ່ານີ້ສັນຈອນຢູ່ຕາມຖະໜົນ ຄົນເຫຼົ່ານີ້ນັ່ງຢູ່ແຄມທາງສາມແພ່ງກາງເມືອງຫຼວງ" ສັນໃດເມື່ອຈິດເປັນສະມາທິບໍລິສຸດຜຸດຜ່ອງ ບໍ່ມີກິເລດຍົວະຍວນ ປາສະຈາກຄວາມເສົ້າໝອງ ອ່ອນໂຍນນຸ້ມນວນເໝາະແກ່ການໃຊ້ງານ ຕັ້ງໝັ້ນຢູ່ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນນ້ອມຈິດໄປເພື່ອຈຸຕູປະະປາຕະຍານ ເຫັນໝູ່ສັດຜູ້ກຳລັງຈຸຕິກຳລັງເກີດທັງຊັ້ນຕ່ຳ ແລະ ຊັ້ນສູງ ຈົບງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳວ່າ "ໝູ່ສັດທີ່ປະກອບກາຍທຸຈະຣິດ ວະຈີທຸຈະຣິດ ແລະ ມະໂນທຸຈະຣິດ ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຜິດ ແລະ ຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຜິດ ພວກເຂົາຫຼັງຈາກຕາຍແລ້ວ ຈະໄປບັງເກີດໃນອະບາຍທຸຄະຕິວິນິບາດນະຣົກ ແຕ່ໝູ່ສັດທີ່ປະກອບກາຍສຸດຈະຣິດ ວະຈີສຸດຈະຣິດ ແລະ ມະໂນສຸດຈະຣິດບໍ່ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຖືກແລະຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຖືກນັ້ນ ພວກເຂົາຫຼັງຈາກຕາຍແລ້ວຈະໄປບັງເກີດໃນສຸກຄະຕິ

ໂລກາສະຫວັນ" ທ່ານເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດທັງຊັ້ນຕ່ຳ ແລະ ຊັ້ນສູງຈົບງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈງເຖິງໝູ່ສັດຜູ້ເປັນໄປຕາມກຳແນວນີ້ສັນນັ້ນ ຂໍ້ນີ້ຈັດເປັນປັນຍາຢ່າງໜຶ່ງຂອງພິກຂຸ

## ໗. ອາສະວັກຂະຍະຍານ

[໘໗໙] ເມື່ອຈິດເປັນສະມາທິບໍລິສຸດຜຸດຜ່ອງ ບໍ່ມີກິເລດຍົວະຍວນ ປາສະຈາກຄວາມເສົ້າໝອງອ່ອນໂຍນນຸ້ມນວນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນຢູ່ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນນ້ອມຈິດໄປເພື່ອອາສະວັກຂະຍະຍານ ຮູ້ແຈ້ງນຳຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸທັຍ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ ນີ້ອາສະວະ ນີ້ອາສະວະສະມຸທັຍ ນີ້ອາສະວະນິໂຣທະ ນີ້ອາສະວະນິໂຣທະຄາມິນີປະຕິປະທາ" ເມື່ອພິກຂຸນັ້ນ ຮູ້ເຫັນຢູ່ແນວນີ້ ຈິດນັ້ນຍ່ອມຫຼຸດພົ້ນຈາກກາມາສະວະ ພະວາສະວະ ແລະ ອະວິດຊາສະວະ ເມື່ອຈິດຫຼຸດພົ້ນແລ້ວກໍຮູ້ວ່າຫຼຸດພົ້ນແລ້ວ ຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ"

ປຽບຄື ສະນ້ຳໃສສະອາດບໍ່ຂຸ່ນມົວເທິງຈອມພູ ຄົນຕາດີຢືນຢູ່ຂອບສະນັ້ນເຫັນຫອຍໂຂ່ງແລະຫອຍກາບກີ້ ກ້ອນກວດ ແລະກ້ອນຫີນ ຫຼື ຝູງປານ້ອຍໃຫຍ່ທີ່ກຳລັງແຫວກວ່າຍລອຍໄປມາຢູ່ແດ່ ຢຸດຢູ່ແດ່ ໃນສະນັ້ນ ກໍຄິດແນວນີ້ວ່າ "ສະນ້ຳນີ້ໃສສະອາດ ບໍ່ຂຸ່ນມົວມີຫອຍໂຂ່ງ ແລະຫອຍກາບກີ້ ກ້ອນກວດ ກ້ອນຫີນ ແລະ ຝູງປານ້ອຍໃຫຍ່ເຫຼົ່ານີ້ກຳລັງແຫວກວ່າຍລອຍໄປມາຢູ່ກໍມີ ຢຸດຢູ່ກໍມີ ໃນສະນັ້ນ" ສັນໃດ ເມື່ອຈິດເປັນສະມາທິບໍລິສຸດຜຸດຜ່ອງບໍ່ມີກິເລດຍົວະຍວນປາສະຈາກຄວາມເສົ້າໝອງອ່ອນໂຍນນຸ້ມນວນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນຢູ່ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນນ້ອມຈິດໄປເພື່ອອາສະວັກຂະຍະຍານຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸທັຍ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີ ປະຕິປະທາ ນີ້ອາສະວະ ນີ້ອາສະວະສະມຸທັຍ ນີ້ອາສະວະນິໂຣທະ ນີ້ອາສະວະນິໂຣທະຄາມິນີປະຕິປະທາ" ເມື່ອພິກຂຸນັ້ນ ຮູ້ເຫັນຢູ່ແນວນີ້ ຈິດນັ້ນຍ່ອມຫຼຸດພົ້ນຈາກກາມາສະວະ ພະວາສະວະ ແລະ ອະວິດຊາສະວະ ເມື່ອຈິດຫຼຸດພົ້ນແລ້ວກໍຮູ້ວ່າຫຼຸດພົ້ນແລ້ວ ຮູ້ແຈ້ງວ່າ "ຊາດສິ້ນແລ້ວຢູ່ຈົບພົມມະຈັນແລ້ວ ໄດ້ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ" ສັນນັ້ນ ຂໍ້ນີ້ຈັດເປັນປັນຍາຢ່າງໜຶ່ງຂອງພິກຂຸ

## ສຸພະມານົບປະກາດຕົນເປັນອຸປາສິກາ

[໔໗໐] ມານົບ ອະຣິຍະປັນຍາຂັນທີ່ພຣະຜູ້ມີພຣະພາກເຈົ້າຕັດສັນລະເສີນ ແລະ ຊົງໃຫ້ປະຊາຊົນສະມາທານຕັ້ງໝັ້ນຢູ່ເປັນແບບນີ້ ໃນພຣະທຳວິໄນນີ້ບໍ່ມີກິດທີ່ຕ້ອງປະຕິບັດໃຫ້ຍິ່ງຂຶ້ນໄປກວ່າຂັ້ນອະຣິຍະປັນຍາຂັນນີ້ອີກແລ້ວ

ສຸພາມານົບກ່າວຂຶ້ນວ່າ "ໜ້າອັດສະຈັນຈິງແທ້ ບໍ່ເຄີຍປາກົດມີມາກ່ອນ ອະຣິຍະປັນຍາຂັນອັນບໍລິບູນສົມບູນຄືແບບນີ້ ຂ້າພະເຈົ້າບໍ່ເຄີຍໄດ້ຍິນມາກ່ອນວ່າ ອະຣິຍະປັນຍາຂັນທີ່ບໍລິບູນສົມບູນແບບນີ້ໃນສະມະນະພາມເຫຼົ່າອື່ນ ນອກພຣະສາດສະໜານີ້ເລີຍ ບໍ່ມີກິດອື່ນທີ່ຕ້ອງປະຕິບັດຍິ່ງຂຶ້ນໄປກວ່າຂັ້ນອະຣິຍະປັນຍາຂັນນີ້ອີກແລ້ວ ທ່ານອານົນພາສິດຂອງທ່ານອານົນຊັດແຈ້ງມ່ວນຫຼາຍ ທ່ານອານົນພາສິດຂອງທ່ານອານົນຊັດແຈ້ງມ່ວນຫຼາຍ ທ່ານອານົນປະກາດທຳຊັດແຈ້ງໂດຍປະການຕ່າງ ໆ ປຽບຄື ບຸກຄົນຫງາຍຂອງທີ່ງ້ວມຢູ່ ເປີດຂອງທີ່ປິດ ບອກທາງແກ່ຜູ້ຫຼົງທາງ ຫຼື ເຍືອງໄຟໃນທີ່ມືດໂດຍຕັ້ງໃຈວ່າຄົນມີຕາດີຈັກແນມເຫັນທາງໄດ້ ຂ້າພະເຈົ້ານີ້ຂໍຖືທ່ານພຣະໂຄດົມ ພ້ອມທັງພຣະທຳ ແລະພຣະສົງເປັນສະຣະນະ ຂໍທ່ານອານົນໂຜດຈື່ ຂ້າພະເຈົ້າວ່າ ເປັນອຸປາສິກາຜູ້ຖືສະຣະນະນັບຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ສຸພະສູດທີ ໑໐ ຈົບ**

# ໑໑. ເກວັດຕະສູດ

## ວ່າດ້ວຍບຸດຄະຫະບໍດີຊື່ເກວັດຕະ

## ເລື້ອງບຸດຄະຫະບໍດີຊື່ເກວັດຕະ

[໔໗໑] ຂ້າພະເຈົ້າໄດ້ຟັງມາແບບນີ້ ວ່າ

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ໃນສວນໝາກມ່ວງຂອງປາວາຣິກເສດຖີເຂດເມືອງນາລັນທາ ໃນຄັ້ງນັ້ນ ບຸດຄະຫະບໍດີຊື່ເກວັດຕະ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບຂາບພຣະຜູ້ມີພຣະພາກເຈົ້າແລ້ວ ນັ່ງຢູ່ໃນທີ່ສົມຄວນໄດ້ຂາບທູນວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນເມືອງນາລັນທາມັ່ງຄັ່ງອຸດົມສົມບູນມີປະຊາກອນຫຼາຍ ມີພົນລະເມືອງໜາແໜ້ນທີ່ລ້ວນແຕ່ເປັນຜູ້ເຫຼື້ອມໃສໃນພຣະຜູ້ມີພຣະພາກເຈົ້າ ຂ້າແຕ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດມີພຣະບັນຊາໃຫ້ພິກຂຸຈັກຮູບໜຶ່ງ ທີ່ພໍຈະສະແດງອິດທິ

ປາຕິຫານໂດຍອຸດຕະຣິມະນຸດສະທຳໄດ້ ເຊິ່ງຈະເຮັດໃຫ້ຊາວເມືອງນາລັນທາພາກັນເຫຼື້ອມໃສໃນພຣະຜູ້ມີພຣະພາກເຈົ້າຫຼາຍຍິ່ງຂຶ້ນສຸດຈະປະມານໄດ້"

ເມື່ອເຂົາຂາບທູນແນວນີ້ ພຣະຜູ້ມີພຣະພາກເຈົ້າຕັດວ່າ "ເກວັດຕະເຮົາບໍ່ໄດ້ສະແດງທຳແກ່ພິກຂຸແນວນີ້ວ່າ ມາເຖີ້ນພວກທ່ານຈົ່ງສະແດງອິດທິປາຕິຫານດ້ວຍອຸດຕະຣິມະນຸດສະທຳແກ່ຄະຫັດຜູ້ນຸ່ງຫົ່ມຜ້າຂາວນັ້ນເຖີ້ນ"

[໔໗໘] ແມ່ນເທື່ອທີ ໘ ບຸດຄະຫະບໍດີຊື່ເກວັດຕະກໍຂາບທູນວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ຂ້າພຣະອົງບໍ່ໄດ້ບີບບັງຄັບພຣະຜູ້ມີພຣະພາກເຈົ້າເລີຍ ແຕ່ຂ້າພຣະອົງຂໍຂາບທູນແນວນີ້ວ່າ ຂ້າແຕ່ ພຣະອົງຜູ້ຈະເລີນ ເມືອງນາລັນທາມັ່ງຄັ່ງອຸດົມສົມບູນມີປະຊາກອນຫຼາຍ ມີພົນລະເມືອງໜາແໜ້ນທີ່ລ້ວນ ແຕ່ເຫຼື້ອມໃສໃນພຣະຜູ້ມີພຣະພາກເຈົ້າ ຂ້າແຕ່ ພຣະອົງຜູ້ຈະເລີນຂໍປະທານວະໂຣກາດເຖີ້ນ ຂໍພຣະຜູ້ມີພຣະພາກເຈົ້າໂຜດມີພຣະບັນຊາໃຫ້ພິກຂຸຈັກຮູບໜຶ່ງ ທີ່ພໍຈະສະແດງອິດທິປາຕິຫານ ໂດຍອຸດຕະຣິມະນຸດສະທຳໄດ້ ເຊິ່ງຈະເຮັດໃຫ້ຊາວເມືອງນາລັນທາພາກັນເຫຼື້ອມໃສໃນພຣະຜູ້ມີພຣະພາກເຈົ້າຫຼາຍຍິ່ງຂຶ້ນ ສຸດຈະປະມານໄດ້"

ແມ່ນເທື່ອທີ ໓ ບຸດຄະຫະບໍດີຊື່ເກວັດຕະກໍຂາບທູນວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ຂ້າພຣະອົງບໍ່ໄດ້ບັງຄັບພຣະຜູ້ມີພຣະພາກເລີຍ ຯລຯ ພາກັນເຫຼື້ອມໃສໃນພຣະຜູ້ມີພຣະພາກເຈົ້າຫຼາຍຍິ່ງຂຶ້ນສຸດຈະປະມານໄດ້

## ປາຕິຫານ ໓ ຢ່າງ

[໔໗໓] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ເກວັດຕະ ເຮົາເຮັດໃຫ້ແຈ້ງປາຕິຫານ ໓ ແນວນີ້ດ້ວຍປັນຍາອັນຍິ່ງເອງໄດ້ແລ້ວ ຈຶ່ງໄດ້ປະກາດໃຫ້ຮູ້ກັນປາຕິຫານ ໓ ຢ່າງ ມີຄືອັນໃດແດ່? ຄືອິດທິປາຕິຫານ ອາເທສະນາປາຕິຫານ ແລະ ອະນຸສາສະນີປາຕິຫານ

## ໑. ອິດທິປາຕິຫານ

[໔໗໔] ເກວັດຕະ ກໍອິດທິປາຕິຫານເປັນແນວໃດ? ຄື ພິກຂຸໃນທຳວິໄນນີ້ສະແດງລິດໄດ້ຫຼາຍຢ່າງ ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ສະແດງໃຫ້ປາກົດ ຫຼື ໃຫ້ຫາຍໂຕໄປກໍໄດ້ ຍ່າງຊອດຝາກຳແພງ ແລະ ພູໄປໄດ້ບໍ່ຕິດຂັດຄືຍ່າງໄປໃນທີ່ວ່າງກໍໄດ້ ຜຸດຂຶ້ນຫຼືດຳລົງໃນແຜ່ນດິນຄືດຳໄປໃນນ້ຳກໍໄດ້ ຍ່າງເທິງນ້ຳໂດຍທີ່ນ້ຳບໍ່ແຍກຄືຍ່າງເທິງແຜ່ນດິນກໍໄດ້ ນັ່ງຂັດສະມາທິເຫາະໄປໃນອາກາດຄືນົກບິນໄປກໍໄດ້ ໃຊ້ຝ່າມືລູບຄຳດວງຈັນດວງອາທິດອັນມີລິດຫຼາຍມີອານຸພາບຫຼາຍກໍໄດ້ ໃຊ້ອຳນາດທາງກາຍຫາຍໂຕໄປຈົນເຖິງພົມມະໂລກກໍໄດ້

ເພາະເຫດນັ້ນ ຜູ້ໃດຜູ້ໜຶ່ງທີ່ມີສັດທາເຫຼື້ອມໃສເຫັນພິກຂຸນັ້ນ ສະແດງລິດໄດ້ຫຼາຍຢ່າງ ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຯລຯ ໃຊ້ອໍານາດທາງກາຍໄປຈົນເຖິງພົມມະໂລກກໍໄດ້ ຜູ້ນັ້ນຈະບອກແກ່ບຸກຄົນຜູ້ທີ່ຍັງບໍ່ມີສັດທາຍັງບໍ່ເຫຼື້ອມໃສວ່າ "ໜ້າອັດສະຈັນຈິງບໍ່ເຄີຍປາກົດສະມະນະນັກບວດຜູ້ມີລິດຫຼາຍ ມີອານຸພາບຫຼາຍ ຂ້າພະເຈົ້າຫາກໍເຄີຍເຫັນທ່ານນີ້ທີ່ສະແດງລິດໄດ້ຫຼາຍຢ່າງຄືຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຯລຯ ໃຊ້ອໍານາດທາງກາຍໄປຈົນເຖິງພົມມະໂລກກໍໄດ້" ເມື່ອເປັນແນວນັ້ນ ຜູ້ທີ່ຍັງບໍ່ມີສັດທາຍັງບໍ່ເຫຼື້ອມໃສຈະເວົ້າກັບຜູ້ທີ່ມີສັດທາເຫຼື້ອມໃສວ່າ "ທ່ານມີວິຊາປະເພດໜຶ່ງຮຽກວ່າ ຄັນທາລີ ພິກຂຸຮູບນັ້ນ ສະແດງລິດໄດ້ຫຼາຍຢ່າງຄືຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຯລຯ ໃຊ້ອໍານາດທາງກາຍໄປຈົນເຖິງພົມມະໂລກກໍໄດ້ ເພາະມີວິຊານັ້ນ"

ເກວັດຕະທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ? ຜູ້ທີ່ຍັງບໍ່ມີສັດທາຍັງບໍ່ເຫຼື້ອມໃສຈະເວົ້າກັບຜູ້ທີ່ມີສັດທາເຫຼື້ອມໃສແນວນັ້ນຫຼືບໍ່?"

ເກວັດຕະຂາບທູນວ່າ "ຕ້ອງເວົ້າຕໍ່ກັນຢ່າງນັ້ນແນ່ນອນ ໂດຍຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ເກວັດຕະ ເຮົາເລັງເຫັນໂທດໃນອິດທິປາຕິຫານແນວນີ້ ຈຶ່ງເບື່ອໜ່າຍ ລັງກຽດ ເລື້ອງອິດທິປາຕິຫານ"

## ໒. ອາເທສະນາປາຕິຫານ

[໔໘໕] ເກວັດຕະ ກໍອາເທສະນາປາຕິຫານເປັນແນວໃດ? ພິກຂຸໃນທໍາວິໄນນີ້ ທວາຍຈິດ ທວາຍເຈຕະສິກ ທວາຍຄວາມວິຕົກວິຈານຂອງສັດອື່ນ ຂອງບຸກຄົນອື່ນໄດ້ວ່າ ຈິດຂອງທ່ານເປັນແນວນີ້ເປັນໄປໂດຍອາການແນວນີ້ແລະເປັນດັ່ງນີ້

ເພາະເຫດນັ້ນ ຜູ້ໃດຜູ້ໜຶ່ງທີ່ມີສັດທາເຫຼື້ອມໃສ ເຫັນພິກຂຸນັ້ນທວາຍຈິດ ທວາຍເຈຕະສິກ ທວາຍຄວາມວິຕົກວິຈານຂອງສັດອື່ນ ຂອງບຸກຄົນອື່ນໄດ້ວ່າ ຈິດຂອງທ່ານເປັນແນວນີ້ເປັນໄປໂດຍອາການແນວນີ້ ເປັນດັ່ງນີ້ ຜູ້ນັ້ນຈະບອກແກ່ບຸກຄົນຜູ້ທີ່ຍັງບໍ່ມີສັດທາ ຍັງບໍ່ເຫຼື້ອມໃສວ່າ "ໜ້າອັດສະຈັນຈິງບໍ່ເຄີຍປາກົດສະມະນະມີລິດຫຼາຍ ມີອານຸພາບຫຼາຍ ຂ້າພະເຈົ້າຫາກໍເຄີຍເຫັນທ່ານຜູ້ນີ້ ທີ່ສາມາດທວາຍຈິດ ທວາຍເຈຕະສິກ ທວາຍຄວາມວິຕົກ ວິຈານຂອງສັດອື່ນຂອງບຸກຄົນອື່ນໄດ້ວ່າ ຈິດຂອງທ່ານເປັນແນວນີ້ ເປັນໄປໂດຍອາການແນວນີ້ເປັນດັ່ງນີ້"

ເມື່ອເປັນແນວນັ້ນ ຜູ້ທີ່ຍັງບໍ່ມີສັດທາຍັງບໍ່ເຫຼື້ອມໃສ ຈະເວົ້າກັບຜູ້ມີສັດທາເຫຼື້ອມໃສວ່າ "ທ່ານມີວິຊາປະເພດໜຶ່ງຮຽກວ່າ ມະນິກາ ພິກຂຸຮູບນັ້ນ ທວາຍຈິດ ທວາຍເຈຕະສິກ ທວາຍ

ຄວາມວິຕົກວິຈານຂອງສັດອື່ນ ຂອງບຸກຄົນອື່ນໄດ້ວ່າ ຈິດຂອງທ່ານເປັນແບບນີ້ ເປັນໄປໂດຍອາການແບບນີ້ ເປັນດັ່ງນີ້ເພາະມີວິຊານັ້ນ"

ເກວັດຕະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ? ຜູ້ທີ່ຍັງບໍ່ສັດທາ ຍັງບໍ່ເຫຼື້ອມໃສຈະເວົ້າກັບຜູ້ທີ່ມີສັດທາເຫຼື້ອມໃສແນວນັ້ນຫຼືບໍ່?"

ເກວັດຕະຂາບທູນວ່າ "ຕ້ອງເວົ້າຕໍ່ກັນຢ່າງນັ້ນແນ່ນອນ ໂດຍຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ເຮົາເລັງເຫັນໂທດໃນອາເທສະນາປາຕິຫານແບບນີ້ ຈຶ່ງເບື່ອໜາຍ ລັງກຽດ ເລື້ອງອາເທສະນາປາຕິຫານ"

## ໓. ອະນຸສາສະນີປາຕິຫານ

[໔໗໖] ເກວັດຕະກໍອະນຸສາສະນີປາຕິຫານເປັນແນວໃດ ພິກຂຸໃນທຳວິໄນນີ້ ຍ່ອມສັ່ງສອນແບບນີ້ວ່າ "ທ່ານຈົ່ງຄຳນຶງຄຶດແບບນີ້ ຢ່າຄຳນຶງຄຶດແບບນັ້ນ ຈົ່ງໃສ່ໃຈແບບນີ້ຢ່າໃສ່ໃຈແບບນັ້ນ ຈົ່ງລະສິ່ງນີ້ ຈົງເຂົ້າເຖິງສິ່ງນີ້ຢູ່ເຖີ້ນ" ນີ້ຈັດເປັນອະນຸສາສະນີປາຕິຫານຢ່າງໜຶ່ງ

ຍັງມີອີກເກວັດຕະ ຕະຖາຄົດອຸບັດຂຶ້ນມາໃນໂລກນີ້ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍຕົນເອງໂດຍຊອບ ຯລຯ (ເພິ່ງນຳຂໍ້ຄວາມເຕັມໃນສາມັນຍະຜົນສູດມາໃສ່ໄວ້ໃນທີ່ນີ້) ພິກຂຸຊື່ວ່າສົມບູນດ້ວຍສິນເປັນແບບນີ້ ຯລຯ ບັນລຸປະຖົມມະຊານຢູ່ນີ້ ຈັດເປັນອະນຸສາສະນີປາຕິຫານຢ່າງໜຶ່ງ ຯລຯ ບັນລຸທຸຕິຍະຊານຢູ່ ບັນລຸຕະຕິຍະຊານຢູ່ ບັນລຸຈະຕຸດຖະຊານຢູ່ ຯລຯ ນ້ອມຈິດໄປເພື່ອຍານະທັດສະນະຯລຯ ນີ້ຈັດເປັນອະນຸສາສະນີປາຕິຫານຢ່າງໜຶ່ງ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແບບນີ້ອີກຕໍ່ໄປ ນີ້ຈັດເປັນອະນຸສາດນີປາຕິຫານຢ່າງໜຶ່ງ

ເກວັດຕະ ເຮົາເຮັດໃຫ້ແຈ້ງປາຕິຫານ ໓ ຢ່າງນີ້ດ້ວຍປັນຍາອັນຍິ່ງເອງແລ້ວ ຈຶ່ງປະກາດໃຫ້ຜູ້ອື່ນຮູ້ຕາມ

## ເລື້ອງພິກຂຸສະແຫວງຫາຄວາມດັບຂອງມະຫາພູຕະຮູບ

[໔໗໗] ເກວັດຕະ ເລື້ອງເຄີຍມີມາແລ້ວ ພິກຂຸຮູບໜຶ່ງໃນໝູ່ພິກຂຸເກີດຄວາມຄິດຄຳນຶງຂຶ້ນຢ່າງນີ້ວ່າ ມະຫາພູຕະຮູບ ໔ ຄື ປະທະວີທາດ ອາໂປທາດ ເຕໂຊທາດ ແລະ ວາໂຍທາດດັບສະນິດໄດ້ໃນທີ່ໃດນໍ?

[໔໗໘] ເວລານັ້ນ ໃນທີນັ້ນເອງ ພິກຂຸຈຶ່ງເຂົ້າສະມາທິຮອດຂັ້ນທີ່ຈິດສາມາດແນມເຫັນທາງໄປເທວະໂລກ ເມື່ອແລ້ວທ່ານເຂົ້າໄປຫາພວກເທບຊັ້ນຈາຕຸມະຫາຣາຊິກາແລ້ວຖາມວ່າ

"ທ່ານຜູ້ມີອາຍຸ ມະຫາພູຕະຮູບທັ້ງ ໔ ນີ້ມີຄືປະທະວີທາດ ອາໂປທາດ ເຕໂຊທາດ ແລະ ວາໂຢທາດດັບສະນິດໄດ້ໃນທີ່ໃດ?"

ເມື່ອທ່ານຖາມແນວນີ້ ພວກເທບຊັ້ນຈາຕຸມະຫາຣາຊິກາຕອບວ່າ "ພວກເຮົາບໍ່ຮູ້ທີ່ທີ່ມະຫາພູຕະຮູບທັ້ງ ໔ ນັ້ນ ອັນມີປະທະວີທາດ ອາໂປທາດ ເຕໂຊທາດ ແລະ ວາໂຢທາດດັບສະນິດໄປຄືກັນ ແຕ່ທ້າວມະຫາຣາດ ໔ ເຊິ່ງເປັນຜູ້ຍິ່ງໃຫຍ່ ແລະສຳຄັນກວ່າພວກເຮົາຄົງຈະຮູ້ ແລະຕອບທ່ານໄດ້"

[໔໗໘] ເວລານັ້ນ ໃນທີນັ້ນເອງ ທ່ານຈຶ່ງເຂົ້າໄປຫາທ້າວມະຫາຣາດທັງ ໔ ແລ້ວຖາມວ່າ "ທ່ານຜູ້ມີອາຍຸ ມະຫາພູຕະຮູບທັ້ງ ໔ ນີ້ມີຄືປະທະວີທາດ ອາໂປທາດ ເຕໂຊທາດ ແລະ ວາໂຢທາດ ດັບສະນິດໄດ້ໃນທີ່ໃດ?" ເມື່ອພິກຂຸຖາມແນວນີ້ ທ້າວມະຫາຣາດທັງ ໔ ຕອບວ່າ "ແມ່ນພວກເຮົາກໍບໍ່ຮູ້ທີ່ທີ່ມະຫາພູຕະຮູບທັ້ງ ໔ ນັ້ນ ອັນມີປະທະວີທາດ ອາໂປທາດ ເຕໂຊທາດ ແລະ ວາໂຢທາດດັບສະນິດໄປຄືກັນ ແຕ່ພວກເທບຊັ້ນດາວະດຶງເຊິ່ງຍິ່ງໃຫຍ່ ແລະ ສຳຄັນກວ່າພວກເຮົາຄົງຈະຮູ້"

[໔໘໐] ເວລານັ້ນໃນທີນັ້ນອີກ ທ່ານຈຶ່ງເຂົ້າໄປຫາພວກເທບຊັ້ນດາວວະດຶງແລ້ວຖາມວ່າ "ທ່ານຜູ້ມີອາຍຸມະຫາພູຕະຮູບທັ້ງ ໔ ນີ້ຄື ປະທະວີທາດ ອາໂປທາດ ເຕໂຊທາດ ແລະ ວາໂຢທາດດັບສະນິດໄດ້ໃນທີ່ໃດ?" ເມື່ອທ່ານຖາມແນວນີ້ ພວກເທບຊັ້ນດາວວະດຶງຕອບວ່າ "ແມ່ນພວກເຮົາກໍບໍ່ຮູ້ທີ່ທີ່ມະຫາພູຕະຮູບທັ້ງ ໔ ນັ້ນ ອັນມີ ປະທະວີທາດ ອາໂປທາດ ເຕໂຊທາດ ແລະ ວາໂຢທາດ ດັບສະນິດໄປຄືກັນ ແຕ່ທ້າວສັກກະເທວະຣາດຜູ້ຍິ່ງໃຫຍ່ ແລະ ສຳຄັນກວ່າພວກເຮົາຄົງຈະຮູ້"

[໔໘໑] ເວລານັ້ນໃນທີນັ້ນຕໍ່ມາອີກ ທ່ານຈຶ່ງເຂົ້າໄປຫາທ້າວສັກກະເທວະຣາດ ແລ້ວຖາມວ່າ "ທ່ານຜູ້ມີອາຍຸມະຫາພູຕະຮູບທັ້ງ ໔ ນີ້ ມີຄືປະທະວີທາດ ອາໂປທາດ ເຕໂຊທາດ ແລະ ວາໂຢທາດ ດັບສະນິດໄດ້ໃນທີ່ໃດ?" ເມື່ອທ່ານຖາມແນວນີ້ ທ້າວສັກກະເທວະຣາດຕອບວ່າ "ແມ່ນເຮົາກໍບໍ່ຮູ້ທີ່ທີ່ມະຫາພູຕະຮູບທັ້ງ ໔ ນັ້ນ ອັນມີປະທະວີທາດ ອາໂປທາດ ເຕໂຊທາດ ແລະ ວາໂຢທາດດັບສະນິດໄປຄືກັນ ແຕ່ພວກເທບຊັ້ນຍາມາ ຯລຯ ເທບບຸດຊື່ສຸຍາມະ ຯລຯ ພວກເທບຊັ້ນດຸສິດ ຯລຯ ເທວະບຸດຊື່ສັນດຸສິ ຯລຯ ພວກເທບຊັ້ນນິມມານະຣະດີ ຯລຯ ເທວະບຸດຊື່ສຸນິມມິຕະ ຯລຯ ພວກເທບຊັ້ນປະຣະນິມມິຕະວະສະວັດດີ ຯລຯ ເທວະບຸດຊື່ວະສະວັດດີ ເຊິ່ງຍິ່ງໃຫຍ່ ແລະ ສຳຄັນກວ່າພວກເຮົາຄົງຈະຮູ້"

[໔໘໒] ເວລານັ້ນໃນທີນັ້ນຕໍ່ມາອີກ ທ່ານຈຶ່ງເຂົ້າໄປຫາເທບພະບຸດຊື່ວະສະວັດດີແລ້ວຖາມວ່າ "ທ່ານຜູ້ມີອາຍຸມະຫາພູຕະຮູບທັງ ໔ ນີ້ມີຄື ປະທະວີທາດ ອາໂປທາດ ເຕໂຊທາດ ແລະ ວາໂຢທາດ ດັບສະນິດໄດ້ໃນທີ່ໃດ" ເມື່ອທ່ານຖາມແນວນີ້ ເທບພະບຸດຊື່ວະສະວັດດີຕອບ

ວ່າ "ແມ່ນເຮົາກໍບໍ່ຮູ້ທີ່ທີ່ມະຫາພູຕະຮູບທັງ ໔ ອັນມີປະທະວີທາດ ອາໂປທາດ ເຕໂຊທາດ ແລະ ວາໂຍທາດດັບສະນິດໄປຄືກັນ ແຕ່ພວກເທບຜູ້ນັບຕິດພັນໃນໝູ່ພົມເຊິ່ງຍິ່ງໃຫຍ່ ແລະ ສຳຄັນກວ່າເຮົາຄົງຈະຮູ້"

[໔໙໓] ທີນັ້ນແລ ພິກຂຸຈຶ່ງເຂົ້າສະມາທິເຖິງຂັ້ນທີ່ຈິດເຫັນທາງໄປພົມມະໂລກ ເມື່ອແລ້ວທ່ານເຂົ້າໄປຫາພວກເທບຜູ້ນັບຕິດພັນໃນໝູ່ພົມແລ້ວຖາມວ່າ "ທ່ານຜູ້ມີອາຍຸ ມະຫາພູຕະຮູບທັ້ງ ໔ ນີ້ມີຄື ປະທະວີທາດ ອາໂປທາດ ເຕໂຊທາດ ແລະ ວາໂຍທາດ ດັບສະນິດໄດ້ໃນທີ່ໃດ?" ເມື່ອທ່ານຖາມແນວນີ້ພວກເທບຜູ້ນັບຕິດພັນໃນໝູ່ພົມ

ຕອບວ່າ "ແມ່ນພວກເຮົາກໍບໍ່ຮູ້ທີ່ທີ່ມະຫາພູຕະຮູບທັ້ງ ໔ ອັນມີປະທະວີທາດ ອາໂປທາດ ເຕໂຊທາດ ແລະ ວາໂຍທາດດັບສະນິດໄປຄືກັນ ແຕ່ພຣະພົມຜູ້ເປັນທ້າວມະຫາພົມ ຜູ້ຍິ່ງໃຫຍ່ບໍ່ມີໃຜຂົ່ມເຫັງໄດ້ເຫັນຊັດແຈ້ງກັນວ່າ ເປັນຜູ້ກຸມອຳນາດ ເປັນອິດສະຫຼະ ເປັນຜູ້ສ້າງຜູ້ບັນດານ ຜູ້ປະເສີດ ຜູ້ບົງການ ຜູ້ຊົງອຳນາດ ເປັນບິດາຂອງສັດຜູ້ເກີດແລ້ວ ແລະ ກຳລັງຈະເກີດ ເຊິ່ງເປັນຜູ້ຍິ່ງໃຫຍ່ກວ່າພົມທັງປວງຄົງຈະຮູ້"

ທ່ານຖາມວ່າ "ທ່ານຜູ້ມີອາຍຸເວລານີ້ທ້າວມະຫາພົມຢູ່ທີ່ໃດ?"

ພວກເທບເຫຼົ່ານັ້ນຕອບວ່າ "ແມ່ນພວກເຮົາກໍບໍ່ຮູ້ບ່ອນຢູ່ຂອງທ້າວມະຫາພົມ ຫຼື ທິດທາງທີ່ທ້າວມະຫາພົມຢູ່ ແຕ່ມີນິມິດທີ່ສັງເກດໄດ້ ຈະມີແສງສະຫວ່າງເກີດຂຶ້ນ ໂອພາດປາກົດຂຶ້ນມາໃນທີ່ໃດ ເມື່ອນັ້ນທ້າວມະຫາພົມກໍຈະປາກົດພຣະອົງ ດ້ວຍການທີ່ແສງສະຫວ່າງເກີດຂຶ້ນໂອພາດປາກົດຂຶ້ນໃນທີ່ນັ້ນ ນີ້ຈັດເປັນບຸຣະພະນິມິດກ່ອນການປາກົດໂຕຂຶ້ນຂອງທ້າວມະຫາພົມ" ຕໍ່ມາບໍ່ດົນທ້າວມະຫາພົມໄດ້ປາກົດພຣະອົງຂຶ້ນໃນທີ່ນັ້ນ

[໔໙໔] ລຳດັບນັ້ນ ພິກຂຸນັ້ນ ເຂົ້າໄປຫາທ້າວມະຫາພົມແລ້ວຖາມວ່າ "ທ່ານຜູ້ມີອາຍຸມະຫາພູຕະຮູບທັ້ງ ໔ ນີ້ ມີຄື ປະທະວີທາດ ອາໂປທາດ ເຕໂຊທາດ ແລະ ວາໂຍທາດ ດັບສະນິດໄດ້ໃນທີ່ໃດ" ເມື່ອທ່ານຖາມແນວນີ້ ທ້າວມະຫາພົມຕອບວ່າ "ເຮົາເປັນພົມຜູ້ເປັນທ້າວມະຫາພົມຜູ້ຍິ່ງໃຫຍ່ ບໍ່ມີໃຜຂົ່ມເຫັງໄດ້ ເຫັນຊັດແຈງກັນຢູ່ວ່າເປັນຜູ້ກຸມອຳນາດເປັນອິດສະຫຼະ ເປັນຜູ້ສ້າງຜູ້ບັນດານ ຜູ້ປະເສີດ ຜູ້ບົງການ ຜູ້ຊົງອຳນາດ ເປັນບິດາຂອງສັດຜູ້ເກີດແລ້ວ ແລະ ກຳລັງຈະເກີດອີກ"

ແມ່ນເທື່ອທີ ໒ ພິກຂຸນັ້ນ ກໍກ່າວກັບທ້າວມະຫາພົມວ່າ "ທ່ານຜູ້ມີອາຍຸ ອາດຕະມາບໍ່ໄດ້ຖາມທ່ານວ່າ ທ່ານເປັນພຣະພົມຜູ້ເປັນມະຫາພົມ ຜູ້ຍິ່ງໃຫຍ່ ບໍ່ມີໃຜຂົ່ມເຫັງໄດ້ເຫັນຊັດແຈ້ງກັນຢູ່ວ່າ ເປັນຜູ້ກຸມອຳນາດ ເປັນອິດສະຫຼະ ເປັນຜູ້ສ້າງ ຜູ້ບັນດານ ຜູ້ປະເສີດ ຜູ້ບົງການ ຜູ້ຊົງອຳນາດ ເປັນບິດາຂອງສັດຜູ້ເກີດແລ້ວ ແລະ ກຳລັງຈະເກີດເລີຍ ແຕ່ອາດຕະມາຖາມທ່ານແນວນີ້

ວ່າ "ທ່ານຜູ້ມີອາຍຸມະຫາພູຕະຮູບທັ້ງ ໔ ນີ້ ມີຄື ປະທະວີທາດ ອາໂປທາດ ເຕໂຊທາດ ແລະ ວາໂຍທາດ ດັບສະນິດໄດ້ໃນທີ່ໃດຕ່າງຫາກ"

ແມ່ນເທື່ອທີ ໔ ທ້າວມະຫາພົມກໍຄົງຕອບຄືເກົ່າວ່າ "ເຮົາເປັນພົມ ຜູ້ເປັນທ້າວມະຫາພົມ ຜູ້ຍິ່ງໃຫຍ່ ບໍ່ມີໃຜຂົ່ມເຫັງໄດ້ ເຫັນຊັດແຈ້ງກັນຢູ່ວ່າເປັນຜູ້ກຸມອຳນາດ ເປັນອິດສະຫຼະ ເປັນຜູ້ສ້າງ ຜູ້ບັນດານ ຜູ້ປະເສີດ ຜູ້ບົງການ ຜູ້ຊົງອຳນາດ ເປັນບິດາຂອງສັດຜູ້ເກີດແລ້ວ ແລະ ທີ່ກຳລັງຈະເກີດອີກ"

ແມ່ນເທື່ອທີ ໕ ພິກຂຸນັ້ນກ່າວຍັງຖາມທ້າວມະຫາພົມວ່າ "ທ່ານຜູ້ມີອາຍຸ ອາດຕະມາບໍ່ໄດ້ຖາມທ່ານວ່າ ທ່ານເປັນພຣະພົມ ຜູ້ເປັນມະຫາພົມ ຜູ້ຍິ່ງໃຫຍ່ ບໍ່ມີໃຜຂົ່ມເຫັງໄດ້ເຫັນຊັດແຈ້ງກັນຢູ່ວ່າເປັນຜູ້ກຸມອຳນາດ ເປັນອິດສະຫຼະ ເປັນຜູ້ສ້າງ ຜູ້ບັນດານ ຜູ້ປະເສີດ ຜູ້ບົງການ ຜູ້ຊົງອຳນາດ ເປັນບິດາຂອງສັດຜູ້ເກີດແລ້ວ ແລະ ທີ່ກຳລັງຈະເກີດອີກເລີຍ ແຕ່ອາດຕະມາຖາມທ່ານແນວນີ້ວ່າ "ທ່ານຜູ້ມີອາຍຸມະຫາພູຕະຮູບທັ້ງ ໔ ນີ້ ມີຄື ປະທະວີທາດ ອາໂປທາດ ເຕໂຊທາດ ແລະ ວາໂຍທາດ ດັບສະນິດໄດ້ໃນທີ່ໃດ?"

[໔໙໕] ທັນໃດນັ້ນເອງ ທ້າວມະຫາພົມກໍຈັບແຂນພິກຂຸນັ້ນ ຮີບພ້າວຈູງພາໄປບອນອື່ນ ແລ້ວກ່າວຂຶ້ນມາວ່າ "ພິກຂຸພວກເທບຜູ້ນັບຕິດພັນໃນໝູ່ພົມເຂົ້າໃຈດີວ່າ ບໍ່ມີສິ່ງໃດທີ່ພຣະພົມບໍ່ຮູ້ ບໍ່ເຫັນ ບໍ່ປະຈັກແຈ້ງ ດັ່ງນັ້ນ ເຮົາຈຶ່ງບໍ່ຕອບຕໍ່ໜ້າພວກເທບເຫຼົ່ານັ້ນວ່າ ແມ່ນເຮົາເອງກໍບໍ່ຮູ້ທີ່ທີ່ມະຫາພູຕະຮູບທັ້ງ ໔ ອັນມີປະທະວີທາດ ອາໂປທາດ ເຕໂຊທາດ ແລະ ວາໂຍທາດດັບສະນິດຄືກັນ ສະນັ້ນ ການທີ່ທ່ານລະເລີຍແນມຂ້າມພຣະຜູ້ມີພຣະພາກເຈົ້າ ແລ້ວມາຫາຄຳຕອບເລື້ອງນີ້ພາຍນອກນັບວ່າເຮັດຜິດ ນັບວ່າເຮັດພາດໄປ ໄປເຖີ້ນ ພິກຂຸ ທ່ານຈົ່ງກັບເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າແລ້ວທູນຖາມບັນຫານີ້ ແລະ ເພິ່ງຈື່ຈຳໄວ້ຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດຕອບເຖີ້ນ"

[໔໙໖] ລຳດັບນັ້ນ ພິກຂຸໄດ້ຫາຍໂຕໄປຈາກພົມມະໂລກກັບມາປາກົດໂຕຕໍ່ໜ້າເຮົາ ປຽບຄືຄົນແຂງແຮງຢຽດແຂນອອກ ຫຼື ພັບແຂນເຂົ້າສັນນັ້ນ ທ່ານຂາບເຮົາແລ້ວນັ່ງລົງໃນທີ່ສົມຄວນຖາມເຮົາວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ມະຫາພູຕະຮູບທັ້ງ ໔ ນີ້ ມີຄື ປະທະວີທາດອາໂປທາດ ເຕໂຊທາດ ແລະ ວາໂຍທາດດັບສະນິດລົງໄດ້ໃນທີ່ໃດນໍ?"

## ອຸບປະມາດ້ວຍນົກບິນໄປຫາຝັ່ງ

[໔໙໗] ເມື່ອທ່ານຖາມແນວນີ້ເຮົາໄດ້ຕອບວ່າ ພິກຂຸເລື້ອງເຄີຍມີມາແລ້ວ ພວກພໍ່ຄ້າແລນເຮືອໃນທະເລໄດ້ນຳເອົານົກຕີຣະທັດສີລົງເຮືອໄປນຳ ເມື່ອແນມເບິ່ງບໍ່ເຫັນຝັ່ງພວກເຂົາຈະປ່ອຍໃຫ້ນົກຕີຣະທັດສີບິນໄປ ເມື່ອນົກນັ້ນບິນອອກໄປແລ້ວ ຖ້າມັນຍັງແນມບໍ່ເຫັນຝັ່ງກໍຈະບິນກັບມາ

ຫາເຮືອ ຖ້າມັນແນມເຫັນຝັ່ງທີ່ຢູ່ໃກ້ສຸດກໍຈະບິນໄປທາງທິດນັ້ນ ພິກຂຸນີ້ກໍຄືກັນທ່ຽວສະແຫວ່ງຫາຄໍາຕອບໄປຈົນເຖິງພົມມະໂລກ ກໍຍັງບໍ່ໄດ້ຄໍາຕອບຂອງບັນຫານີ້ ໃນທີ່ສຸດກໍຕ້ອງກັບມາຫາເຮົາ ບັນຫານີ້ທ່ານບໍ່ຄວນຖາມວ່າ ມະຫາພູຕະຮູບທັງ ໔ ນີ້ ອັນມີ ປະທະວີທາດ ອາໂປທາດ ເຕໂຊທາດ ແລະ ວາໂຍທາດ ດັບສະນິດລົງໄດ້ໃນທີ່ໃດ?"

[໔໙໗] ແຕ່ຄວນຖາມແນວນີ້ວ່າ ປະທະວີທາດ ອາໂປທາດ ເຕໂຊທາດ ວາໂຍທາດ ຕັ້ງຢູ່ບໍ່ໄດ້ໃນທີ່ໃດ? ອຸປາທາຍະຮູບ ທີ່ຍາວ ແລະ ສັ້ນ ລະອຽດແລະຫຍາບ ຈົບງາມແລະບໍ່ງາມ ຕັ້ງຢູ່ບໍ່ໄດ້ໃນທີ່ໃດ ນາມແລະຮູບ ຍ່ອມດັບສະນິດໃນທີ່ໃດ?

[໔໙໘] ໃນບັນຫານັ້ນ ມີຄໍາຕອບດັ່ງນີ້ ປະທະວີທາດ ອາໂປທາດ ເຕໂຊທາດ ວາໂຍທາດ ຍ່ອມຕັ້ງຢູ່ບໍ່ໄດ້ໃນວິນຍານ ເຊິ່ງເປັນສິ່ງທີ່ເບິ່ງບໍ່ເຫັນ ບໍ່ມີທີ່ສຸດ ແຕ່ມີທີ່ເຂົ້າໄປຫາໄດ້ອຸປາທາຍະຮູບທີ່ຍາວແລະສັ້ນ ລະອຽດແລະຫຍາບ ຈົບງາມແລະບໍ່ງາມ ຍ່ອມຕັ້ງຢູ່ບໍ່ໄດ້ໃນວິນຍານນີ້ ເຊັ່ນດຽວກັນນາມແລະຮູບ ຍ່ອມດັບສະນິດໃນວິນຍານນີ້ ເພາະວິນຍານດັບໄປ ນາມແລະຮູບນັ້ນກໍຍ່ອມດັບສະນິດໃນບ່ອນນັ້ນເອງ

[໕໐໐] ເມື່ອພຣະຜູ້ມີພຣະພາກໄດ້ຕັດພາສິດນີ້ແລ້ວ ບຸດຄະຫະບໍດີຊື່ເກວັດຕະໄດ້ມີໃຈຍິນດີຊື່ນຊົມພາສິດຂອງພຣະຜູ້ມີພຣະພາກແລ້ວແລ

**ເກວັດຕະສູດທີ ໑໑ ຈົບ**

# ໑໘. ໂລຫິດຈະສູດ

## ວ່າດ້ວຍພາມຊື່ໂລຫິດຈະ

[໕໐໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໃນແຄວ້ນໂກສົນ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ປະມານ ໕໐໐ ຮູບ ສະເດັດເຖິງໝູ່ບ້ານສາລະວະຕິກາ ສະໄໝນັ້ນໂລຫິດຈະພາມປົກຄອງໝູ່ບ້ານສາລະວະຕິກາ ເຊິ່ງມີປະຊາກອນແລະສັດລ້ຽງຫຼວງຫຼາຍ ມີພືດພັນທັນຍາຫານແລະນໍ້າຫຍ້າອຸດົມສົມບູນ ເປັນພຣະຣາດຊະຊັບທີ່ພຣະເຈົ້າປະເສນທິໂກສົນ ພຣະຣາດຊະທານປູນບໍາເໜັດໃຫ້ເປັນພົມໄທ (ສ່ວນພິເສດ)

[໕໐໔] ໃນເວລານັ້ນ ໂລຫິດຈະພາມໄດ້ມີຄວາມຄິດເຫັນຊົ່ວຮ້າຍເກີດຂຶ້ນຢ່າງວ່າ "ສະມະນະ ຫຼື ພາມໃນໂລກນີ້ ຖ້າເປັນຜູ້ທີ່ບັນລຸກຸສົນທຳ ເມື່ອບັນລຸແລ້ວບໍ່ຄວນສອນຄົນອື່ນ ເພາະບໍ່ມີຜູ້ຮັບຄຳສອນໃດ ຈະຊ່ວຍຜູ້ສອນໄດ້ ປຽບຄື ບຸກຄົນຜູ້ຕັດເຄື່ອງຈອງຈຳເກົ່າອອກແລ້ວ ສ້າງເຄື່ອງຈອງຈຳໃໝ່ຂຶ້ນມາແທນ ເຮົາຮຽກຂໍ້ປຽບທຽມແນວນີ້ວ່າ ເປັນຄວາມຫຼົງອັນຊົ່ວຮ້າຍ ເພາະບໍ່ມີຜູ້ຮັບຄຳສອນໃດຈະຊ່ວຍຜູ້ສອນໄດ້"

[໕໐໓] ໂລຫິດຈະພາມໄດ້ຟັງຂ່າວວ່າ "ພຣະສະມະນະໂຄດົມ ເປັນສັກກະຍະບຸດສະເດັດອອກບວດຈາກສາກະຍະຕະກູນ ສະເດັດຈາຣິກຢູ່ໃນແຄວັ້ນໂກສົນ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ມີປະມານ ໕໐໐ ອົງ ສະເດັດເຖິງໝູ່ບ້ານສາລະວະຕິກາໂດຍລຳດັບ ທ່ານພຣະໂຄດົມນັ້ນ ມີກິດຕິສັບອັນງາມຊ່າລືໄປແນວນີ້ວ່າ ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍທຳ ພຽບພ້ອມດ້ວຍວິດຊາ ແລະ ຈະຣະນະ ສະເດັດໄປດີຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງຍອດຢ້ຽມ ເປັນສາດສະດາຂອງເທວະດາ ແລະ ມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ພຣະອົງຊົງຮູ້ແຈ້ງໂລກນີ້ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະ ໝູ່ສັດພ້ອມທັງສະມະນະພາມ ເທວະດາ ແລະ ມະນຸດທັງຫຼາຍ ດ້ວຍພຣະອົງເອງ ແລ້ວຊົງປະກາດໃຫ້ຜູ້ອື່ນຮູ້ນຳ ຊົງສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະ ມີຄວາມງາມໃນທີ່ສຸດ ຊົງປະກາດພົມມະຈັນ ພ້ອມທັງອັດຖະ ແລະ ພະຍັນຊະນະ ບໍລິສຸດ ບໍລິບູນຄົບຖ້ວນ ການໄດ້ພົບພຣະອະຣະຫັນທັງຫຼາຍແນວນີ້ ເປັນບຸນກຸສົນອັນສູງຢ່າງແທ້ຈິງ

[໕໐໔] ໃນທີນັ້ນເອງ ໂລຫິດຈະພາມຮຽກຊ່າງຕັດຜົມຊື່ໂຣສິກະມາສັ່ງວ່າ "ມານີ້ ດູຣາເພື່ອນໂຣສິກະ ທ່ານຈົ່ງເຂົ້າໄປເຝົ້າພຣະສະມະນະໂຄດົມ ແລ້ວທູນຖາມພຣະສະມະນະໂຄດົມເຖິງສຸກຂະພາບ ຄວາມມີໂຣຄາພາດໜ້ອຍ ຄວາມສະບາຍດີ ມີພຣະພະລານາໄມສົມບູນ ຢູ່ສຳລານ ຕາມຄຳຂອງເຮົາວ່າ ໂລຫິດຈະພາມທູນຖາມທ່ານພຣະໂຄດົມເຖິງສຸກຂະພາບ ຄວາມມີໂຣຄາພາດໜ້ອຍ ຄວາມສະບາຍດີມີພຣະພະລານາໄມສົມບູນ ຢູ່ສຳລານແລະທ່ານຈົ່ງຂາບທູນວ່າ ຂໍທ່ານພຣະໂຄດົມພ້ອມດ້ວຍພິກຂຸສົງ ໂຜດຊົງຮັບພັດຕາຫານຂອງໂລຫິດຈະພາມໃນມື້ອື່ນນີ້ດ້ວຍເຖີ້ນ

[໕໐໕] ໂຣສິກະຊ່າງຕັດຜົມຮັບຄຳແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບຂາບແລ້ວນັ່ງລົງໃນທີ່ສົມຄວນຂາບທູນວ່າ "ໂລຫິດຈະພາມ ທູນຖາມພຣະຜູ້ມີພຣະພາກເຖິງສຸກຂະພາບຄວາມມີໂຣຄາພາດໜ້ອຍ ຄວາມສະບາຍດີມີພຣະພະລານາໄມສົມບູນ ຢູ່ສຳລານ ແລະ ຂາບທູນວ່າ ຂໍພຣະຜູ້ມີພຣະພາກພ້ອມດ້ວຍພິກຂຸສົງ ໂຜດຊົງຮັບພັດຕາຫານຂອງໂລຫິດຈະພາມ ໃນມື້ອື່ນນີ້ດ້ວຍເຖີ້ນ

ພຣະຜູ້ມີພຣະພາກ ຊົງຮັບນິມົນດ້ວຍອາການດຸດສະດີ

[໔໐໖] ໃນທີນັ້ນ ໂຣສິກະຊ່າງຕັດຜົມຮູ້ອາການທີ່ພຣະຜູ້ມີພຣະພາກເຈົ້າ ຊົງຮັບນິມົນ ແລ້ວຈຶ່ງລຸກຈາກບ່ອນນັ່ງ ຂາບພຣະຜູ້ມີພຣະພາກເຈົ້າ ທຳປະທັກສິນແລ້ວກັບມາເຂົ້າໄປຫາໂລຫິດຈະພາມແລ້ວບອກວ່າ "ຂ້າພະເຈົ້າ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າຕາມຄຳຂອງທ່ານວ່າ "ໂລຫິດຈະພາມທູນຖາມພຣະຜູ້ມີພຣະພາກເຈົ້າ ຯລຯ ໃນມື້ອື່ນນີ້ດ້ວຍເຖີ້ນ" ດັ່ງນີ້ແລ້ວ ພຣະຜູ້ມີພຣະພາກເຈົ້ານັ້ນກໍຊົງຮັບນິມົນແລ້ວ

[໔໐໗] ເມື່ອລ່ວງຣາຕີນັ້ນໄປ ໂລຫິດຈະພາມໄດ້ຈັດຂອງຂົບສັນຢ່າງດີໄວ້ໃນນິເວດຂອງຕົນຮຽບຮ້ອຍແລ້ວ ໄດ້ຮຽກໂຣສິກະຊ່າງຕັດຜົມມາສັ່ງວ່າ "ມານີ້ກ່ອນ ດູຣາ ເພື່ອນໂຣສິກະທ່ານຈົ່ງເຂົ້າໄປເຝົ້າພຣະສະມະນະໂຄດົມ ແລ້ວຂາບທູນໃຫ້ຮູ້ວ່າ ທ່ານພຣະໂຄດົມໄດ້ເວລາແລ້ວ ພັດຕາຫານສຳເລັດພ້ອມແລ້ວ"

ໂຣສິກະຊ່າງຕັດຜົມຮັບຄຳຂອງໂລຫິດຈະພາມແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຖິງທີ່ປະທັບຂາບແລ້ວຢືນຢູ່ໃນທີ່ສົມຄວນຂາບທູນວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນໄດ້ເວລາແລ້ວ ພັດຕາຫານສຳເລັດແລ້ວພ້ອມແລ້ວ"

[໔໐໘] ເວລາຫຸງເຊົ້າແຈ້ງມາ ພຣະຜູ້ມີພຣະພາກເຈົ້າ ຊົງຄອງອັນຕະຣະວາສົກຖືບາດແລະຈີວອນ ສະເດັດເຂົ້າໄປສູ່ໝູ່ບ້ານສາລະວະຕິກາ ພ້ອມດ້ວຍພິກຂຸສົງ ໂຣສິກະຊ່າງຕັດຜົມຕາມສະເດັດໄປທາງຫຼັງ ຂາບທູນວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ໂລຫິດຈະພາມມີຄວາມຄິດເຫັນຊົ່ວຮ້າຍເກີດຂຶ້ນຢ່າງນີ້ວ່າ "ສະມະນະ ຫຼື ພາມໃນໂລກນີ້ ຜູ້ບັນລຸກຸສົນທຳ ແລ້ວບໍ່ຄວນສອນຄົນອື່ນ ເພາະບໍ່ມີຜູ້ຮັບຄຳສອນໃດຈະຊ່ວຍຜູ້ສອນໄດ້ ປຽບຄື ບຸກຄົນຜູ້ຕັດເຄື່ອງຈອງຈຳເກົ່າອອກແລ້ວສ້າງເຄື່ອງຈອງຈຳອັນໃໝ່ຂຶ້ນມາແທນ ເຮົາຮຽກຂໍ້ປຽບທຽມແນວນີ້ວ່າເປັນຄວາມຫຼົງອັນຊົ່ວຮ້າຍ ເພາະບໍ່ມີຜູ້ຮັບຄຳສອນໃດຈະຊ່ວຍຜູ້ສອນໄດ້" ຂ້າແຕ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດເຖີ້ນ ຂໍພຣະຜູ້ມີພຣະພາກໂຜດຊົງປົດເປື້ອງໂລຫິດຈະພາມອອກຈາກຄວາມຄິດເຫັນອັນຊົ່ວຮ້າຍນັ້ນດ້ວຍເຖີ້ນ ໂດຍຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໂຣສິກະ ນັ້ນເປັນໜ້າທີ່ຂອງເຮົາ"

ໃນທີນັ້ນເອງແລ ພຣະຜູ້ມີພຣະພາກເຈົ້າສະເດັດເຂົ້າໄປສູ່ນິເວດຂອງໂລຫິດຈະພາມແລ້ວປະທັບນັ່ງເທິງອາສະນະທີ່ປູໄວ້ ໂລຫິດຈະພາມປະເຄນຂອງຂົບສັນຢ່າງດີແແກ່ພິກຂຸສົງອັນມີພຣະພຸດທະເຈົ້າຊົງເປັນປະທານດ້ວຍມືຂອງຕົນເອງຈົນອີ່ມໜຳສຳຣານແລ້ວ

## ຄວາມຂວນຂວາຍຂອງໂລຫິດຈະພາມ

[໕໐໗] ເມື່ອພຣະຜູ້ມີພຣະພາກ ສະເຫວີຍຈັນສຳເລັດເສັດແລ້ວ ຊົງວາງພຣະຫັດຫ່າງອອກຈາກພາເຂົ້າ ໂລຫິດຈະພາມຈຶ່ງໄດ້ນັ່ງລົງໃນທີ່ສົມຄວນສ່ວນຂອງຕົນ ເຊິ່ງຕ່ຳກວ່າທີ່ນັ່ງຂອງພຣະຜູ້ມີພຣະພາກ

ພຣະຜູ້ມີພຣະພາກເຈົ້າຕັດຖາມໂລຫິດຈະພາມວ່າ "ໂລຫິດ ຈະໄດ້ຮູ້ວ່າທ່ານມີຄວາມຄິດເຫັນຊົ່ວຮ້າຍເກີດຂຶ້ນແນວນີ້ວ່າ "ສະມະນະ ຫຼື ພາມໃນໂລກນີ້ຜູ້ບັນລຸກຸສົນທຳບໍ່ຄວນສອນຄົນອື່ນ ເພາະບໍ່ມີຜູ້ຮັບຄຳສອນໃດຈະຊ່ວຍຜູ້ສອນໄດ້ ປຽບຄື ບຸກຄົນຜູ້ຕັດເຄື່ອງຈອງຈຳອັນເກົ່າອອກແລ້ວ ສ້າງເຄື່ອງຈອງຈຳອັນໃໝ່ຂຶ້ນມາແທນ ເຮົາຮຽກຂໍ້ປຽບທຽບແນວນີ້ວ່າ ເປັນຄວາມຫຼົງອັນຊົ່ວຮ້າຍ ເພາະບໍ່ມີຜູ້ຮັບຄຳສອນໃດ ຈະຊ່ວຍຜູ້ສອນໄດ້" ດັ່ງນີ້ ເປັນຄວາມຈິງແທ້ບໍ?

ໂລຫິດຈະທູນຕອບວ່າ "ຈິງແທ້ ແນວນັ້ນ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ໂລຫິດຈະ ທ່ານເຂົ້າໃຈເລື້ອງນີ້ວ່າແນວໃດ ທ່ານເປັນຜູ້ປົກຄອງໝູ່ບ້ານສາລະວະຕິກາບໍ່ແມ່ນບໍ?"

ໂລຫິດຈະທູນຕອບວ່າ "ເປັນແນວນັ້ນ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າ ຕັດຖາມຕໍ່ໄປວ່າ "ໂລຫິດຈະ ຜູ້ທີ່ເວົ້າແນວນີ້ວ່າ "ໂລຫິດຈະພາມເປັນຜູ້ປົກຄອງໝູ່ບ້ານສາລະວະຕິກາ ກໍຄວນເປັນຜູ້ໄດ້ຮັບຜົນປະໂຫຍດທີ່ເກີດໃນໝູ່ບ້ານສາລະວະຕິກາແຕ່ພຽງຜູ້ດຽວ ບໍ່ຄວນແບ່ງໃຫ້ຜູ້ອື່ນ" ຜູ້ທີ່ເວົ້າແນວນີ້ຈະຊື່ວ່າສ້າງຄວາມເດືອດຮ້ອນໃຫ້ແກ່ຄົນທີ່ອາໄສທ່ານລ້ຽງຊີບແມ່ນຫຼືບໍ່?"

ໂລຫິດຈະທູນຕອບວ່າ "ຊື່ວ່າສ້າງຄວາມເດືອດຮ້ອນໃຫ້ແມ່ນແລ້ວ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດຖາມຕໍ່ໄປວ່າ "ເມື່ອສ້າງຄວາມເດືອດຮ້ອນໃຫ້ຈະຊື່ວ່າຫວັງປະໂຫຍດ ຫຼື ບໍ່ຫວັງປະໂຫຍດຕໍ່ຄົນເຫຼົ່ານັ້ນ

ໂລຫິດຈະທູນຕອບວ່າ "ຊື່ວ່າ ບໍ່ຫວັງປະໂຫຍດ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດຖາມຕໍ່ໄປວ່າ "ຜູ້ບໍ່ຫວັງປະໂຫຍດ ຈະຊື່ວ່າມີເມດຕາຈິດ ຫຼື ຊື່ວ່າຄິດເປັນສັດຕູກັບຄົນເຫຼົ່ານັ້ນ?"

ໂລຫິດຈະທູນຕອບວ່າ "ຊື່ວ່າຄິດເປັນສັດຕູຕໍ່ຄົນເຫຼົ່ານັ້ນ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດຖາມຕໍ່ໄປວ່າ "ເມື່ອຄິດເປັນສັດຕູຈະຊື່ວ່າເປັນມິດສາທິດຖິຄວາມເຫັນຜິດ ຫຼື ສຳມາທິດຖິຄວາມເຫັນຖືກ?"

ໂລຫິດຈະທູນຕອບວ່າ "ຊື່ວ່າເປັນມິດສາທິດຖິ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຜູ້ເປັນມິດສາທິດຖິເຮົາກ່າວວ່າມີຄະຕິຢ່າງໃດຢ່າງໜຶ່ງໃນ ໘ ຢ່າງນີ້ຄື ນະຣົກ ຫຼື ກຳເນີດເດຣັດສານ"

[໕໑໐] ພຣະຜູ້ມີພຣະພາກເຈົ້າຕັດຖາມຕໍ່ໄປວ່າ "ໂລຫິດຈະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ ພຣະເຈົ້າປະເສນທິໂກສົນ ຊົງປົກຄອງແຄວ້ນກາສີກັບແຄວ້ນໂກສົນຢູ່ບໍ່ແມ່ນບໍ?"

ໂລຫິດຈະທູນຕອບວ່າ "ເປັນແນວນັ້ນ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າ ຕັດຖາມຕໍ່ໄປວ່າ "ໂລຫິດຈະ ຜູ້ທີ່ກ່າວວ່າ "ພຣະເຈົ້າປະເສນທິໂກສົນ ຊົງປົກຄອງແຄວ້ນກາສີກັບແຄວ້ນໂກສົນ ພຣະອົງກໍຄວນໄດ້ຮັບຜົນປະໂຫຍດທີ່ເກີດໃນແຄວ້ນທັງສອງແຕ່ພຽງຜູ້ດຽວບໍ່ຄວນພຣະຣາດຊະທານໃຫ້ແກ່ຜູ້ອື່ນ" ຜູ້ທີ່ເວົ້າແນວນີ້ຈະຊື່ວ່າສ້າງຄວາມເດືອດຮ້ອນໃຫ້ແກ່ທ່ານ ແລະ ແກ່ຄົນອື່ນ ເຊິ່ງອາໄສພຣະບໍຣົມໂພທິສົມພານຂອງພຣະອົງລ້ຽງຊີບແມ່ນຫຼືບໍ່?"

ໂລຫິດຈະທູນຕອບວ່າ "ຊື່ວ່າສ້າງຄວາມເດືອດຮ້ອນໃຫ້ຜູ້ອື່ນ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດຖາມຕໍ່ໄປວ່າ "ເມື່ອທຳຄວາມເດືອດຮ້ອນໃຫ້ ຈະຊື່ວ່າຫວັງປະໂຫຍດ ຫຼື ບໍ່ຫວັງປະໂຫຍດຕໍ່ຄົນເຫຼົ່ານັ້ນ"

ໂລຫິດຈະທູນຕອບວ່າ "ຊື່ວ່າບໍ່ຫວັງປະໂຫຍດ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດຖາມຕໍ່ໄປວ່າ "ຜູ້ບໍ່ຫວັງປະໂຫຍດຈະຊື່ວ່າ ມີເມດຕາຈິດ ຫຼື ຊື່ວ່າຄິດເປັນສັດຕູກັບຄົນເຫຼົ່ານັ້ນ?"

ໂລຫິດຈະທູນຕອບວ່າ "ຊື່ວ່າຄິດເປັນສັດຕູຕໍ່ຄົນເຫຼົ່ານັ້ນ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າ ຕັດຖາມຕໍ່ໄປວ່າ "ເມື່ອຄິດເປັນສັດຕູຈະຊື່ວ່າ ເປັນມິດສາທິດຖິ ຫຼື ສຳມາທິດຖິ"

ໂລຫິດຈະທູນຕອບວ່າ "ຊື່ວ່າ ເປັນມິດສາທິດຖິ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຜູ້ເປັນມິດສາທິດຖິ ເຮົາກ່າວວ່າມີຄະຕິຢ່າງໃດຢ່າງໜຶ່ງ ໃນ ໘ຢ່າງນີ້ຄື ນະຣົກ ຫຼື ກຳເນີດເດຣັດສານ

[໕໑໑] ໂລຫິດຈະທີ່ກ່າວມານີ້ສະຫຼຸບໄດ້ວ່າ ຜູ້ກ່າວວ່າ "ໂລຫິດຈະພານປົກຄອງໝູ່ບ້ານສາລະວະຕິກາ ກໍຄວນໄດ້ຮັບຜົນປະໂຫຍດທີ່ເກີດໃນໝູ່ບ້ານສາລະວະຕິກາ ແຕ່ພຽງຜູ້ດຽວບໍ່ຄວນແບ່ງໃຫ້ຜູ້ອື່ນ" ຜູ້ທີ່ເວົ້າແນວນີ້ ຊື່ວ່າ ສ້າງຄວາມເດືອດຮ້ອນໃຫ້ແກ່ຄົນທີ່ອາໄສທ່ານລ້ຽງຊີບ ເມື່ອສ້າງຄວາມເດືອດຮ້ອນໃຫ້ກໍຊື່ວ່າ ບໍ່ຫວັງປະໂຫຍດ ຜູ້ບໍ່ຫວັງປະໂຫຍດກໍຊື່ວ່າ ຄິດເປັນສັດຕູ ເມື່ອຄິດເປັນສັດຕູກໍຊື່ວ່າ ເປັນມິດສາທິດຖິ ຂໍ້ອຸປະມານີ້ກໍເຊັ່ນກັນ ຜູ້ທີ່ກ່າວວ່າ "ສະມະນະ ຫຼື ພາມໃນໂລກນີ້ທີ່ບັນລຸກຸສົນທຳແລ້ວ ບໍ່ຄວນສອນຜູ້ອື່ນ ເພາະບໍ່ມີຜູ້ຮັບຄຳສອນໃດຈະຊ່ວຍຜູ້ສອນໄດ້ ປຽບຄື ບຸກຄົນຜູ້ຕັດເຄື່ອງຈອງຈຳເກົ່າອອກແລ້ວ ສ້າງເຄື່ອງຈອງຈຳໃໝ່ຂຶ້ນມາແທນ ເຮົາຮຽກຂໍ້ປຽບທຽບແນວນີ້ວ່າ ເປັນຄວາມຫຼົງອັນຊົ່ວຮ້າຍເພາະບໍ່ມີຜູ້ຮັບຄຳສອນໃດ ຈະຊ່ວຍຜູ້ສອນໄດ້" ຜູ້ທີ່ເວົ້າແນວນີ້ຊື່ວ່າສ້າງຄວາມເດືອດຮ້ອນໃຫ້ແກ່ເຫຼົ່າກຸນລະບຸດ ຜູ້ອາໄສທຳວິໄນທີ່ເຮົາສະແດງແລ້ວ ບັນລຸຄຸນວິເສດເຮັດໃຫ້ແຈ້ງໂສດາປັດຕິຜົນແດ່ ເຮັດໃຫ້ແຈ້ງສະກະທາຄາມິຜົນແດ່ ເຮັດໃຫ້ແຈ້ງອະນາຄາມິຜົນແດ່ ເຮັດໃຫ້ແຈ້ງອະຣະຫັນຕະຜົນແດ່ ເຫຼົ່ານີ້ ກໍຊື່ວ່າ ສ້າງຄວາມເດືອດຮ້ອນໃຫ້ແກ່ເຫຼົ່າກຸນລະບຸດ ຜູ້ອົບຮົມຄຸນເຮັດໃຫ້ແກ່ກ້າເພື່ອບັນລຸທຳຂັ້ນສູງອັນວິເສດຍິ່ງຂຶ້ນໄປ ເມື່ອທຳຄວາມເດືອດຮ້ອນໃຫ້ກໍຊື່ວ່າບໍ່ຫວັງປະໂຫຍດ ຜູ້ບໍ່ຫວັງປະໂຫຍດກໍຊື່ວ່າຄິດເປັນສັດຕູ ເມື່ອຄິດເປັນສັດຕູກໍຊື່ວ່າເປັນມິດສາທິດຖິ ຜູ້ເປັນມິດສາທິດຖິເຮົາກ່າວວ່າມີຄະຕິຢ່າງໃດຢ່າງໜຶ່ງໃນ ໘ ຢ່າງນີ້ຄື ນະຣົກ ຫຼື ກຳເນີດສັດເດຣັດສານ

[໕໑໘] ໂລຫິດຈະ ຄົນທີ່ກ່າວວ່າ "ພຣະເຈົ້າປະເສນທິໂກສົນ ຊົງປົກຄອງແຄວ້ນກາສີກັບແຄວ້ນໂກສົນ ພຣະອົງກໍຄວນໄດ້ຮັບຜົນປະໂຫຍດທີ່ເກີດໃນແຄວ້ນທັງສອງ ແຕ່ພຽງພຣະອົງເອງບໍ່ຄວນພຣະຣາດຊະທານໃຫ້ແກ່ຜູ້ອື່ນ" ຜູ້ທີ່ເວົ້າແນວນີ້ຊື່ວ່າ ສ້າງຄວາມເດືອດຮ້ອນໃຫ້ແກ່ທ່ານແລະແກ່ຄົນອື່ນ ເຊິ່ງອາໄສພຣະບໍຣົມໂພທິສົມພາຣະຂອງພຣະອົງລ້ຽງຊີບ ເມື່ອສ້າງຄວາມເດືອດຮ້ອນໃຫ້ກໍຊື່ວ່າບໍ່ຫວັງປະໂຫຍດ ຜູ້ບໍ່ຫວັງປະໂຫຍດກໍຊື່ວ່າຄິດເປັນສັດຕູ ເມື່ອຄິດເປັນສັດຕູກໍຊື່ວ່າເປັນມິດສາທິດຖິ ຂໍ້ອຸປະໄມນີ້ກໍເຊັ່ນດຽວກັນ ຜູ້ທີ່ກ່າວວ່າ "ສະມະນະ ຫຼື ພາມໃນໂລກນີ້ບັນລຸກຸສົນທຳແລ້ວບໍ່ຄວນສອນຄົນອື່ນ ເພາະບໍ່ມີຜູ້ຮັບຄຳສອນໃດຈະຊ່ວຍຜູ້ສອນໄດ້ ປຽບຄື ບຸກຄົນຜູ້ຕັດເຄື່ອງຈອງຈຳເກົ່າອອກແລ້ວ ສ້າງເຄື່ອງຈອງຈຳອັນໃໝ່ຂຶ້ນມາແທນ ເຮົາຮຽກຂໍ້ປຽບທຽບແນວນີ້ວ່າ ເປັນຄວາມຫຼົງອັນຊົ່ວຮ້າຍ ເພາະບໍ່ມີຜູ້ຮັບຄຳສອນໃດຈະຊ່ວຍຜູ້ສອນໄດ້" ຜູ້ເວົ້າແນວນີ້ຊື່ວ່າສ້າງຄວາມເດືອດຮ້ອນໃຫ້ແກ່ເຫຼົ່າກຸນລະບຸດ ຜູ້ອາໄສທຳວິໄນທີ່ເຮົາສະແດງແລ້ວ ບັນລຸຄຸນວິເສດເຮັດໃຫ້ແຈ້ງໂສດາປັດຕິຜົນແດ່ ເຮັດໃຫ້ແຈ້ງສະກະທາຄາມິຜົນແດ່ ເຮັດໃຫ້ແຈ້ງອະນາຄາມິຜົນແດ່ ເຮັດໃຫ້ແຈ້ງອະຣະຫັດຕະຜົນແດ່ ທຳເຫຼົ່ານີ້ ກໍຊື່ວ່າ ສ້າງຄວາມເດືອດຮ້ອນໃຫ້ແກ່ເຫຼົ່າກຸນລະບຸດ ຜູ້ອົບຮົມຄຸນນະທຳໃຫ້ແກ່ກ້າ ເພື່ອບັນລຸທຳອັນວິເສດຂັ້ນສູງ

ຍິ່ງ ໆ ຂຶ້ນໄປ ເມື່ອສ້າງຄວາມເດືອດຮ້ອນໃຫ້ກໍຊື່ວ່າບໍ່ຫວັງປະໂຫຍດ ຜູ້ບໍ່ຫວັງປະໂຫຍດກໍຊື່ວ່າຄິດເປັນສັດຕູ ເມື່ອຄິດເປັນສັດຕູກໍຊື່ວ່າ ເປັນມິດສາທິດຖິ ຜູ້ເປັນມິດສາທິດຖິ ເຮົາກ່າວວ່າ ມີຄະຕິຢ່າງໃດຢ່າງໜຶ່ງໃນ ໒ ຢ່າງນີ້ຄື ນະຣົກ ຫຼື ກຳເນີດເດຣັດສານ

## ສາດສະດາທີ່ສົມຄວນຖືກທັກທ້ວງ ໓ ປະເພດ

[໕໑໓] ໂລຫິດຈະ ສາດສະດາ ໓ ປະເພດຕໍ່ໄປນີ້ສົມຄວນຖືກທັກທ້ວງ ແລະ ການທັກທ້ວງຂອງຜູ້ທັກທ້ວງ ສາດສະດາທີ່ມີຢູ່ແນວນັ້ນ ກໍຈັດວ່າຈິງແທ້ເປັນທຳບໍ່ມີໂທດ ສາດສະດາ ໓ ປະເພດນັ້ນເປັນແນວໃດມີ ຄື

(໑) ໂລຫິດຈະ ສາດສະດາລາງຄົນໃນໂລກນີ້ ອອກຈາກເຮືອນໄປບວດເປັນບັນພະຊິດຍັງບໍ່ບັນລຸຈຸດມຸ້ງໝາຍແຫ່ງຄວາມເປັນສະມະນະ ແລະ ເຖິງແມ່ນວ່າຍັງບໍ່ໄດ້ບັນລຸຈຸດມຸ້ງໝາຍແຫ່ງຄວາມເປັນສະມະນະ ແຕ່ກັບສະແດງທຳສອນສາວົກວ່າ "ເລື້ອງນີ້ມີປະໂຫຍດ ແລະ ເພື່ອຄວາມສຸກແກ່ພວກທ່ານ" ສາວົກຂອງເຂົາ ຈຶ່ງບໍ່ຕັ້ງໃຈຟັງ ບໍ່ຕັ້ງໃຈເພື່ອຈະຮູ້ ແລະ ຫຼີກລ້ຽງທີ່ຈະປະພຶດຕາມຄຳສັ່ງສອນຂອງເຂົາສົມຄວນຖືກທັກທ້ວງວ່າ "ທ່ານອອກຈາກເຮືອນໄປບວດເປັນບັນພະຊິດ ຍັງບໍ່ບັນລຸຈຸດມຸ້ງໝາຍແຫ່ງຄວາມເປັນສະມະນະ ແລະ ເຖິງແມ່ນວ່າ ຍັງບໍ່ໄດ້ບັນລຸຈຸດມຸ້ງໝາຍແຫ່ງຄວາມເປັນສະມະນະ ແຕ່ກັບສະແດງທຳສອນສາວົກວ່າ ເລື້ອງນີ້ເພື່ອປະໂຫຍດ ແລະ ເພື່ອຄວາມສຸກແກ່ພວກທ່ານ ສາວົກຂອງທ່ານຈຶ່ງບໍ່ຕັ້ງໃຈຟັງ ບໍ່ຕັ້ງໃຈເພື່ອຈະຮູ້ ແລະ ຫຼີກລ້ຽງທີ່ຈະປະພຶດຕາມຄຳສັ່ງສອນ ປຽບຄືບຸຣຸດທີ່ເຂົ້າໃກ້ໂຕສະຕີ ຜູ້ກຳລັງຖອຍໜີ ຫຼື ປຽບຄືບຸຣຸດສວມກອດສະຕີທີ່ຫັນຫຼັງໃຫ້ ຂໍ້ອຸປະໄມນີ້ກໍຄືກັນ ເຮົາຮຽກຂໍ້ປຽບທຽມແນວນີ້ວ່າ ເປັນຄວາມໂລບອັນຊົ່ວຮ້າຍ ເພາະບໍ່ມີຜູ້ຮັບຄຳສອນໃດ ຈະຊ່ວຍຜູ້ສອນໄດ້" ນີ້ຄື ສາດສະດາປະເພດທີ່ ໑ ເຊິ່ງສົມຄວນຖືກທັກທ້ວງ ເປັນວຽກຂອງຜູ້ທັກທ້ວງ ສາດສະ ດາປະເພດນີ້ກໍຈັດວ່າ ມີຈິງແທ້ເປັນທຳບໍ່ມີໂທດ

[໕໑໔] (໒) ຍັງມີອີກໂລຫິດຈະ ສາດສະດາລາງຄົນໃນໂລກນີ້ ອອກຈາກເຮືອນໄປບວດເປັນບັນພະຊິດ ຍັງບໍ່ບັນລຸຈຸດມຸ້ງໝາຍແຫ່ງຄວາມເປັນສະມະນະ ແລະ ເຖິງແມ່ນວ່າ ຍັງບໍ່ໄດ້ບັນລຸຈຸດມຸ້ງໝາຍແຫ່ງຄວາມເປັນສະມະນະ ແຕ່ກັບສະແດງທຳສອນສາວົກວ່າ "ເລື້ອງນີ້ເພື່ອປະໂຫຍດແລະເພື່ອຄວາມສຸກແກ່ພວກທ່ານ" ສາວົກຂອງເຂົາກໍຕັ້ງໃຈຟັງ ຕັ້ງໃຈເພື່ອຈະຮູ້ ແລະບໍ່ຫຼີກລ້ຽງທີ່ຈະປະພຶດຕາມຄຳສັ່ງສອນ ແຕ່ເຂົາສົມຄວນຖືກທັກທ້ວງວ່າ "ທ່ານອອກຈາກເຮືອນໄປບວດເປັນບັນພະຊິດ ຍັງບໍ່ບັນລຸຈຸດມຸ້ງໝາຍແຫ່ງຄວາມເປັນສະມະນະ ແລະ ເຖິງແມ່ນວ່າຍັງບໍ່ໄດ້ບັນລຸຈຸດມຸ້ງໝາຍແຫ່ງຄວາມເປັນສະມະນະ ແຕ່ກັບສະແດງທຳສອນສາວົກວ່າ ເລື້ອງນີ້ເພື່ອປະໂຫຍດ ແລະ ເພື່ອຄວາມສຸກແກ່ພວກທ່ານ ສາວົກຂອງທ່ານກໍຕັ້ງໃຈຟັງ ຕັ້ງໃຈເພື່ອຈະຮູ້ ແລະ ບໍ່ຫຼີກລ້ຽງທີ່ຈະປະພຶດຕາມຄຳສັ່ງສອນ ປຽບຄື ຄົນຜູ້ລະເລີຍນາຂອງຕົນ ເຂົ້າໃຈນາ

ຂອງຜູ້ອື່ນວ່າ ເປັນທີ່ຕົນຄວນບໍາລຸງ ຂໍ້ອຸປະໄມນີ້ກໍເຊັ່ນດຽວກັນ ເຮົາຮຽກຂໍ້ປຽບທຽບແບບນີ້ວ່າ ເປັນຄວາມຫຼົງອັນຊົ່ວຮ້າຍ ເພາະບໍ່ມີຜູ້ຮັບຄໍາສອນໃດຈະຊ່ວຍຜູ້ສອນໄດ້" ນີ້ຄື ສາດສະດາປະເພດທີ່ ໔ ເຊິ່ງສົມຄວນຖືກທັກທ້ວງ ທັງການທັກທ້ວງຂອງຜູ້ທັກທ້ວງສາດສະດາປະເພດນີ້ ກໍຈັດວ່າ ມີຈິງແທ້ ເປັນທໍາບໍ່ມີໂທດ

[໕໑໕] (໓) ຍັງມີອີກໂລຫິດຈະ ສາດສະດາລາງຄົນໃນໂລກນີ້ ອອກຈາກເຮືອນໄປບວດເປັນບັນພະຊິດ ໄດ້ບັນລຸຈຸດມຸ້ງໝາຍແຫ່ງຄວາມເປັນສະມະນະ ເມື່ອບັນລຸຈຸດມຸ້ງໝາຍແຫ່ງຄວາມເປັນສະມະນະແລ້ວ ກໍສະແດງທໍາສອນສາວົກວ່າ "ເລື້ອງນີ້ເປັນໄປເພື່ອປະໂຫຍດ ແລະ ເພື່ອຄວາມສຸກແກ່ພວກທ່ານ" ແຕ່ສາວົກຂອງເຂົາກັບບໍ່ຕັ້ງໃຈຟັງ ບໍ່ຕັ້ງໃຈເພື່ອຈະຮູ້ ແລະ ຍັງຫຼີກລ້ຽງທີ່ຈະປະພຶດຕາມຄໍາສັ່ງສອນ ເຂົາສົມຄວນຖືກທັກທ້ວງວ່າ "ທ່ານອອກຈາກເຮືອນໄປບວດເປັນບັນພະຊິດ ໄດ້ບັນລຸຈຸດມຸ້ງໝາຍແຫ່ງຄວາມເປັນສະມະນະ ເມື່ອບັນລຸຈຸດມຸ້ງໝາຍແຫ່ງຄວາມເປັນສະມະນະແລ້ວ ກໍສະ ແດງທໍາສອນສາວົກວ່າເລື້ອງນີ້ ເພື່ອປະໂຫຍດ ແລະ ເພື່ອຄວາມສຸກແກ່ພວກທ່ານ ແຕ່ສາວົກຂອງທ່ານກັບບໍ່ຕັ້ງໃຈຟັງ ບໍ່ຕັ້ງໃຈເພື່ອຈະຮູ້ ແລະ ຍັງຫຼີກລ້ຽງທີ່ຈະປະພຶດຕາມຄໍາສັ່ງສອນ ປຽບຄືບຸກຄົນຜູ້ຕັດເຄື່ອງຈອງຈໍາເກົ່າອອກແລ້ວ ສ້າງເຄື່ອງຈອງຈໍາໃໝ່ຂຶ້ນມາແທນ ເຮົາຮຽກຂໍ້ປຽບທຽບແບບນີ້ວ່າເປັນຄວາມຫຼົງອັນຊົ່ວຮ້າຍ ເພາະບໍ່ມີຜູ້ຮັບຄໍາສອນໃດຈະຊ່ວຍຜູ້ສອນໄດ້" ນີ້ ຄື ສາດສະດາປະເພດທີ່ ໓ ເຊິ່ງ ສົມຄວນຖືກທັກທ້ວງ ການທັກທ້ວງຂອງຜູ້ທັກທ້ວງສາດສະດາປະເພດນີ້ ກໍຈັດວ່າມີຈິງແທ້ ເປັນທໍາບໍ່ມີໂທດ

ໂລຫິດຈະ ສາດສະດາ ໓ ປະເພດເຫຼົ່ານີ້ແລ ສົມຄວນຖືກທັກທ້ວງ ແລະ ການທັກທ້ວງຂອງຜູ້ທັກທ້ວງສາດສະດາທີ່ມີຢູ່ແບບນັ້ນກໍຈັດວ່າ ມີຈິງແທ້ ເປັນທໍາບໍ່ມີໂທດ

## ສາດສະດາທີ່ບໍ່ສົມຄວນຖືກທັກທ້ວງ

[໕໑໖] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແບບນີ້ ໂລຫິດຈະພາມທູນຖາມວ່າ "ທ່ານພຣະໂຄດົມ ສາດສະດາ ເຊິ່ງບໍ່ສົມຄວນຖືກທັກທ້ວງມີແດ່ບໍ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ໂລຫິດຈະ ສາດສະດາ ເຊິ່ງບໍ່ສົມຄວນຖືກທັກທ້ວງເລີຍນັ້ນມີຢູ່"

ໂລຫິດຈະທູນຖາມວ່າ "ສາດສະດາປະເພດນີ້ ເປັນແບບໃດນໍ? ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ໂລຫິດຈະ ຕະຖາຄົດອຸບັດຂຶ້ນມາໃນໂລກນີ້ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍຕົນເອງໂດຍຊອບ ໗ລ໗ (ເພີ່ງນໍາຂໍ້ຄວາມເຕັມໃນສາມັນຍະຜົນສູດມາໃສ່ໄວ້ໃນບ່ອນນີ້) ພິກຂຸຊື່ວ່າສົມບູນດ້ວຍສີນເປັນແບບນີ້ ໗ລ໗ ບັນລຸປະຖົມມະຊານຢູ່

ໂລຫິດຈະ ສາດສະດາທີ່ສາວົກໄດ້ບັນລຸຄຸນວິເສດອັນຍອດຢ້ຽມຂະໜາດນີ້ ບໍ່ສົມຄວນຖືກທັກທ້ວງ ການທັກທ້ວງຂອງຜູ້ທັກທ້ວງສາດສະດາຂະໜາດນີ້ ກໍຈັດວ່າ ບໍ່ຈິງ ບໍ່ແທ້ ບໍ່ເປັນທຳ ມີໂທດ ໆລໆ ບັນລຸທຸຕິຍະຊານຢູ່ ບັນລຸຕະຕິຍະຊານຢູ່ ບັນລຸຈະຕຸດຖະຊານຢູ່ ໂລຫິດຈະ ສາດສະດາທີ່ສາວົກໄດ້ບັນລຸຄຸນວິເສດອັນຍອດຢ້ຽມຂະໜາດນີ້ ບໍ່ສົມຄວນຖືກທັກທ້ວງ ການທັກທ້ວງຂອງຜູ້ທັກທ້ວງສາດສະດາຂະໜາດນີ້ ກໍຈັດວ່າບໍ່ຈິງບໍ່ແທ້ ບໍ່ເປັນທຳ ມີໂທດ ໆລໆ ນ້ອມຈິດໄປເພື່ອຍານະທັດສະນະ ໂລຫິດຈະສາດສະດາທີ່ສາວົກໄດ້ບັນລຸຄຸນວິເສດອັນຍອດຢ້ຽມຂະໜາດນີ້ ບໍ່ສົມຄວນຖືກທັກທ້ວງ ການທັກທ້ວງຂອງຜູ້ທັກທ້ວງສາດສະດາຂະໜາດນີ້ ກໍຈັດວ່າບໍ່ຈິງບໍ່ແທ້ບໍ່ເປັນທຳມີໂທດ ໆລໆ ຮູ້ແຈ້ງວ່າ ໆລໆ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ ໂລຫິດຈະ ສາດສະດາທີ່ສາວົກໄດ້ບັນລຸຄຸນວິເສດອັນຍອດຢ້ຽມຂະໜາດນີ້ ບໍ່ສົມຄວນຖືກທັກທ້ວງ ການທັກທ້ວງຂອງຜູ້ທັກທ້ວງສາດສະດາຂະໜາດນີ້ ກໍຈັດວ່າບໍ່ຈິງບໍ່ແທ້ບໍ່ເປັນທຳມີໂທດ

## ໂລຫິດຈະພາມປະກາດຕົນເປັນອຸປາສົກ

[໕໑໗] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ ໂລຫິດຈະພາມໄດ້ຂາບທູນວ່າ "ຂ້າແດ່ທ່ານພຣະໂຄດົມ ຂ້າພຣະອົງກຳລັງຈະຕົກເຫວ ແຕ່ທ່ານພຣະໂຄດົມຊ່ວຍຈັບດຶງໃຫ້ກັບຂຶ້ນມາຢືນຢູ່ເທິງທີ່ໝັ້ນຄົງ ຂ້າແດ່ ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມຊັດແຈ້ງມ່ວນຫຼາຍ ຂ້າແດ່ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມຊັດແຈ້ງມ່ວນຫຼາຍ ທ່ານພຣະໂຄດົມຊົງປະກາດທຳຊັດແຈ້ງໂດຍປະການຕ່າງ ໆ ປຽບຄື ບຸກຄົນຫງາຍຂອງທີ່ງ້ວມຢູ່ ເປີດຂອງທີ່ປິດບອກທາງແກ່ຜູ້ຫຼົງທາງ ຫຼື ເຍືອງໄຟໃນທີ່ມືດ ໂດຍຕັ້ງໃຈວ່າ ຄົນມີຕາດີຈັກແນມເຫັນທາງໄດ້ ຂ້າພຣະອົງນີ້ ຂໍຖືທ່ານພຣະໂຄດົມພ້ອມທັງພຣະທຳ ແລະ ພຣະສົງເປັນສະຣະນະ ຂໍທ່ານພຣະໂຄດົມ ຈົ່ງຊົງຈື່ຂ້ານ້ອຍວ່າ ເປັນອຸປາສົກຜູ້ຖືສະຣະນະນັບຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ"

**ໂລຫິດຈະສູດທີ ໑໘ ຈົບ**

# ໑໓. ເຕວິດຊະສູດ

## ວ່າດ້ວຍເລື້ອງໄຕຣເພດ

[໕໑໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ສະເດັດຈາຣິກໄປໃນແຄວ້ນໂກສົນ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ມີປະມານ ໕໐໐ ອົງ ສະເດັດເຖິງໝູ່ບ້ານພາມຂອງຊາວໂກສົນຊື່ ມັນສາກະຕະປະທັບຢູ່ໃນອຳພະວັນໃກ້ຝັ່ງແມ່ນ້ຳອະຈິຣະວະດີ ທິດເໜືອຂອງໝູ່ບ້ານມົນສາກະຕະ

[໕໑໘] ສະໄໝນັ້ນ ໃນໝູ່ບ້ານມົນສາກະຕະມີພາມມະຫາສານ ຜູ້ມີຊື່ສຽງມາພັກອາໄສຢູ່ຫຼາຍຄົນມີຄື ຈັງກີພາມ ຕາຣຸກຂະພາມ ໂປກະຂະຣະສາຕິພາມ ຊານຸດໂສນີພາມ ໂຕເທີຍຍະພາມ ແລະຍັງມີພາມມະຫາສານຜູ້ມີຊື່ສຽງຄົນອື່ນ ໆ ຢູ່ນຳອີກ

[໕໔໐] ຄັ້ງນັ້ນ ວາເສດຖະມານົບກັບພາຣັທທະວາຊະມານົບອອກມາຍ່າງຫຼິ້ນ ສົນທະນາກັນໃນເລື້ອງແນວທາງການປະພຶດພິດ ແລະ ບໍ່ແມ່ນທາງ ວາເສດຖະມານົບເວົ້າແນວນີ້ວ່າ "ທາງທີ່ໂປກະຂະຣະສາຕິພາມບອກອະທິບາຍໄວ້ເທົ່ານັ້ນ ເປັນທາງກົງ ເປັນທາງເດີນກົງໄປສູ້ທາງນຳອອກ ນຳຜູ້ເດີນຕາມໄປສູ່ຄວາມເປັນຜູ້ຢູ່ຮ່ວມກັບພຣະພົມໄດ້"

ຝ່າຍພາຣັດທະວາຊະມານົບກ່າວຂຶ້ນແນວນີ້ວ່າ "ທາງທີ່ຕາຣຸກຂະພາມບອກໄວ້ເທົ່ານັ້ນເປັນທາງກົງເປັນທາງຍ່າງກົງໄປ ເປັນທາງນຳອອກ ນຳຜູ້ຍ່າງຕາມໄປສູ່ຄວາມເປັນຜູ້ຢູ່ຮ່ວມກັບພຣະພົມໄດ້

ວາເສດຖະມານົບ ບໍ່ອາດເວົ້າໃຫ້ພາຣັດທະວາຊະມານົບຢືນຍອມໄດ້ ຝ່າຍພາຣັດທະວາຊະມານົບ ກໍບໍ່ອາດເວົ້າໃຫ້ວາເສດຖະມານົບຢືນຍອມໄດ້ເຊັ່ນກັນ

[໕໔໑] ວາເສດຖະມານົບ ຈຶ່ງບອກພາຣັດທະວາຊະມານົບວ່າ "ພາຣັດທະວາຊະກໍພຣະສະມະນະໂຄດົມພຣະອົງນີ້ ເປັນສັກກະຍະບຸດ ບວດແລ້ວຈາກສາກະຍະຕະກູນ ປະທັບຢູ່ໃນອຳພະວັນໃກ້ຝັ່ງແມ່ນ້ຳອະຈິຣະວະດີ ທາງທິດເໜືອຂອງໝູ່ບ້ານມົນສາກະຕະ ທ່ານພຣະໂຄດົມນັ້ນມີກິດຕິສັບອັນງາມຊ່າລືໄປແນວນີ້ວ່າ "ແມ່ນເພາະເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນເປັນພຣະອະຣະຫັນ ຕັດສະຮູ້ດ້ວຍພຣະອົງເອງໂດຍທຳ ໗ລ໗ ເປັນພຣະຜູ້ມີພຣະພາກ" ພາຣັດທະວາຊະມາເຖີ້ນ ພວກເຮົາຈະເຂົ້າໄປເຝົ້າພຣະສະມະນະໂຄດົມນຳກັນເພື່ອທູນຖາມເລື້ອງນີ້

ແລ້ວພາກັນຈື່ຂໍ້ຄວາມຕາມທີ່ພຣະສະມະນະໂຄດົມ ຕັດຕອບແກ່ພວກເຮົາ ພາຣັດທະວາຊະມາ ນົບຮັບຄຳຂອງວາເສດຖະມານົບແລ້ວພາກັນໄປ”

## ວ່າດ້ວຍເລື້ອງທາງແລະບໍ່ແມ່ນທາງ

[໕໔໔] ວາເສດຖະມານົບ ແລະ ພາຣັດທະວາຊະມານົບພາກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງທີ່ປະທັບ ເມື່ອມາຮອດແລ້ວໄດ້ທັກທວາຍກັບພຣະຜູ້ມີພຣະພາກພໍຄຸ້ນເຄີຍກັນດີ ແລ້ວນັ່ງລົງໃນທີ່ສົມຄວນສວນຂອງຕົນ ວາເສດຖະມານົບໄດ້ທູນຖາມວ່າ “ທ່ານພຣະໂຄດົມຂໍປະທານວະໂຮກາດເຖີ້ນ ເມື່ອຂ້າພຣະອົງທັງສອງກຳລັງຍ່າງຫຼິ້ນຢູ່ ໄດ້ສົນທະນາກັນໃນເລື້ອງທາງທີ່ຄວນປະພຶດພົດ ແລະບໍ່ແມ່ນທາງ ຂ້າພຣະອົງກ່າວຂຶ້ນແນວນີ້ວ່າ “ທາງທີ່ທ່ານໂປກະຂະຣະສາຕິພາມບອກໄວ້ເທົ່ານັ້ນເປັນທາງກົງ ເປັນທາງເດີນກົງໄປ ເປັນທາງນຳອອກ ນຳຜູ້ຍ່າງຕາມທາງນີ້ຈະໄປສູ່ຄວາມເປັນຜູ້ຢູ່ຮ່ວມກັບພຣະພົມໄດ້” ພາຣັດທະວາຊະມານົບກັບເວົ້າແນວນີ້ວ່າ “ທາງທີ່ຕາຣຸກຂະພາມບອກໄວ້ເທົ່ານັ້ນ ເປັນທາງກົງ ເປັນທາງເດີນກົງໄປ ເປັນທາງນຳອອກ ນຳຜູ້ຍ່າງຕາມທາງນີ້ໄປສູ່ຄວາມເປັນຜູ້ຢູ່ຮ່ວມກັບພຣະພົມໄດ້” ທ່ານພຣະໂຄດົມໃນເລື້ອງນີ້ ຍັງມີການຖືຜິດ ກ່າວຜິດ ກ່າວຕ່າງກັນຢູ່

[໕໔໕] ພຣະຜູ້ມີພຣະພາກເຈົ້າຕັດວ່າ “ວາເສດຖະ ທ່ານເວົ້າແນວນີ້ວ່າ “ທາງທີ່ໂປກະຂະຣະສາຕິພາມບອກໄວ້ເທົ່ານັ້ນ ເປັນທາງກົງ ເປັນທາງເດີນກົງໄປ ເປັນທາງນຳອອກ ນຳຜູ້ຍ່າງຕາມໄປສູ່ຄວາມເປັນຜູ້ຢູ່ຮ່ວມກັບພຣະພົມໄດ້” ແຕ່ພາຣັດທະວາຊະມານົບກັບເວົ້າແນວນີ້ວ່າ “ທາງທີ່ຕາຣຸກຂະພາມບອກໄວ້ເທົ່ານັ້ນ ເປັນທາງກົງ ເປັນທາງເດີນກົງໄປ ເປັນທາງນຳອອກ ນຳຜູ້ຍ່າງຕາມໄປສູ່ຄວາມເປັນຜູ້ຢູ່ຮ່ວມກັບພຣະພົມໄດ້” ພວກທ່ານຖືຜິດກັນໃນເລື້ອງໃດ? ກ່າວຜິດກັນໃນເລື້ອງໃດ? ກ່າວຕ່າງກັນໃນເລື້ອງໃດ?

[໕໔໖] ວາເສດຖະມານົບຂາບທູນວ່າ “ໃນເລື້ອງທາງ ແລະ ບໍ່ແມ່ນທາງ ທ່ານພຣະໂຄດົມພວກພາມທັງຫຼາຍ ຄື ພວກອັດທະຣິຍະພາມ ພວກຕິດຕະຣິຍະພາມ ພວກສັນໂທກະພາມ ພວກພະວະຫາຣິຊະນະພາມ ບັນຍັດທາງໄວ້ຕ່າງກັນກໍຈິງ ເຖິງຈັ່ງຊັ້ນ ທາງທັງປວງກໍລ້ວນເປັນທາງນຳອອກ ນຳຜູ້ຍ່າງຕາມໄປສູ່ຄວາມເປັນຜູ້ຢູ່ຮ່ວມກັບພຣະພົມໄດ້ ປຽບຄື ໃນທີ່ໃກ້ໝູ່ບ້ານ ຫຼືນິຄົມ ເຖິງຈະມີທາງຢູ່ຫຼາຍເສັ້ນທາງກໍຈິງ ແຕ່ທຸກເສັ້ນທາງກໍມາບັນຈົບຕິດຈອດກັນຢູ່ກາງໝູ່ບ້ານນັ້ນເອງ ສັນໃດ ພວກພາມທັງຫຼາຍອັນມີພວກອັດທະຣິຍະພາມ ພວກຕິຕຕະຣິຍະພາມ ພວກສັນໂທກະພາມ ພວກພະວະຫາຣິຊະນະພາມ ບັນຍັດທາງໄວ້ຕ່າງກັນກໍຈິງ ທາງທັງປວງກໍລ້ວນເປັນທາງນຳອອກ ນຳຜູ້ຍ່າງຕາມໄປສູ່ຄວາມເປັນຜູ້ຢູ່ຮ່ວມກັບພຣະພົມໄດ້ສັນນັ້ນ

## ການຂວນຂວາຍຂອງວາເສດຖະມານົບ

[໕໔໕] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ວາເສດຖະ ທ່ານກ່າວວ່າ ທາງເຫຼົ່ານັ້ນສາມາດນຳອອກໄດ້ແມ່ນບໍ?"

ວາເສດຖະທູນຕອບວ່າ "ທ່ານພຣະໂຄດົມ ຂ້າພຣະອົງ ກ່າວວ່ານຳອອກໄດ້"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ວາເສດຖະ ທ່ານກ່າວວ່າ ທາງເຫຼົ່ານັ້ນ ສາມາດນຳອອກໄດ້ແມ່ນບໍ?"

ວາເສດຖະທູນຕອບວ່າ "ທ່ານພຣະໂຄດົມ ຂ້າພຣະອົງກ່າວວ່ານຳອອກໄດ້"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ວາເສດຖະ ທ່ານກ່າວວ່າທາງເຫຼົ່ານັ້ນ ສາມາດນຳອອກໄດ້ແມ່ນໍ?"

ວາເສດຖະທູນຕອບວ່າ "ທ່ານພຣະໂຄດົມ ຂ້າພຣະອົງກ່າວວ່ານຳອອກໄດ້"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ວາເສດຖະ ບັນດາພາມຜູ້ໄດ້ໄຕຣເພດມີພາມແມ່ນວ່າຈັກຄົນໜຶ່ງບໍ? ທີ່ເຄີຍເຫັນພົມແລ້ວ ກ້າອ້າງຕົນເອງເປັນພະຍານໄດ້"

ວາເສດຖະທູນຕອບວ່າ "ບໍ່ມີເລີຍ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ວາເສດຖະ ມີອາຈານຂອງພາມຜູ້ໄດ້ໄຕຣເພດແມ່ນຈັກຄົນໜຶ່ງບໍ ທີ່ເຄີຍເຫັນພົມແລ້ວ ກ້າອ້າງຕົນເອງເປັນພະຍານໄດ້"

ວາເສດຖະທູນຕອບວ່າ "ບໍ່ມີເລີຍ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ວາເສດຖະ ມີປາຣະມາຈານຂອງອາຈານຂອງພາມຜູ້ໄດ້ໄຕຣເພດ ແມ່ນຈັກຄົນໜຶ່ງບໍທີ່ເຄີຍເຫັນພົມແລ້ວ ກ້າອ້າງຕົນເອງເປັນພະຍານໄດ້"

ວາເສດຖະທູນຕອບວ່າ "ບໍ່ມີເລີຍທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ວາເສດຖະ ມີອາຈານຂອງພາມຜູ້ໄດ້ໄຕຣເພດຈັກຄົນໜຶ່ງບໍທີ່ເປັນອາຈານສືບທອດກັນມາເຈັດຊົ່ວອາຍຸຄົນ ເຊິ່ງເຄີຍເຫັນພົມແລ້ວ ກ້າອ້າງຕົນເອງເປັນພະຍານໄດ້"

ວາເສດຖະທູນຕອບວ່າ "ບໍ່ມີເລີຍ ທ່ານພຣະໂຄດົມ"

[໕໘໕] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ວາເສດຖະ ພວກຣືສີຜູ້ເປັນບູຣະພາຈານຂອງພາມຜູ້ໄດ້ໄຕຣເພດ ໄດ້ແກ່ ຣືສີອັດຖະກະ ຣືສີວາມະກະ ຣືສີວາມະເທວະ ຣືສີເວດສາມິດ ຣືສີຍະມະຕັກຄີ ຣືສີອັງຄີຣະສະ ຣືສີພາຣັດທະວາຊະ ຣືສີວາເສດຖະ ຣືສີກັດສະປະ ແລະ ຣືສີພາຄຸ ເຊິ່ງເປັນຜູ້ຜູກມົນບອກມົນທີ່ພວກພາມຜູ້ໄດ້ໄຕຣເພດ ໃນເວລານີ້ໄຊ້ຂັບຕາມກ່ອມຕາມ ເຊິ່ງບົດມົນເກົ່າທີ່ທ່ານຂັບໄວ້ກ່ອມໄວ້ໂຮມຖືລວມໄວ້ ກ່າວໄດ້ຖືກຕ້ອງຕາມທີ່ທ່ານກ່າວໄວ້ ບອກໄດ້ຖືກຕ້ອງຕາມທີ່ທ່ານບອກໄວ້ ແມ່ນຣືສີເຫຼົ່ານັ້ນ ມີຜູ້ໃດຜູ້ໜຶ່ງບໍ? ທີ່ກ້າເວົ້າແນວນີ້ວ່າ ພວກເຮົາຮູ້ ພວກເຮົາເຫັນພຣະພົມນັ້ນວ່າ ຢູ່ໄສ ໂດຍວິທີໃດ ຫຼື ຢູ່ພົບໃດ?"

ເຂົາທູນຕອບວ່າ "ບໍ່ມີເລີຍ ທ່ານພຣະໂຄດົມ"

[໕໘໗] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ວາເສດຖະ ທີ່ກ່າວມານີ້ ສະຫຼຸບໄດ້ວ່າບັນດາພາມຜູ້ໄດ້ໄຕຣເພດ ບໍ່ມີເລີຍແມ່ນຈັກຄົນດຽວ ທີ່ເຄີຍເຫັນພົມ ພໍຈະອ້າງໂຕເອງເປັນພະຍານໄດ້ວ່າເຄີຍເຫັນ ແມ່ນອາຈານຂອງພາມຜູ້ໄດ້ໄຕຣເພດກໍບໍ່ມີເລີຍ ແມ່ນວ່າຄົນດຽວທີ່ເຄີຍເຫັນພົມພໍຈະອ້າງໂຕເອງເປັນພະຍານໄດ້ ແມ່ນປາຣະມາຈານຂອງອາຈານຂອງພາມຜູ້ໄດ້ໄຕຣເພດ ກໍບໍ່ມີເລີຍແມ່ນຈັກຄົນດຽວທີ່ເຄີຍເຫັນພົມ ພໍຈະອ້າງໂຕເອງເປັນພະຍານໄດ້ ອາຈານຂອງພາມຜູ້ໄດ້ໄຕຣເພດທີ່ເປັນອາຈານສືບທອດກັນມາເຈັດຊົ່ວອາຍຸຄົນກໍບໍ່ມີເລີຍ ແມ່ນຈັກຄົນດຽວທີ່ເຄີຍເຫັນພົມພໍຈະອ້າງໂຕເອງເປັນພະຍານໄດ້ ພວກຣືສີຜູ້ເປັນບູຣະພາຈານຂອງພາມຜູ້ໄດ້ໄຕຣເພດໄດ້ແກ່ ຣືສີອັດຖະກະ ຣືສີວາມະກະ ຣືສີວາມະເທວະ ຣືສີເວດສາມິດ ຣືສີຍະມະຕັກຄີ ຣືສີອັງຄີຣະສະ ຣືສີພາຣັດທະວາຊະ ຣືສີວາເສດຖະ ຣືສີກັດສະປະ ແລະ ຣືສີພາຄຸ ເຊິ່ງເປັນຜູ້ຜູກມົນບອກມົນທີ່ພວກພາມຜູ້ໄດ້ໄຕຣເພດໃນເວລານີ້ໄຊ້ຂັບຕາມກ່ອມຕາມ ເຊິ່ງບົດມົນເກົ່າທີ່ທ່ານຂັບໄວ້ກ່ອມໄວ້ ໂຮມຖືລວມໄວ້ ກ່າວໄດ້ຖືກຕ້ອງຕາມທີ່ທ່ານກ່າວໄວ້ ບອກໄດ້ຖືກຕ້ອງຕາມທີ່ທ່ານບອກໄວ້ ແມ່ນຣືສີເຫຼົ່ານັ້ນ ກໍບໍ່ມີຜູ້ໃດເລີຍທີ່ສາມາດເວົ້າແນວນີ້ວ່າ "ພວກເຮົາຮູ້ ພວກເຮົາເຫັນພຣະພົມນັ້ນວ່າຢູ່ໄສ? ໂດຍວິທີໃດ? ຫຼື ຢູ່ພົບໃດ?" ພາມຜູ້ໄດ້ໄຕຣເພດເຫຼົ່ານັ້ນ ເວົ້າແນວນີ້ວ່າ "ພວກເຮົາບໍ່ຮູ້ ພວກເຮົາບໍ່ເຫັນ ແຕ່ພວກເຮົາສະແດງທາງເພື່ອຄວາມເປັນຜູ້ຢູ່ຮ່ວມກັບພຣະພົມວ່າ ທາງນີ້ເທົ່ານັ້ນ ເປັນທາງກົງເປັນ ທາງເດີນກົງໄປ ເປັນທາງນຳອອກ ນຳຜູ້ຍ່າງຕາມໄປສູ່ຄວາມເປັນຜູ້ຢູ່ຮ່ວມກັບພຣະພົມໄດ້"

[໕໘໘] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ວາເສດຖະ ທ່ານເຂົ້າໃຈເລື່ອງນັ້ນວ່າແນວໃດ ເມື່ອເປັນແນວນີ້ ພາສິດຂອງພາມຜູ້ໄດ້ໄຕຣເພດ ຖືວ່າ ເລື່ອນລອຍບໍ່ແມ່ນບໍ?"

ວາເສດຖະທູນຕອບວ່າ "ທ່ານພຣະໂຄດົມ ເມື່ອເປັນແນວນີ້ພາສິດຂອງພາມຜູ້ໄດ້ໄຕຣເພດຖືວ່າເລື່ອນລອຍຢ່າງແນ່ນອນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຖືກລະວາເສດຖະ ການທີ່ພາມຜູ້ໄດ້ໄຕຣເພດ ເຊິ່ງບໍ່ຮູ້ບໍ່ເຄີຍເຫັນພົມ ແຕ່ກັບສະແດງທາງເພື່ອຄວາມເປັນຜູ້ຢູ່ຮ່ວມກັບພົມວ່າ "ທາງນີ້ເທົ່ານັ້ນເປັນທາງກົງ ເປັນທາງເດີນກົງໄປ ເປັນທາງນຳອອກ ນຳຜູ້ຍ່າງຕາມໄປສູ່ຄວາມເປັນຜູ້ຢູ່ຮ່ວມກັບພຣະພົມໄດ້" ນັ້ນບໍ່ແມ່ນຖານະທີ່ເປັນໄປໄດ້

[໕໔໙] ວາເສດຖະ ພາສິດຂອງພາມຜູ້ໄດ້ໄຕຣເພດຄືຄົນຕາບອດເຂົ້າແຖວຈັບຫຼັງກັນ ຄົນຢູ່ຫົວແຖວ ຄົນຢູ່ກາງແຖວ ແລະ ຄົນຢູ່ປາຍແຖວ ຕ່າງກໍແນມບໍ່ເຫັນພາສິດຂອງພາມຜູ້ໄດ້ໄຕຣເພດເຫຼົ່ານັ້ນ ຊ່າງເປັນເລື່ອງໜ້າຫົວຂວນ ເຊື່ອຖືບໍ່ໄດ້ ຂາດສາຣະ

[໕໖໐] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ວາເສດຖະ ທ່ານເຂົ້າໃຈເລື້ອງນີ້ວ່າແນວໃດ? ພາມຜູ້ໄດ້ໄຕຣເພດ ແນມເຫັນດວງຈັນ ແລະດວງອາທິດຂຶ້ນລົງຄືກັນກັບຄົນອື່ນ ແຕ່ກໍຍັງອ້ອນວອນຊື່ນຊົມຜະນົມມືນອບນ້ອມຍ່າງວຽນບູຊາຢູ່"

ວາເສດຖະທູນຕອບວ່າ "ເປັນແນວນັ້ນ ທ່ານພຣະໂຄດົມ ພາມຜູ້ໄດ້ໄຕຣເພດແນມເຫັນດວງຈັນ ແລະດວງອາທິດຂຶ້ນລົງພໍ ໆ ກັນກັບຄົນອື່ນ ແຕ່ກໍຍັງອ້ອນວອນ ຊື່ນຊົມ ຜະນົມມືນອບນ້ອມຍ່າງວຽນບູຊາຢູ່"

[໕໖໑] ພຣະຜູ້ມີພຣະພາກເຈົ້າ ຕັດຖາມວ່າ "ວາເສດຖະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ? ພາມຜູ້ໄດ້ໄຕຣເພດແນມເຫັນດວງຈັນ ແລະ ດວງອາທິດຂຶ້ນລົງຄືຄົນອື່ນ ແຕ່ກໍຍັງອ້ອນວອນຊື່ນຊົມຜະນົມມືນອບນ້ອມຍ່າງວຽນບູຊາຢູ່ ພາມເຫຼົ່ານັ້ນ ຈະສາມາດສະແດງທາງໄປຢູ່ເພື່ອຮ່ວມກັບດວງຈັນແລະດວງອາທິດວ່າ ທາງນີ້ເທົ່ານັ້ນເປັນທາງກົງ ເປັນທາງເດີນກົງໄປເປັນທາງນຳອອກ ນຳຜູ້ຍ່າງຕາມໄປສູ່ຄວາມເປັນຜູ້ຢູ່ຮ່ວມກັບດວງຈັນ ແລະດວງອາທິດໄດ້ແລ້ວບໍ?"

ວາເສດຖະທູນຕອບວ່າ "ຫາບໍ່ໄດ້ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ວາເສດຖະ ທີ່ກ່າວມານີ້ສະຫຼຸບໄດ້ວ່າ ພາມຜູ້ໄດ້ໄຕຣເພດແນມເຫັນດວງຈັນ ແລະ ດວງອາທິດຂຶ້ນລົງຄືຄົນອື່ນ ແຕ່ກໍຍັງອ້ອນວອນ ຊື່ນຊົມ ຜະນົມມືນອບນ້ອມ ຍ່າງວຽນບູຊາຢູ່ ພາມເຫຼົ່ານັ້ນ ບໍ່ສາມາດສະແດງທາງໄປຢູ່ຮ່ວມກັບດວງຈັນ ແລະດວງອາທິດໄດ້ວ່າ ທາງນີ້ເທົ່ານັ້ນ ເປັນທາງກົງ ເປັນທາງເດີນກົງໄປ ເປັນທາງນຳອອກ ນຳຜູ້ຍ່າງຕາມໄປສູ່ຄວາມເປັນຜູ້ຢູ່ຮ່ວມກັບດວງຈັນ ແລະ ດວງອາທິດໄດ້

[໕໖໔] ວາເສດຖະທີ່ກ່າວມານີ້ສະຫຼຸບໄດ້ວ່າ ບໍ່ມີພາມຜູ້ໄດ້ໄຕຣເພດທີ່ເຄີຍເຫັນພົມ ພໍຈະອ້າງຕົນເອງເປັນພະຍານໄດ້ ບໍ່ມີອາຈານຂອງພາມຜູ້ໄດ້ໄຕຣເພດທີ່ເຄີຍເຫັນພົມ ພໍຈະອ້າງຕົນເອງເປັນພະຍານໄດ້ ບໍ່ມີປາຣະມາຈານຂອງອາຈານຂອງພາມຜູ້ໄດ້ໄຕຣເພດ ທີ່ເຄີຍເຫັນພົມພໍ

ຈະອ້າງຕົນເອງເປັນພະຍານໄດ້ ບໍ່ມີອາຈານຂອງພາມຜູ້ໄດ້ໄຕຣເພດ ທີ່ເປັນອາຈານສືບທອດກັນມາເຈັດຊົ່ວອາຍຸຄົນ ເຊິ່ງເຄີຍເຫັນພົມພໍຈະອ້າງຕົນເອງເປັນພະຍານໄດ້ ພວກຣືສີຜູ້ເປັນບູຣະພາຈານຂອງພາມຜູ້ໄດ້ໄຕຣເພດໄດ້ແກ່ ຣືສີອັດຖະກະ ຣືສີວາມະກະ ຣືສີວາມະເທວະ ຣືສີເວດສາມິດ ຣືສີຍະມະຕັກຄີ ຣືສີອັງຄີຣະສະ ຣືສີພາຣັດທະວາຊະ ຣືສີວາເສດຖະ ຣືສີກັດສະປະ ແລະຣືສີພາຄຸ ເຊິ່ງເປັນຜູ້ຜູກມົນບອກມົນທີ່ພວກພາມຜູ້ໄດ້ໄຕຣເພດໃນເວລານີ້ ໃຊ້ຂັບຕາມກ່ອນຕາມເຊິ່ງບົດມົນເກົ່າທີ່ທ່ານຂັບໄວ້ກ່ອນໄວ້ໂຮມຖືລວມໄວ້ ກ່າວໄດ້ຖືກຕ້ອງຕາມທີ່ທ່ານກ່າວໄວ້ ບອກໄດ້ຖືກຕ້ອງຕາມທີ່ທ່ານບອກໄວ້ ແມ່ນຣືສີເຫຼົ່ານັ້ນ ກໍບໍ່ມີໃຜເລີຍທີ່ສາມາດກ້າເວົ້າໄດ້ແນວນີ້ວ່າ "ພວກເຮົາຮູ້ ພວກເຮົາເຫັນພຣະພົມນັ້ນວ່າຢູ່ໃສ? ໂດຍວິທີໃດ? ຫຼື ຢູ່ພົບໃດ?" ພາມຜູ້ໄດ້ໄຕຣເພດເຫຼົ່ານັ້ນ ເວົ້າແນວນີ້ວ່າ "ພວກເຮົາບໍ່ ຮູ້ພວກເຮົາບໍ່ເຫັນ ແຕ່ພວກເຮົາສະແດງທາງ ເພື່ອຄວາມເປັນຜູ້ຢູ່ຮ່ວມກັບພຣະພົມວ່າ ທາງນີ້ເທົ່ານັ້ນ ເປັນທາງກົງເປັນທາງເດີນກົງໄປ ເປັນທາງນຳອອກ ນຳຜູ້ຍ່າງຕາມໄປສູ່ຄວາມເປັນຜູ້ຢູ່ຮ່ວມກັບພຣະພົມໄດ້"

[໕໓໓] ພຣະຜູ້ມີພຣະພາກ ຕັດຖາມວ່າ "ວາເສດຖະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ ເມື່ອເປັນແນວນີ້ ພາສິດຂອງພາມຜູ້ໄດ້ໄຕຣເພດນັ້ນ ຖືວ່າເລື່ອນລອຍບໍ່ແມ່ນບໍ?"

ເຂົາທູນຕອບວ່າ "ທ່ານພຣະໂຄດົມ ເມື່ອເປັນແນວນີ້ ພາສິດຂອງພາມຜູ້ໄດ້ໄຕຣເພດຖືວ່າເລື່ອນລອຍຢ່າງແນ່ນອນ ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຖືກແລ້ວ ວາເສດຖະ ການທີ່ພາມຜູ້ໄດ້ໄຕຣເພດ ເຊິ່ງບໍ່ຮູ້ບໍ່ເຫັນພົມ ແຕ່ກັບສະແດງທາງເພື່ອຄວາມເປັນຜູ້ຢູ່ຮ່ວມກັບພົມວ່າ "ທາງນີ້ເທົ່ານັ້ນເປັນທາງກົງ ເປັນທາງເດີນກົງໄປ ເປັນທາງນຳອອກ ນຳຜູ້ຍ່າງຕາມໄປສູ່ຄວາມເປັນຜູ້ຢູ່ຮ່ວມກັບພຣະພົມໄດ້" ນັ້ນບໍ່ແມ່ນຖານະທີ່ເປັນໄປໄດ້ເລີຍ

## ປຽບດ້ວຍຊາຍຫຼົງຮັກຍິງງາມໃນຊົນນະບົດ

[໕໓໔] ວາເສດຖະ ປຽບຄື ຊາຍຄົນໜຶ່ງ ປາຣົບຄິດຮອດແມ່ຍິງສາວແນວນີ້ວ່າ "ເຮົາປາດຖະໜາຕ້ອງການຮັກແພງແມ່ຍິງງາມ ຜູ້ຢູ່ໃນຊົນນະບົດຜູ້ນັ້ນ" ເມື່ອມີຄົນຖາມເຂົາວ່າ "ທ່ານໆ ທ່ານຮູ້ຈັກແມ່ຍິງຄົນນັ້ນດີແລ້ວບໍວ່າ ເປັນຊົນຊັ້ນມີຖານະແນວໃດ? ເປັນນາງກະສັດ ນາງພາມມະນີ ນາງແພດ ຫຼື ນາງສູດ ແລ້ວບໍ?" ເມື່ອຖືກຖາມແນວນີ້ເຂົາຈະຕອບວ່າ "ບໍ່ຮູ້ຈັກ" ແລ້ວຖືກຖາມຕໍ່ໄປວ່າ "ທ່ານຮູ້ຈັກແມ່ຍິງຄົນນັ້ນແລ້ວບໍວ່າ ມີຊື່ ຕະກູນ ສູງ ຕ່ຳ ຮູບຮ່າງ ສີຜິວດຳຄ້ຳ ຫຼື ຜິວເຫຼືອງ ຢູ່ບ້ານ ນິຄົມ ຫຼື ເມືອງໃດ ແລ້ວບໍ?" ເມື່ອຖືກຖາມແນວນີ້ ເຂົາຈະຕອບວ່າ "ບໍ່ຮູ້ຈັກ" ຖືກຖາມຕໍ່ໄປວ່າ "ທ່ານປາດຖະໜາຕ້ອງການຮັກແພງແມ່ຍິງທີ່ບໍ່ຮູ້ຈັກ ທັງບໍ່ເຄີຍເຫັນກັນມາກ່ອນແນວນັ້ນແມ່ບໍ?" ເມື່ອຖືກຖາມແນວນີ້ເຂົາຈະຕອບວ່າ "ແມ່ນແລ້ວ"

[໔໖໔] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ວາເສດຖະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ? ເມື່ອເປັນແນວນີ້ ຄຳເວົ້າຂອງຊາຍຜູ້ນັ້ນຖືວ່າເລື່ອນລອຍບໍ່ແມ່ນບໍ?"

ເຂົາທູນຕອບວ່າ "ທ່ານພຣະໂຄດົມ ເມື່ອເປັນແນວນີ້ ຄຳເວົ້າຂອງຊາຍຜູ້ນັ້ນຖືວ່າເລື່ອນລອຍແນ່ນອນ"

[໔໖໖] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຄືກັນວາເສດຖະ ທີ່ກ່າວມານີ້ສະຫຼຸບໄດ້ວ່າ ບໍ່ມີພາມຜູ້ໄດ້ໄຕຣເພດທີ່ເຄີຍເຫັນພົມ ພໍຈະອ້າງຕົ້ນເອງເປັນພະຍານໄດ້ ບໍ່ມີອາຈານຂອງພາມຜູ້ໄດ້ໄຕຣເພດທີ່ເຄີຍເຫັນພົມ ພໍຈະອ້າງຕົ້ນເອງເປັນພະຍານໄດ້ ບໍ່ມີປາຣະມາຈານຂອງອາຈານຂອງພາມຜູ້ໄດ້ໄຕຣເພດທີ່ເຄີຍເຫັນພົມ ພໍຈະອ້າງຕົ້ນເອງເປັນພະຍານໄດ້ ບໍ່ມີອາຈານຂອງພາມຜູ້ໄດ້ໄຕຣເພດທີ່ເປັນອາຈານສືບທອດກັນມາເຈັດຊົ່ວອາຍຸຄົນທີ່ເຄີຍເຫັນພົມ ພໍຈະອ້າງຕົ້ນເອງເປັນພະຍານໄດ້ແລະ ໗໒໗ ພາມຜູ້ໄດ້ໄຕຣເພດເຫຼົ່ານັ້ນ ເວົ້າແນວນີ້ວ່າ "ພວກເຮົາບໍ່ຮູ້ ພວກເຮົາບໍ່ເຫັນ ແຕ່ພວກເຮົາສະແດງທາງ ເພື່ອຄວາມເປັນຜູ້ຢູ່ຮ່ວມກັບພຣະພົມວ່າ ທາງນີ້ເທົ່ານັ້ນເປັນທາງກົງ ເປັນທາງເດີນກົງໄປ ເປັນທາງນຳອອກນຳຜູ້ຍ່າງຕາມໄປສູ່ຄວາມເປັນຜູ້ຢູ່ຮ່ວມກັບພຣະພົມໄດ້"

[໔໖໗] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ວາເສດຖະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ? ເມື່ອເປັນແນວນີ້ ພາສິດຂອງພາມຜູ້ໄດ້ໄຕຣເພດນັ້ນ ຖືວ່າເລື່ອນລອຍບໍ່ແມ່ນບໍ?"

ວາເສດຖະທູນຕອບວ່າ "ທ່ານພຣະໂຄດົມ ເມື່ອເປັນແນວນີ້ ພາສິດຂອງພາມຜູ້ໄດ້ໄຕຣເພດຖືວ່າເລື່ອນລອຍຢ່າງແນ່ນອນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຖືກແລ້ວ ວາເສດຖະການທີ່ພາມຜູ້ໄດ້ໄຕຣເພດ ເຊິ່ງບໍ່ຮູ້ບໍ່ເຫັນພົມແຕ່ກັບສະແດງທາງ ເພື່ອຄວາມເປັນຜູ້ຢູ່ຮ່ວມກັບພົມວ່າ "ທາງນີ້ເທົ່ານັ້ນເປັນທາງກົງເປັນທາງເດີນກົງໄປ ເປັນທາງນຳອອກ ນຳຜູ້ຍ່າງຕາມໄປສູ່ຄວາມເປັນຜູ້ຢູ່ຮ່ວມກັບພຣະພົມໄດ້" ນັ້ນບໍ່ແມ່ນຖານະທີ່ເປັນໄປໄດ້

## ປຽບດ້ວຍຄົນສ້າງຂັ້ນໄດ

[໔໖໘] ວາເສດຖະ ປຽບຄື ບຸຣຸດສ້າງຂັ້ນໄດໃນຫົນທາງໃຫຍ່ສີ່ແຍກ ເພື່ອໃຊ້ຍ່າງຂຶ້ນຜາສາດ ເມື່ອມີຄົນຖາມເຂົາຂຶ້ນມາວ່າ "ທ່ານ ໆ ທ່ານຈະສ້າງຂັ້ນໄດຂຶ້ນຜາສາດນີ້ ທ່ານຮູ້ຈັກຜາສາດນີ້ແລ້ວບໍ?ວ່າ ຕັ້ງຢູ່ທາງທິດໃດ ທິດຕາເວັນອອກ ທິດໃຕ້ ທິດຕາເວັນຕົກ ຫຼື ທິດເໜືອ ມີລ່ວງສູງຕ່ຳ ຫຼື ປານກາງແນວໃດແລ້ວບໍ" ເມື່ອຖືກຖາມແນວນີ້ ເຂົາຈະຕອບວ່າ "ຍັງບໍ່ຮູ້ຈັກ"

ຖືກຖາມຕໍ່ໄປວ່າ "ທ່ານຈະເຮັດຂັ້ນໄດຂຶ້ນຜາສາດທີ່ຍັງບໍ່ເຄີຍຮູ້ຈັກ ແລະ ບໍ່ເຄີຍເຫັນແນວນັ້ນແມ່ນບໍ?" ເມື່ອຖືກຖາມແນວນີ້ເຂົາຈະຕອບວ່າ "ແມ່ນແລ້ວ"

[໔໓໙] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ວາເສດຖະ ທ່ານເຂົ້າໃຈເລື້ອງນັ້ນວ່າ ເປັນຢ່າງໃດ ເມື່ອເປັນແນວນີ້ ຄຳເວົ້າຂອງຊາຍຜູ້ນັ້ນຖືວ່າ ເລື່ອນລອຍບໍ່ແມ່ນບໍ?

ວາເສດຖະທູນຕອບວ່າ "ທ່ານພຣະໂຄດົມ ເມື່ອເປັນແນວນີ້ ຄຳເວົ້າຂອງຊາຍຜູ້ນັ້ນຖືວ່າເລື່ອນລອຍຢ່າງແນ່ນອນ"

[໔໔໐] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຄືກັນ ວາເສດຖະທີ່ກ່າວມານີ້ ສະຫຼຸບໄດ້ວ່າ ບໍ່ມີພາມຜູ້ໄດ້ໄຕຣເພດທີ່ເຄີຍເຫັນພົມ ທີພໍຈະອ້າງຕົນເອງເປັນພະຍານໄດ້ ບໍ່ມີອາຈານຂອງພາມຜູ້ໄດ້ໄຕຣເພດທີ່ເຄີຍເຫັນພົມ ພໍຈະອ້າງຕົນເອງເປັນພະຍານໄດ້ ບໍ່ມີປາຣະມາຈານຂອງອາຈານຂອງພາມຜູ້ໄດ້ໄຕຣເພດທີ່ເຄີຍເຫັນພົມ ພໍຈະອ້າງຕົນເອງເປັນພະຍານໄດ້ ບໍ່ມີອາຈານຂອງພາມຜູ້ໄດ້ໄຕຣເພດທີ່ເປັນອາຈານສືບທອດກັນມາເຈັດຊົ່ວອາຍຸຄົນ ເຊິ່ງເຄີຍເຫັນພົມພໍຈະອ້າງຕົນເອງເປັນພະຍານໄດ້ ພວກຣືສີຜູ້ເປັນບູຣະພາຈານຂອງພາມ ຜູ້ໄດ້ໄຕຣເພດໄດ້ແກ່ຣືສີ ອັດຖະກະ ຣືສີວາມະກະ ຣືສີວາມະເທວະ ຣືສີເວດສາມິດ ຣືສີຍະມະຕັກຄີ ຣືສີອັງຄີຣະສະ ຣືສີພາຣັດທະວາຊະ ຣືສີວາເສດຖະ ຣືສີກັດສະປະ ແລະ ຣືສີພາຄຸເຊິ່ງເປັນຜູ້ຜູກມົນບອກມົນທີ່ພວກພາມຜູ້ໄດ້ໄຕຣເພດໃນເວລານີ້ ໃຊ້ຂັບຕາມກ່ອມຕາມເຊິ່ງບົດມົນເກົ່າທີ່ທ່ານຂັບໄວ້ ກ່ອມໄວ້ ໂຮມຖືລວມໄວ້ກ່າວໄດ້ຖືກຕ້ອງຕາມທີ່ທ່ານກ່າວໄວ້ ບອກໄດ້ຖືກຕ້ອງຕາມທີ່ທ່ານບອກໄວ້ ແມ່ນຣືສີເຫຼົ່ານັ້ນກໍບໍ່ມີເລີຍທີ່ເວົ້າແນວນີ້ວ່າ "ພວກເຮົາຮູ້ພວກເຮົາເຫັນພົມນັ້ນວ່າຢູ່ໄສ ໂດຍວິທີໃດ ຫຼື ຢູ່ພົບໃດ?" ພາມຜູ້ໄດ້ໄຕຣເພດເຫຼົ່ານັ້ນ ເວົ້າແນວນີ້ວ່າ "ພວກເຮົາບໍ່ຮູ້ພວກເຮົາບໍ່ເຫັນ ແຕ່ພວກເຮົາສະແດງທາງເພື່ອຄວາມເປັນຜູ້ຢູ່ຮ່ວມກັບພຣະພົມວ່າ ທາງນີ້ເທົ່ານັ້ນເປັນທາງກົງເປັນທາງເດີນກົງໄປເປັນທາງນຳອອກ ນຳຜູ້ຍ່າງຕາມໄປສູ່ຄວາມເປັນຜູ້ຢູ່ຮ່ວມກັບພຣະພົມໄດ້"

[໔໔໑] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ວາເສດຖະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ? ເມື່ອເປັນແນວນີ້ ພາສິດຂອງພາມຜູ້ໄດ້ໄຕຣເພດ ກໍຖືວ່າເລື່ອນລອຍບໍ່ແມ່ນບໍ?"

ວາເສດຖະທູນຕອບວ່າ "ທ່ານພຣະໂຄດົມ ເມື່ອເປັນແນວນີ້ ພາສິດຂອງພາມຜູ້ໄດ້ໄຕຣເພດກໍຖືວ່າເລື່ອນລອຍຢ່າງແນ່ນອນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຖືກລະວາເສດຖະ ການທີ່ພາມຜູ້ໄດ້ໄຕຣເພດເຊິ່ງບໍ່ຮູ້ບໍ່ເຫັນພົມ ແຕ່ກັບສະແດງທາງເພື່ອຄວາມເປັນຜູ້ຢູ່ຮ່ວມກັບພົມວ່າ "ທາງນີ້ເທົ່ານັ້ນເປັນທາງກົງເປັນທາງເດີນກົງໄປ ເປັນທາງນຳອອກ ນຳຜູ້ຍ່າງຕາມໄປສູ່ຄວາມເປັນຜູ້ຢູ່ຮ່ວມກັບພຣະພົມໄດ້" ນັ້ນບໍ່ແມ່ນຖານະທີ່ເປັນໄປໄດ້ເລີຍ

# ປຽບດ້ວຍແມ່ນໍ້າອະຈິຣະວະດີ

[໕໔໘] ວາເສດຖະ ປຽບຄື ແມ່ນໍ້າອະຈິຣະວະດີ ມີນໍ້າເຕັມສະເໝີຝັ່ງ ນົກ ແລະ ກາສາມາດກົ້ມລົງດື່ມກິນນໍ້າໄດ້ ມີຊາຍຄົນໜຶ່ງຕ້ອງການຈະຂ້າມຝັ່ງ ປະສົງຈະຂ້າມຝັ່ງນັ້ນໄປ ເຂົາຢືນຢູ່ຝັ່ງນີ້ຮ້ອງຂຶ້ນຮຽກໃສ່ຝັ່ງນັ້ນວ່າ “ຝັ່ງເອີຍ ຈົ່ງເລື່ອນມາຫາຝັ່ງນີ້ແດ່ ເຮົາຈະຂ້າມໄປ”

[໕໔໙] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ “ວາເສດຖະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ? ຍ້ອນເຫດທີ່ຊາຍຜູ້ນັ້ນ ຮ້ອງຮຽກ ອ້ອນວອນ ຫຼື ສັນລະເສີນບູຊາຝັ່ງນັ້ນ ຂອງແມ່ນໍ້າອະຈິຣະວະດີແລ້ວຝັ່ງນັ້ນຈະເລື່ອນມາຫາຝັ່ງນີ້ໄດ້ບໍ?”

ວາເສດຖະທູນຕອບວ່າ “ບໍ່ໄດ້ ທ່ານພຣະໂຄດົມ”

[໕໔໔] ພຣະຜູ້ມີພຣະພາກເຈົ້າຕັດວ່າ “ແນວນັ້ນຄືກັນ ວາເສດຖະ ການທີ່ພາມຜູ້ໄດ້ໄຕຣເພດລະທຳທີ່ເຮັດໃຫ້ເປັນພົມ ກັບໄປຖືເອົາທຳທີ່ບໍ່ເຮັດໃຫ້ເປັນພົມມາປະພຶດເວົ້າແນວນີ້ວ່າ “ພວກເຮົາຂໍຮຽກຮ້ອງພຣະອິນ ຮຽກຮ້ອງພຣະຈັນ ຮຽກຮ້ອງພຣະພິຣຸນ ຮຽກຮ້ອງພຣະອີສວນ ຮ້ອງຮຽກພຣະປະຊາບໍດີ ຮຽກຮ້ອງພຣະພົມ ຮຽກຮ້ອງພຣະມະຫິດ” ວາເສດຖະ ການທີ່ພາມຜູ້ໄດ້ໄຕຣເພດເຫຼົ່ານັ້ນລະທຳທີ່ເຮັດໃຫ້ເປັນພົມ ກັບໄປຖືເອົາທຳທີ່ບໍ່ເຮັດໃຫ້ເປັນພົມມາປະພຶດ ຫຼັງຈາກຕາຍແລ້ວຈະເຖິງຄວາມເປັນຜູ້ຢູ່ຮ່ວມກັບພົມເພາະການຮຽກຮ້ອງ ການອ້ອນວອນ ຫຼື ການສັນລະເສີນບູຊາແນວນັ້ນ ບໍ່ແມ່ນຖານະທີ່ຈະເປັນໄປໄດ້ເລີຍ

[໕໔໕] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ “ວາເສດຖະ ປຽບຄື ແມ່ນໍ້າອະຈິຣະວະດີ ມີນໍ້າເຕັມສະເໝີຝັ່ງ ທີ່ນົກກາກົ້ມລົງດື່ມກິນໄດ້ ມີຊາຍຄົນໜຶ່ງຕ້ອງການຂ້າມໄປຫາອີກຝັ່ງ ແຕ່ກັບເອົາເຊືອກໜຽວມັດແຂນກັບຫຼັງໃຫ້ແໜ້ນແລ້ວຢືນຢູ່ຊື່ ໆ ວາເສດຖະທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ? ຊາຍຄົນນັ້ນຈະສາມາດຂ້າມແມ່ນໍ້າອະຈິຣະວະດີໄປໄດ້ບໍ?”

ວາເສດຖະທູນຕອບວ່າ “ບໍ່ໄດ້ ທ່ານພຣະໂຄດົມ”

[໕໔໖] ພຣະຜູ້ມີພຣະພາກເຈົ້າຕັດວ່າ “ແນວນັ້ນຄືກັນ ວາເສດຖະ ກາມມະຄຸນ ໕ ຢ່າງຕໍ່ໄປນີ້ໃນວິໄນຂອງພຣະອະຣິຍະຮຽກວ່າ ເຊືອກຜູກມັດແດ່ ເຄື່ອງຈອງຈຳແດ່ ກາມມະຄຸນ ໕ ມີອັນໃດແດ່? ມີຄື ຮູບທີ່ຮູ້ແຈ້ງດ້ວຍຕາອັນໜ້າປາດຖະໜາຮັກແພງພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ ສຽງທີ່ຮູ້ແຈ້ງດ້ວຍຫູອັນມ່ວນໜ້າປາດຖະ ໜ້າຮັກແພງ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ ກິ່ນທີ່ຮູ້ແຈ້ງດ້ວຍດັງອັນຫອມຫວນ ໜ້າປາດຖະ ໜາຮັກແພງ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ ຣົດຊາດທີ່ຮູ້ແຈ້ງດ້ວຍລີ້ນອັນແຊບນົວ ໜ້າປາດຖະໜາ ໜ້າຮັກແພງ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້

ຕ້ອງການ ພາໃຈໃຫ້ກຳໜັດ ໂຜດຖັບພະກາຍສຳພັດທີ່ຮູ້ແຈ້ງດ້ວຍກາຍອັນນຸ້ມນວນ ໜ້າປາດ ຖະໜາ ໜ້າຮັກແພງ ໜ້າພໍໃຈ ຊວນໃຫ້ຮັກດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ"

ວາເສດຖະ ພາມຜູ້ໄດ້ໄຕຣເພດທັງຫຼາຍ ຍັງເປັນຜູ້ກຳໜັດ ສະຍົບໝົກມຸ່ນຢູ່ ແນມບໍ່ ເຫັນໂທດ ບໍ່ມີປັນຍາທີ່ຈະກຳຈັດອອກ ບໍລິໂພກກາມມະຄຸນ ໕ ຢ່າງນີ້ຢູ່ ການທີ່ພາມຜູ້ໄດ້ໄຕຣ ເພດລະທຳທີ່ເຮັດໃຫ້ເປັນພາມ ກັບໄປຖືເອົາທຳທີ່ບໍ່ເຮັດໃຫ້ເປັນພາມມາປະພຶດ ກຳໜັດ ສະຍົບ ໝົກມຸ່ນຢູ່ ແນມບໍ່ເຫັນໂທດ ບໍ່ມີປັນຍາທີ່ຈະກຳຈັດອອກ ບໍລິໂພກກາມມະຄຸນ ໕ ຢູ່ ຕິດໄຊຄື ການທັງຫຼາຍເຫຼົ່ານັ້ນ ຫຼັງຈາກຕາຍແລ້ວ ຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພົມໄດ້ນັ້ນ ບໍ່ແມ່ນ ຖານະທີ່ຈະເປັນໄປໄດ້ເລີຍ

[໕໔໗] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ວາເສດຖະ ປຽບຄືແມ່ນ້ຳອະຈິຣະວະດີ ມີນ້ຳ ເຕັມສະເໝີຝັ່ງ ນົກກາກົ້ມລົງດື່ມກິນໄດ້ ມີຊາຍຄົນໜຶ່ງ ຕ້ອງການຂ້າມໄປຫາອີກຝັ່ງ ແຕ່ກັບ ນອນຄຸມໂປງຢູ່ລ້າ ໆ ຢູ່ຝັ່ງນີ້ ວາເສດຖະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ ຊາຍຄົນນັ້ນຈະ ຂ້າມແມ່ນ້ຳອະຈິຣະວະດີໄປໄດ້ບໍ"

ວາເສດຖະທູນຕອບວ່າ "ບໍ່ໄດ້ ທ່ານພຣະໂຄດົມ"

[໕໔໘] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ແນວນັ້ນຄືກັນ ວາເສດຖະ ນິວອນ ໕ ຕໍ່ໄປນີ້ໃນ ວິໄນຂອງພຣະອະຣິຍະຮຽກວ່າ ເຄື່ອງໜ່ວງໜ່ຽວແດ່ ເຄື່ອງກາງກັ້ນແດ່ ເຄື່ອງຮັດດຶງແດ່ ນິວອນ ໕ ນີ້ມີອັນໃດແດ່ ມີຄືກາມສັນທະ ພະຍາບາດ ຖີນະມິດທະ ອຸດທັດຈະ ກຸກກຸດຈະ ແລະ ວິຈິກິດສາ ວາເສດຖະນິວອນ ໕ ຢ່າງເຫຼົ່ານີ້ແລ ໃນວິໄນຂອງພຣະອະຣິຍະຮຽກວ່າ ເຄື່ອງ ໜ່ວງໜ່ຽວ ເຄື່ອງກາງກັ້ນ ເຄື່ອງຮັດດຶງ ເປັນອຸປະສັກໃນການບັນລຸທຳອັນສູງຍິ່ງຂຶ້ນໄປ

[໕໔໙] ວາເສດຖະ ພາມຜູ້ໄດ້ໄຕຣເພດທັງຫຼາຍ ຍັງຖືກນິວອນ ໕ ຢ່າງເຫຼົ່ານີ້ ໜ່ວງ ໜ່ຽວກາງກັ້ນຮັດດຶງຄຶງເອົາໄວ້ ການທີ່ພາມຜູ້ໄດ້ໄຕຣເພດລະທຳທີ່ເຮັດໃຫ້ເປັນພາມກັບໄປຖືເອົາ ທຳທີ່ບໍ່ເຮັດໃຫ້ເປັນພາມມາປະພຶດ ຖືກນິວອນ ໕ ໜ່ວງໜ່ຽວ ກາງກັ້ນຮັດດຶງຄຶງເອົາໄວ້ ຫຼັງ ຈາກຕາຍແລ້ວ ຈະເປັນຜູ້ເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພົມນັ້ນ ບໍ່ແມ່ນຖານະທີ່ຈະເປັນໄປ ໄດ້ເລີຍ

## ເລື້ອງທີ່ຕັດທຽມຄຽງລະຫວ່າງພົມກັບພາມ

[໕໕໐] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ວາເສດຖະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວ ໃດ? ທ່ານເຄີຍໄດ້ຍິນພາມຜູ້ແກ່ຜູ້ເຖົ້າ ຜູ້ເປັນອາຈານ ແລະ ປາຣະມາຈານກ່າວວ່າແນວໃດ ພົມມີເຄື່ອງເກາະກ່ຽວ (ມີຄູ່ຄອງ) ຫຼື ບໍ່ມີ?"

ວາເສດຖະ ທູນຕອບວ່າ "ບໍ່ມີເຄື່ອງເກາະກ່ຽວທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພົມເປັນຜູ້ຄິດຈອງເວນ ຫຼື ບໍ່ຄິດຈອງເວນ?"

ວາເສດຖະທູນຕອບວ່າ "ບໍ່ຄິດຈອງເວນ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພົມເປັນຜູ້ຄິດບຽດບຽນ ຫຼື ບໍ່ຄິດບຽດບຽນ?"

ວາເສດຖະ ທູນຕອບວ່າ "ບໍ່ຄິດບຽດບຽນ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພົມມີຈິດເສົ້າໝອງ ຫຼື ມີຈິດບໍ່ເສົ້າໝອງ?"

ວາເສດຖະ ທູນຕອບວ່າ "ມີຈິດບໍ່ເສົ້າໝອງ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພົມເປັນຜູ້ຄວບຄຸມຈິດໃຫ້ຢູ່ໃນອຳນາດໄດ້ ຫຼື ຄວບຄຸມຈິດໃຫ້ຢູ່ໃນອຳນາດບໍ່ໄດ້"

ວາເສດຖະ ທູນຕອບວ່າ "ບັງຄັບຈິດໃຫ້ຢູ່ໃນອຳນາດໄດ້ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ວາເສດຖະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ ພາມຜູ້ໄດ້ໄຕຣເພດມີເຄື່ອງເກາະກ່ຽວ ຫຼື ບໍ່ມີເຄື່ອງເກາະກ່ຽວ?"

ວາເສດຖະ ທູນຕອບວ່າ "ມີເຄື່ອງເກາະກ່ຽວທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພາມຄິດຈອງເວນ ຫຼື ບໍ່ຄິດຈອງເວນ?"

ວາເສດຖະທູນຕອບວ່າ "ຄິດຈອງເວນ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພາມຄິດບຽດບຽນ ຫຼື ບໍ່ຄິດບຽດບຽນ?"

ວາເສດຖະທູນຕອບວ່າ "ຄິດບຽດບຽນ ທ່ານພຣະໂຄດົມ?"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພາມມີຈິດເສົ້າໝອງ ຫຼື ມີຈິດບໍ່ເສົ້າໝອງ?"

ວາເສດຖະທູນຕອບວ່າ "ມີຈິດເສົ້າໝອງທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພາມເປັນຜູ້ຄວບຄຸມຈິດໃຫ້ຢູ່ໃນອຳນາດໄດ້ ຫຼື ຄວບຄຸມຈິດໃຫ້ຢູ່ໃນອຳນາດບໍ່ໄດ້"

ວາເສດຖະທູນຕອບວ່າ "ຄວບຄຸມຈິດໃຫ້ຢູ່ໃນອຳນາດບໍ່ໄດ້ທ່ານພຣະໂຄດົມ"

[໕໕໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ວາເສດຖະ ທີ່ກ່າວມານີ້ ສະຫຼຸບໄດ້ວ່າ ພາມຜູ້ໄດ້ໄຕຣເພດຍັງມີເຄື່ອງເກາະກ່ຽວ ແຕ່ພົມບໍ່ມີເຄື່ອງເກາະກ່ຽວ ດັ່ງນັ້ນ ຈະປຽບທຽມພາມຜູ້ໄດ້ໄຕຣເພດທີ່ຍັງມີເຄື່ອງເກາະກ່ຽວ ກັບພົມຜູ້ບໍ່ມີເຄື່ອງເກາະກ່ຽວໄດ້ແລ້ວຫຼືບໍ່?"

ວາເສດຖະທູນຕອບວ່າ "ປຽບທຽມກັນບໍ່ໄດ້ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ຖືກລະວາເສດຖະ ການທີ່ພາມຜູ້ໄດ້ໄຕຣເພດເຫຼົ່ານັ້ນເຊິ່ງຍັງມີເຄື່ອງເກາະກ່ຽວ ຫຼັງຈາກຕາຍແລ້ວ ຈະເປັນຜູ້ເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພົມຜູ້ບໍ່ມີເຄື່ອງເກາະກ່ຽວນັ້ນ ບໍ່ແມ່ນຖານະທີ່ຈະເປັນໄປໄດ້ ວາເສດຖະ ພາມຜູ້ໄດ້ໄຕຣເພດຍັງຄິດ

ຈອງເວນ ແຕ່ພົມບໍ່ຄິດຈອງເວນ ດັ່ງນັ້ນ ຈະປຽບທຽມພາມຜູ້ໄດ້ໄຕຣເພດທີ່ຍັງຄິດຈອງເວນກັບພົມຜູ້ບໍ່ຄິດຈອງເວນໄດ້ແລ້ວຫຼືບໍ່?"

ວາເສດຖະທູນຕອບວ່າ "ປຽບທຽມກັນບໍ່ໄດ້ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພາມຜູ້ໄດ້ໄຕຣເພດຍັງຄິດບຽດບຽນ ແຕ່ພົມບໍ່ຄິດບຽດບຽນດັ່ງນັ້ນ ຈະປຽບທຽມພາມຜູ້ໄດ້ໄຕຣເພດ ທີ່ຍັງຄິດບຽດບຽນກັບພົມຜູ້ບໍ່ຄິດບຽດບຽນໄດ້ແລ້ວຫຼືບໍ່?"

ວາເສດຖະທູນຕອບວ່າ "ປຽບທຽມກັນບໍ່ໄດ້ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພາມຜູ້ໄດ້ໄຕຣເພດຍັງມີຈິດເສົ້າໝອງ ແຕ່ພົມມີຈິດບໍ່ເສົ້າໝອງ ຈະປຽບທຽມພາມຜູ້ໄດ້ໄຕຣເພດທີ່ຍັງມີຈິດເສົ້າໝອງກັບພົມຜູ້ມີຈິດບໍ່ເສົ້າໝອງໄດ້ແລ້ວຫຼືບໍ່?"

ວາເສດຖະ ທູນຕອບວ່າ "ປຽບທຽມກັນບໍ່ໄດ້ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພາມຜູ້ໄດ້ໄຕຣເພດຍັງຄວບຄຸມຈິດຕົນໃຫ້ຢູ່ໃນອຳນາດບໍ່ໄດ້ ແຕ່ພົມຄວບຄຸມຈິດຕົນຢູ່ໃນອຳນາດໄດ້ ຈະປຽບທຽມພາມຜູ້ໄດ້ໄຕຣເພດທີ່ຍັງຄວບຄຸມຈິດຕົນໃຫ້ຢູ່ໃນອຳນາດບໍ່ໄດ້ ກັບພົມຜູ້ຄວບຄຸມຈິດຕົນໃຫ້ຢູ່ໃນອຳນາດໄດ້ແລ້ວຫຼືບໍ່?"

ວາເສດຖະທູນຕອບວ່າ "ປຽບທຽມກັນບໍ່ໄດ້ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຖືກແລ້ວ ວາເສດຖະ ການທີ່ພາມຜູ້ໄດ້ໄຕຣເພດທີ່ຍັງຄວບຄຸມຈິດຕົນໃຫ້ຢູ່ໃນອຳນາດບໍ່ໄດ້ ຫຼັງຈາກຕາຍແລ້ວ ຈະເຖິງຄວາມເປັນຜູ້ຢູ່ຮ່ວມກັບພົມຜູ້ຄວບຄຸມຈິດຕົນຢູ່ໃນອຳນາດໄດ້ນັ້ນ ບໍ່ແມ່ນຖານະທີ່ເປັນໄປໄດ້ເລີຍ"

[໕໕໔] ວາເສດຖະ ພາມຜູ້ໄດ້ໄຕຣເພດເຫຼົ່ານັ້ນ ເປັນຜູ້ຈົມລົງແລ້ວກໍຍັງຈະຈົມຢູ່ຕໍ່ໄປໃນໂລກນີ້ ເມື່ອຈົບລົງຕິດຢູ່ໃນໂລກແລ້ວ ກໍເຖິງຄວາມພິນາດແຕກສະຫຼາຍຫາຍໄປ ແຕ່ກໍຍັງເຂົ້າໃຈວ່າຕົນຂ້າມພົ້ນໄປໄດ້ແລ້ວໂດຍງ່າຍ ດັ່ງນັ້ນ ເຮົາຈຶ່ງຮຽກໄຕຣເພດຂອງພາມຜູ້ໄດ້ໄຕຣເພດວ່າ ປ່າໃຫຍ່ຄືໄຕຣເພດແດ່ ດົງກັນດານຄືໄຕຣເພດແດ່ ຄວາມພິນາດຄືໄຕຣເພດແຫ່ງພາມແດ່ ດັ່ງນີ້ແລ

[໕໕໖] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ວາ ເສດຖະມານົບຂາບທູນວ່າ "ທ່ານພຣະໂຄດົມ ຂ້າພຣະອົງໄດ້ຟັງມາວ່າ ພຣະສະມະນະໂຄດົມຊົງຮູ້ທາງໄປເພື່ອຄວາມເປັນຜູ້ຢູ່ຮ່ວມກັບພຣະພົມເລື້ອງນີ້ແມ່ນແທ້ບໍ?

ພຣະຜູ້ມີພຣະພາກຕັດ ຍ້ອນຖາມວ່າ "ວາເສດຖະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ? ໝູ່ບ້ານນົບສາກະຕະຢູ່ໃກ້ພຽງນີ້ເອງບໍ່ໄກໄປຈາກນີ້ແມ່ນບໍ່?"

ວາເສດຖະທູນຕອບວ່າ "ເປັນແນວນັ້ນ ທ່ານພຣະໂຄດົມ"

[໔໕໔] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ວາເສດຖະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ? ຄົນຜູ້ທີ່ມາຮອດໃນໝູ່ບ້ານນົບສາກະຕະນີ້ ເມື່ອຖືກຖາມເຖິງທາງໄປໝູ່ບ້ານນົບສາກະຕະ ເຂົາຈະອອກມາຕອບບອກທາງໃຫ້ໂດຍໄວ ຫຼື ເຂົາຈະຊັກຊ້າ ຫຼື ຖ້າໄວ້ກ່ອນ?"

ວາເສດຖະທູນຕອບວ່າ "ບໍ່ຊັກຊ້າ ຫຼື ຖ້າໄວ້ກ່ອນເລີຍ ທ່ານພຣະໂຄດົມ ເພາະເຂົາເກີດແລະໃຫຍ່ຂຶ້ນມາໃນໝູ່ບ້ານນົບສາກະຕະນີ້ ຈຶ່ງຮູ້ທົນທາງໃນໝູ່ບ້ານໄດ້ເປັນຢ່າງດີ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ວາເສດຖະ ຜູ້ທີ່ເກີດໃຫຍ່ຂຶ້ນມາໃນໝູ່ບ້ານນົບສາກະຕະຖືກຖາມເຖິງທາງໄປໝູ່ບ້ານນັ້ນ ກໍຍັງອາດຈະຊັກຊ້າ ຫຼື ຖ້າເອົາໄວກ່ອນແດ່ ແຕ່ເຮົາຕະຖາຄົດເມື່ອຖືກຖາມເຖິງພົມມະໂລກ ຫຼື ຂໍ້ປະຕິບັດທີ່ພາໄປພົມມະໂລກຈະບໍ່ຊັກຊ້າ ຫຼື ຖ້າເອົາໄວ້ກ່ອນເລີຍ ເພາະເຮົາຮູ້ຈັກພົມມະໂລກ ແລະ ຂໍ້ປະຕິບັດທີ່ພາໄປສູ່ພົມມະໂລກ ແລະຮູ້ອີກວ່າ ຕ້ອງປະຕິບັດແນວໃດ? ຈຶ່ງໄດ້ເຂົ້າເຖິງພົມມະໂລກ

[໔໕໕] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ ວາເສດຖະມານົບຂາບທູນວ່າ "ທ່ານພຣະໂຄດົມ ຂ້າພຣະອົງໄດ້ຟັງມາວ່າ ພຣະສະມະນະໂຄດົມ ຊົງສະແດງທາງໄປເພື່ອຄວາມເປັນຜູ້ຢູ່ຮ່ວມກັບພຣະພົມໄດ້ ຂ້າພຣະອົງຂໍວະໂຣກາດ ຂໍທ່ານພຣະໂຄດົມໂຜດສະແດງທາງໄປເພື່ອຄວາມເປັນຜູ້ຢູ່ຮ່ວມກັບພຣະພົມ ຂໍພຣະອົງໂຜດອະນຸເຄາະ ສົງເຄາະຊຸມຊົນພາມດ້ວຍເຖີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ວາເສດຖະ ຖ້າແນວນັ້ນ ທ່ານຈົ່ງຟັງ ຈົ່ງຕັ້ງໃຈໃຫ້ດີເຮົາຈະສະແດງໃຫ້ຮູ້"

ວາເສດຖະ ທູນຮັບສະໜອງພຣະດຳຣັດຂອງພຣະຜູ້ມີພຣະພາກແລ້ວນັ່ງນິ່ງຕັ້ງໃຈຟັງ

## ຊົງສະແດງທາງໄປພົມມະໂລກ

[໔໕໖] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ວາເສດຖະ ຕະຖາຄົດອຸບັດຂຶ້ນມາໃນໂລກນີ້ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍຕົນເອງໂດຍຊອບ ฯລฯ (ເພິ່ງນຳຂໍ້ຄວາມເຕັມໃນສາມັນຍະຜົນສູດມາໃສ່ໄວ້ໃນບ່ອນນີ້) ພິກຂຸຊື່ວ່າ ສົມບູນດ້ວຍສີນເປັນແນວນີ້ ฯລฯ ເມື່ອພິກຂຸນັ້ນພິຈາລະນາເຫັນນິວອນ ໕ ທີ່ຕົນລະໄດ້ແລ້ວ ຍ່ອມເກີດຄວາມເບີກບານໃຈ ເມື່ອເບີກບານໃຈກໍຍ່ອມເກີດປີຕິເມື່ອໃຈມີປີຕິ ກາຍຍ່ອມສະຫງົບ ທ່ານມີກາຍສະຫງົບຍ່ອມໄດ້ຮັບຄວາມສຸກ ເມື່ອມີຄວາມສຸກຈິດ

ກໍຕັ້ງໝັ້ນຢູ່ ພິກຂຸນັ້ນມີເມດຕາຈິດແຜ່ໄປຕະຫຼອດທິດທີ່ ໑ ທິດທີ່ ໒ ທິດທີ່ ໓ ທິດທີ່ ໔ ທິດທາງເທິງ ທິດທາງລຸ່ມ ທິດສຽງແຜ່ໄປໃນໂລກທົ່ວທຸກໝູ່ເຫຼົ່າ ໃນທີ່ທຸກສະຖານດ້ວຍເມດຕາຈິດອັນໄພບູນ ເປັນມະຫັກຄະຕະບໍ່ມີຂອບເຂດບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່"

ວາເສດຖະ ກໍາທີ່ເຮັດມີພໍປະມານໃນເມດຕາເຈໂຕວິມຸຕຕິ ທີ່ບຸກຄົນອົບຮົມແລ້ວແນວນີ້ ຈະບໍ່ມີເຫຼືອຢູ່ໃນຮູປະວະຈອນ ແລະ ອະຮູປະວະຈອນ ປຽບຄື ຄົນຜູ້ເປົ່າສັງ ຜູ້ມີກໍາລັງຮ່າງກາຍແຂງແຮງເປົ່າໃຫ້ຜູ້ອື່ນໄດ້ຍິນທັງ ໔ ທິດໄດ້ໂດຍບໍ່ຍາກ ວາເສດຖະນີ້ແລ ເປັນທາງໄປເພື່ອຄວາມເປັນຜູ້ຢູ່ຮ່ວມກັບພົມ

ຍັງມີອີກວາເສດຖະ ພິກຂຸມີກະລຸນາຈິດ ຯລຯ ມີມຸທິຕາຈິດ ຯລຯ ມີອຸເປກຂາຈິດແຜ່ໄປໃນທິດທີ່ ໑ ທິດທີ່ ໒ ທິດທີ່ ໓ ທິດທີ່ ໔ ທິດທາງເທິງ ທາງລຸ່ມ ທິດສຽງແຜ່ໄປໃນໂລກຮອດທົ່ວທຸກໝູ່ເຫຼົ່າສັບພະສັດ ໃນທີ່ທຸກສະຖານດ້ວຍອຸເປກຂາຈິດອັນໄພບູນເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຕັ້ງໝັ້ນຢູ່

ວາເສດຖະ ກໍາທີ່ເຮັດພໍປະມານໃນອຸເປກຂາເຈໂຕວິມຸຕຕິ ທີ່ບຸກຄົນອົບຮົມແລ້ວແນວນີ້ ຈະບໍ່ມີເຫຼືອຢູ່ໃນຮູປະວະຈອນ ແລະ ອະຮູປະວະຈອນ ປຽບຄື ຄົນຜູ້ແຂງແຮງເປົ່າສັງ ເພິ່ງໃຫ້ຜູ້ອື່ນໄດ້ຍິນທັງ ໔ ທິດໄດ້ໂດຍບໍ່ຍາກ ວາເສດຖະນີ້ແລ ເປັນທາງໄປເພື່ອຄວາມເປັນຜູ້ຢູ່ຮ່ວມກັບພົມ

[໕໕໗] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ວາເສດຖະ ທ່ານເຂົ້າໃຈເລື້ອງນັ້ນວ່າແນວໃດ? ຖ້າພິກຂຸຜູ້ມີປົກກະຕິຢູ່ແນວນີ້ ຈະມີເຄື່ອງເກາະກ່ຽວ ຫຼື ບໍ່ມີເຄື່ອງເກາະກ່ຽວ"

ວາເສດຖະ ທູນຕອບວ່າ "ບໍ່ມີເຄື່ອງເກາະກ່ຽວ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ຄິດຈອງເວນ ຫຼື ບໍ່ຄິດຈອງເວນ?"

ວາເສດຖະທູນຕອບວ່າ "ບໍ່ຄິດຈອງເວນ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ຄິດບຽດບຽນ ຫຼື ບໍ່ຄິດບຽດບຽນ?"

ວາເສດຖະທູນຕອບວ່າ "ບໍ່ຄິດບຽດບຽນ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ມີຈິດເສົ້າໝອງ ຫຼື ມີຈິດບໍ່ເສົ້າໝອງ?"

ວາເສດຖະທູນຕອບວ່າ "ມີຈິດບໍ່ເສົ້າໝອງ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ຄວບຄຸ້ມຈິດໃຫ້ຢູ່ໃນອໍານາດໄດ້ ຫຼື ຄວບຄຸ້ມຈິດໃຫ້ຢູ່ໃນອໍານາດບໍ່ໄດ້"

ວາເສດຖະທູນຕອບວ່າ "ຄວບຄຸ້ມຈິດໃຫ້ຢູ່ໃນອໍານາດໄດ້ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ວາເສດຖະທີ່ກ່າວມານີ້ ສະຫຼຸບໄດ້ວ່າ ພິກຂຸບໍ່ມີເຄື່ອງເກາະກ່ຽວ ພົມກໍບໍ່ມີເຄື່ອງເກາະກ່ຽວ ດັ່ງນັ້ນ ຈະປຽບທຽບພິກຂຸຜູ້ບໍ່ມີເຄື່ອງເກາະກ່ຽວກັບພົມຜູ້ບໍ່ມີເຄື່ອງເກາະກ່ຽວໄດ້ບໍ?

ວາເສດຖະທູນຕອບວ່າ "ປຽບທຽບກັນໄດ້ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຖືກແລ້ວ ວາເສດຖະ ການທີ່ພິກຂຸນັ້ນ ຜູ້ບໍ່ມີເຄື່ອງເກາະກ່ຽວຫຼັງຈາກຕາຍແລ້ວ ຈະເຖິງຄວາມເປັນຜູ້ຢູ່ຮ່ວມກັບພົມ ຜູ້ບໍ່ມີເປັນເຄື່ອງເກາະກ່ຽວນັ້ນ ເປັນຖານະທີ່ເປັນໄປໄດ້"

[໕໕໗] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ວາເສດຖະພິກຂຸບໍ່ຄິດຈອງເວນ ພົມກໍບໍ່ຄິດຈອງເວນດັ່ງນັ້ນ ຈະປຽບທຽບພິກຂຸຜູ້ບໍ່ຄິດຈອງເວນກັບພົມ ຜູ້ບໍ່ຄິດຈອງເວນໄດ້ບໍ່"

ວາເສດຖະທູນຕອບວ່າ "ປຽບທຽບກັນໄດ້ທ່ານພຣະໂຄດົມ

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພິກຂຸບໍ່ຄິດບຽດບຽນພົມກໍບໍ່ຄິດບຽດບຽນ ດັ່ງນັ້ນ ຈະປຽບທຽບພິກຂຸຜູ້ບໍ່ຄິດບຽດບຽນກັບພົມຜູ້ບໍ່ຄິດບຽດບຽນໄດ້ບໍ່?"

ວາເສດຖະທູນຕອບວ່າ "ປຽບທຽບກັນໄດ້ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພິກຂຸມີຈິດບໍ່ເສົ້າໝອງ ພົມກໍມີຈິດບໍ່ເສົ້າໝອງ ດັ່ງນັ້ນ ຈະປຽບທຽບພິກຂຸຜູ້ມີຈິດບໍ່ເສົ້າໝອງກັບພົມ ຜູ້ມີຈິດບໍ່ເສົ້າໝອງໄດ້ບໍ່?"

ວາເສດຖະທູນຕອບວ່າ "ປຽບທຽບກັນໄດ້ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພິກຂຸຄວບຄຸມຈິດໃຫ້ຢູ່ໃນອຳນາດໄດ້ ພົມກໍຄວບຄຸ້ມຈິດໃຫ້ຢູ່ໃນອຳນາດໄດ້ດັ່ງນັ້ນ ຈະປຽບທຽບພິກຂຸຜູ້ຄວບຄຸມຈິດໃຫ້ຢູ່ໃນອຳນາດໄດ້ກັບພົມຜູ້ບັງຄັບຈິດໃຫ້ຢູ່ໃນອຳນາດໄດ້ບໍ?"

ວາເສດຖະທູນຕອບວ່າ "ປຽບທຽບກັນໄດ້ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຖືກລະວາເສດຖະ ການທີ່ພິກຂຸນັ້ນ ຜູ້ຄວບຄຸມຈິດໃຫ້ຢູ່ໃນອຳນາດໄດ້ຫຼັງຈາກຕາຍແລ້ວ ຈະເຖິງຄວາມເປັນຜູ້ຢູ່ຮ່ວມກັບພົມ ຜູ້ຄວບຄຸມຈິດໃຫ້ຢູ່ໃນອຳນາດໄດ້ນັ້ນເປັນຖານະທີ່ເປັນໄປໄດ້"

## ມານົບທັງສອງປະກາດຕົນເປັນອຸປາສິກາ

[໕໕໙] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ວາ ເສດຖະມານົບກັບພາຣັດທະວາຊະມານົບໄດ້ ຂາບທູນວ່າ ຂ້າແຕ່ ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມຊັດແຈ້ງມ່ວນຫຼາຍ ຂ້າແຕ່ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມຊັດແຈ້ງມ່ວນຫຼາຍ ທ່ານພຣະໂຄດົມຊົງປະກາດທຳຊັດແຈ້ງໂດຍປະການຕ່າງ ໆ ປຽບຄື ບຸກຄົນຫງາຍຂອງທີ່ງ້ວມຢູ່ ເປີດຂອງທີ່ປິດ ບອກທາງແກ່ຜູ້ຫຼົງທາງ ຫຼືໃຕ້ປະທີບໃນທີ່ມືດໂດຍຕັ້ງໃຈວ່າ ຄົນມີຕາດີ ຈັກເຫັນຮູບໄດ້ ຂ້າພຣະອົງທັງສອງນີ້ ຂໍເຖິງທ່ານພຣະໂຄດົມພ້ອມທັງພຣະທຳ ແລະ ພຣະສົງເປັນສະຣະນະ ຂໍທ່ານພຣະໂຄດົມຈົ່ງຊົງຈື່ ຂ້າພຣະອົງວ່າ ເປັນອຸປາສົກຜູ້ຖືສະຣະນະ ນັບຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ເວວິດຊະສູດສູດທີ ໑໓ ຈົບ**

**ສົນຂັນທະສູດຈົບ**

## ລວມພຣະສູດທີ່ມີໃນວັກນີ້ຄື



**ສົນຂັນທະສູຕຈົບບໍລິບູນ**